# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໔໘

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑໖

## ອັງຄຸດຕະຣະນິກາຍ ທະສະກະນິບາດ



ສະບັບຄົ້ນຄ້ວວັດທາດຫຼວງເໜືອ
ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໔໕໕໕-໔໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໔ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ๗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ๗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໔ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

## ໓. ຕະຕິຍະປັນນາດ

# ພຣະໄຕຣປິດົກ

## ເຫຼັ້ມທີ ໘໔

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໑໖

## ອັງຄຸດຕະຣະນິກາຍ ທະສະກະນິບາດ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າພຣະອົງນັ້ນ**

# ໑. ປະຖົມປັນນາດ

## ໑. ອານິສັງສະວັກ

### ໝວດວ່າດ້ວຍອານິສົງ

## ໑. ກິມັດຖິຍະສູດ

### ວ່າດ້ວຍຄຳຖາມກ່ຽວກັບຜົນແຫ່ງສິນ

[໑] ຂ້າພະເຈົ້າ[໑]ໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ສິນທີ່ເປັນກຸສົນ[໒] ມີອັນໃດເປັນຜົນ ມີອັນໃດເປັນອານິສົງ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ສິນທີ່ເປັນກຸສົນ ມີອະວິບປະຕິສານ(ຄວາມບໍ່ຮ້ອນໃຈ) ເປັນຜົນ ມີອະວິບປະຕິສານເປັນອານິສົງ"

"ອະວິບປະຕິສານມີອັນໃດເປັນຜົນ ມີອັນໃດເປັນອານິສົງ ຂ້ານ້ອຍ"

"ອານົນ ອະວິບປະຕິສານມີປາໂມດ (ຄວາມບັນເທີງໃຈ) ເປັນຜົນ ມີປາໂມດເປັນອານິສົງ"

"ປາໂມດມີອັນໃດເປັນຜົນ ມີອັນໃດເປັນອານິສົງ ຂ້ານ້ອຍ"

"ອານົນ ປາໂມດມີປີຕິ(ຄວາມອີ່ມໃຈ)ເປັນຜົນ ມີປີຕິເປັນອານິສົງ"

"ປີຕິມີອັນໃດເປັນຜົນ ມີອັນໃດເປັນອານິສົງ ຂ້ານ້ອຍ"

"ອານົນ ປີຕິມີປັດສັດທິ (ຄວາມສະງົບກາຍສະງົບໃຈ) ເປັນຜົນ ມີປັດສັດທິເປັນອານິສົງ"

"ປັດສັດທິມີອັນໃດເປັນຜົນ ມີອັນໃດເປັນອານິສົງ ຂ້ານ້ອຍ"

"ອານົນ ປັດສັດທິມີສຸກເປັນຜົນ ມີສຸກເປັນອານິສົງ"

"ສຸກມີອັນໃດເປັນຜົນ ມີອັນໃດເປັນອານິສົງ ຂ້ານ້ອຍ"

"ອານົນ ສຸກມີສະມາທິເປັນຜົນ ມີສະມາທິເປັນອານິສົງ"

"ສະມາທິມີອັນໃດເປັນຜົນ ມີອັນໃດເປັນອານິສົງ ຂ້ານ້ອຍ"

"ອານົນ ສະມາທິມີຍະຖາພູຕະຍານທັດສະນະ[໗] (ຄວາມຮູ້ຄວາມເຫັນຕາມຄວາມເປັນຈິງ) ເປັນຜົນ ມີຍະຖາພູຕະຍານທັດສະນະເປັນອານິສົງ"

"ຍະຖາພູຕະຍານທັດສະນະມີອັນໃດເປັນຜົນ ມີອັນໃດເປັນອານິສົງ ຂ້ານ້ອຍ"

"ອານົນ ຍະຖາພູຕະຍານທັດສະນະມີນິບພິທາ[໘] (ຄວາມເບື່ອໜ່າຍ) ແລະວິຣາຄະ[໙] (ຄວາມຄາຍກຳໜັດ) ເປັນຜົນ ມີນິບພິທາແລະວິຣາຄະເປັນອານິສົງ"

"ນິບພິທາແລະວິຣາຄະມີອັນໃດເປັນຜົນ ມີອັນໃດເປັນອານິສົງ ຂ້ານ້ອຍ"

"ອານົນ ນິບພິທາແລະວິຣາຄະມີວິມຸດຕິຍານທັດສະນະ[໗] (ຄວາມຮູ້ຄວາມເຫັນໃນວິມຸດຕິ) ເປັນຜົນ ມີວິມຸດຕິຍານທັດສະນະເປັນອານິສົງ

ອານົນ ສິນທີ່ເປັນກຸສົນມີອະວິບປະຕິສານເປັນຜົນ ມີອະວິບປະຕິສານເປັນອານິສົງ ອະວິບປະຕິສານມີປາໂມດເປັນຜົນ ມີປາໂມດເປັນອານິສົງ ປາໂມດມີປີຕິເປັນຜົນ ມີປີຕິເປັນອານິສົງ ປີຕິມີປັດສັດທິເປັນຜົນ ມີປັດສັດທິເປັນອານິສົງ ປັດສັດທິມີສຸກເປັນຜົນ ມີສຸກເປັນອານິສົງ ສຸກມີສະມາທິເປັນຜົນ ມີສະມາທິເປັນອານິສົງ ສະມາທິມີຍະຖາພູຕະຍານທັດສະນະເປັນຜົນ ມີຍະຖາພູຕະຍານທັດສະນະເປັນອານິສົງ ຍະຖາພູຕະຍານທັດສະນະມີ ນິບພິທາແລະວິຣາຄະເປັນຜົນ ມີນິບພິທາແລະວິຣາຄະເປັນອານິສົງ ນິບພິທາແລະວິຣາຄະມີ ວິມຸດຕິຍານທັດສະນະເປັນຜົນ ມີວິມຸດຕິຍານທັດສະນະເປັນອານິສົງ ແນວນີ້ ອານົນ ສິນທີ່ເປັນກຸສົນ ຍ່ອມເຮັດອະຣະຫັດຕະຜົນໃຫ້ບໍລິບູນໂດຍລຳດັບ ແນວນີ້ແລ"

**ກິມັດຖິຍະສູດທີ ໑ ຈົບ**

# ໘. ເຈຕະນາກະຣະນີຍະສູດ

## ວ່າດ້ວຍກຳທີ່ບໍ່ຕ້ອງເຮັດດ້ວຍຄວາມຕັ້ງໃຈ

[໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ມີສີນ ສົມບູນດ້ວຍສີນ ບໍ່ຕ້ອງຕັ້ງໃຈວ່າ "ຂໍອະວິບປະຕິສານຈົ່ງເກີດຂຶ້ນແກ່ເຮົາ" ການທີ່ອະວິບປະຕິສານເກີດຂຶ້ນແກ່ບຸກຄົນ ຜູ້ມີສີນ ສົມບູນດ້ວຍສີນນີ້ ເປັນທຳມະດາ[໘]

ບຸກຄົນຜູ້ມີອະວິບປະຕິສານບໍ່ຕ້ອງຕັ້ງໃຈວ່າ "ຂໍປາໂມດຈົ່ງເກີດຂຶ້ນແກ່ເຮົາ" ການທີ່ປາໂມດເກີດຂຶ້ນແກ່ບຸກຄົນຜູ້ມີອະວິບປະຕິສານນີ້ ເປັນທຳມະດາ

ບຸກຄົນຜູ້ມີປາໂມດບໍ່ຕ້ອງຕັ້ງໃຈວ່າ "ຂໍປີຕິຈົ່ງເກີດຂຶ້ນແກ່ເຮົາ" ການທີ່ປີຕິເກີດຂຶ້ນແກ່ບຸກຄົນຜູ້ມີປາໂມດນີ້ ເປັນທຳມະດາ

ບຸກຄົນຜູ້ມີໃຈປະກອບດ້ວຍປີຕິບໍ່ຕ້ອງຕັ້ງໃຈວ່າ "ຂໍກາຍຂອງເຮົາຈົ່ງສະງົບ" ການທີ່ບຸກຄົນຜູ້ມີໃຈປະກອບດ້ວຍປີຕິມີກາຍສະງົບນີ້ ເປັນທຳມະດາ

ບຸກຄົນຜູ້ມີກາຍສະງົບບໍ່ຕ້ອງຕັ້ງໃຈວ່າ "ຂໍເຮົາຈົ່ງສະເຫວີຍສຸກ" ການທີ່ບຸກຄົນຜູ້ມີກາຍສະງົບສະເຫວີຍສຸກນີ້ ເປັນທຳມະດາ

ບຸກຄົນຜູ້ມີສຸກບໍ່ຕ້ອງຕັ້ງໃຈວ່າ "ຂໍຈິດຂອງເຮົາຈົ່ງເປັນສະມາທິ" ການທີ່ບຸກຄົນຜູ້ມີສຸກມີຈິດເປັນສະມາທິນີ້ ເປັນທຳມະດາ

ບຸກຄົນຜູ້ມີຈິດເປັນສະມາທິບໍ່ຕ້ອງຕັ້ງໃຈວ່າ "ຂໍເຮົາຈົ່ງຮູ້ເຫັນຕາມຄວາມເປັນຈິງ" ການທີ່ບຸກຄົນຜູ້ມີຈິດເປັນສະມາທິຮູ້ເຫັນຕາມຄວາມເປັນຈິງນີ້ ເປັນທຳມະດາ

ບຸກຄົນຜູ້ຮູ້ເຫັນຕາມຄວາມເປັນຈິງບໍ່ຕ້ອງຕັ້ງໃຈວ່າ "ຂໍເຮົາຈົ່ງເບື່ອໜ່າຍຄາຍກຳໜັດ" ການທີ່ບຸກຄົນຜູ້ຮູ້ເຫັນຕາມຄວາມເປັນຈິງເບື່ອໜ່າຍຄາຍກຳໜັດນີ້ ເປັນທຳມະດາ

ບຸກຄົນຜູ້ເບື່ອໜ່າຍຄາຍກຳໜັດບໍ່ຕ້ອງຕັ້ງໃຈວ່າ "ຂໍເຮົາຈົ່ງເຮັດໃຫ້ແຈ້ງວິມຸດຕິຍານທັດສະນະ" ການທີ່ບຸກຄົນຜູ້ເບື່ອໜ່າຍຄາຍກຳໜັດເຮັດໃຫ້ແຈ້ງວິມຸດຕິຍານທັດສະນະນີ້ ເປັນທຳມະດາ

ນິບພິທາແລະວິຣາຄະມີວິມຸດຕິຍານທັດສະນະເປັນຜົນ ມີວິມຸດຕິຍານທັດສະນະເປັນອານິສົງ ຍະຖາພູຕະຍານທັດສະນະມີນິບພິທາແລະວິຣາຄະເປັນຜົນ ມີນິບພິທາແລະວິຣາຄະເປັນອານິສົງ ສະມາທິມີຍະຖາພູຕະຍານທັດສະນະເປັນຜົນ ມີຍະຖາພູຕະຍານທັດສະນະເປັນອານິສົງ ສຸກມີສະມາທິເປັນຜົນ ມີສະມາທິເປັນອານິສົງ ປັດສັດທິມີສຸກເປັນຜົນ ມີສຸກເປັນອານິສົງ ປີຕິມີປັດສັດທິເປັນຜົນ ມີປັດສັດທິເປັນອານິສົງ ປາໂມດມີປີຕິເປັນຜົນ ມີປີຕິເປັນອານິສົງ ອະວິບປະຕິສານມີປາໂມດເປັນຜົນ ມີປາໂມດເປັນອານິສົງ ສີນທີ່ເປັນກຸສົນມີອະວິບປະຕິສານເປັນຜົນ ມີອະວິບປະຕິສານເປັນອານິສົງ

ພິກຂຸທັງຫຼາຍ ທຳທັງຫຼາຍຍ່ອມຫລັ່ງໄຫຼໄປສູ່ທຳທັງຫຼາຍ ທຳທັງຫຼາຍຍ່ອມໃຫ້ທຳທັງຫຼາຍບໍລິບູນ ເພື່ອອອກຈາກຝັ່ງນີ້ສູ່ຝັ່ງນັ້ນ[໑] ແນວນີ້ແລ

**ເຈຕະນາກະຣະນີຍະສູດທີ ໘ ຈົບ**

## ໙. ປະຖົມອຸປະນິສະສູດ

### ວ່າດ້ວຍທຳມີເຫດໃຫ້ຖືກກຳຈັດ ສູດທີ ໑

[໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອະວິບປະຕິສານຂອງບຸກຄົນຜູ້ທຸສີນມີສີນວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອອະວິບປະຕິສານບໍ່ມີ ປາໂມດຂອງບຸກຄົນຜູ້ມີ ອະວິບປະຕິສານວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອປາໂມດບໍ່ມີ ປີຕິຂອງບຸກຄົນຜູ້ມີປາໂມດວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອປີຕິບໍ່ມີ ປັດສັດທິຂອງບຸກຄົນຜູ້ມີປີຕິວິບັດ ຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອປັດສັດທິບໍ່ມີ ສຸກຂອງບຸກຄົນຜູ້ມີປັດສັດທິວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອສຸກບໍ່ມີ ສຳມາສະມາທິຂອງບຸກຄົນຜູ້ມີສຸກວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອສຳມາສະມາທິບໍ່ມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ມີສຳມາສະມາທິວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອຍະຖາພູຕະຍານທັດສະນະບໍ່ມີ ນິບພິທາແລະວິຣາຄະຂອງບຸກຄົນຜູ້ມີຍະຖາພູຕະຍານທັດສະນະວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອນິບພິທາແລະວິຣາຄະບໍ່ມີວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີນິບພິທາແລະວິຣາຄະວິບັດຊື່ວ່າມີເຫດຖືກກຳຈັດແລ້ວ

ອະວິບປະຕິສານຂອງບຸກຄົນຜູ້ທຸສີນ ມີສີນວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອອະວິບປະຕິສານບໍ່ມີ ປາໂມດຂອງບຸກຄົນຜູ້ມີອະວິບປະຕິສານວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ຯລຯ ເມື່ອນິບພິທາແລະວິຣາຄະບໍ່ມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີນິບພິທາແລະວິຣາຄະວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ປຽບຄືຕົ້ນໄມ້ທີ່ມີງ່າແລະໃບວິບັດແລ້ວ ເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນ ຍ່ອມບໍ່ເຖິງຄວາມບໍລິບູນ ສັນນັ້ນ

ອະວິບປະຕິສານຂອງບຸກຄົນຜູ້ມີສີນ ສົມບູນດ້ວຍສີນຊື່ວ່າມີເຫດສົມບູນ ເມື່ອອະວິບປະຕິສານມີ ປາໂມດຂອງບຸກຄົນຜູ້ສົມບູນດ້ວຍອະວິບປະຕິສານຊື່ວ່າມີເຫດສົມບູນ ເມື່ອປາໂມດມີ ປີຕິຂອງບຸກຄົນຜູ້ສົມບູນດ້ວຍປາໂມດຊື່ວ່າມີເຫດສົມບູນ ເມື່ອປີຕິມີ ປັດສັດທິຂອງບຸກຄົນຜູ້ສົມບູນດ້ວຍປີຕິຊື່ວ່າມີເຫດສົມບູນ ເມື່ອປັດສັດທິມີ ສຸກຂອງບຸກຄົນຜູ້ສົມບູນດ້ວຍປັດສັດທິຊື່ວ່າມີເຫດສົມບູນ ເມື່ອສຸກມີ ສຳມາສະມາທິຂອງບຸກຄົນຜູ້ສົມບູນດ້ວຍສຸກຊື່ວ່າມີເຫດສົມບູນ ເມື່ອສຳມາສະມາທິມີຍະຖາພູຕະຍານທັດ ສະນະຂອງບຸກຄົນຜູ້ສົມບູນດ້ວຍສຳມາສະມາທິຊື່ວ່າມີເຫດສົມບູນ ເມື່ອຍະຖາພູຕະຍານທັດສະນະມີ ນິບພິທາແລະວິຣາຄະຂອງບຸກຄົນຜູ້ສົມບູນດ້ວຍຍະຖາພູຕະ

ຍານທັດສະນະຊື່ວ່າມີເຫດສົມບູນ ເມື່ອນິບພິທາແລະວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍນິບພິທາແລະ ວິຣາຄະຊື່ວ່າມີເຫດສົມບູນ

ພິກຂຸທັງຫຼາຍ ອະວິບປະຕິສານຂອງບຸກຄົນຜູ້ມີສິນ ສົມບູນດ້ວຍສິນ ຊື່ວ່າມີເຫດສົມບູນ ເມື່ອອະວິບປະຕິສານມີ ປາໂມດຂອງບຸກຄົນຜູ້ສົມບູນດ້ວຍອະວິບປະຕິສານຊື່ວ່າມີເຫດສົມບູນ ຯລຯ ເມື່ອນິບພິທາແລະວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍນິບພິທາແລະວິຣາຄະ ຊື່ວ່າມີເຫດສົມບູນ ປຽບຄືຕົ້ນໄມ້ທີ່ມີງ່າແລະໃບສົມບູນ ເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນ ຍ່ອມເຖິງຄວາມບໍລິບູນ ສັນນັ້ນ

**ປະຖົມອຸປະນິດສູດທີ ໓ ຈົບ**

## ໔. ທຸຕິຍະອຸປະນິສະສູດ

## ວ່າດ້ວຍທຳມີເຫດໃຫ້ຖືກກຳຈັດ ສູດທີ ໔

[໔] ໃນບ່ອນນັ້ນແລ ທ່ານພຣະສາຣີບຸດໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ອະວິບປະຕິສານຂອງບຸກຄົນຜູ້ທຸສິນ ມີສິນວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອອະວິບປະຕິສານບໍ່ມີ ປາໂມດຂອງບຸກຄົນຜູ້ມີອະວິບປະຕິສານວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອປາໂມດບໍ່ມີ ປີຕິຂອງບຸກຄົນຜູ້ມີປາໂມດວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອປີຕິບໍ່ມີ ປັດສັດທິຂອງບຸກຄົນຜູ້ມີປີຕິວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອປັດສັດທິບໍ່ມີ ສຸກຂອງບຸກຄົນຜູ້ມີປັດສັດທິວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອສຸກບໍ່ມີ ສຳມາສະມາທິຂອງບຸກຄົນຜູ້ມີສຸກວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອສຳມາສະມາທິບໍ່ມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ມີສຳມາສະມາທິວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອຍະຖາພູຕະຍານທັດສະນະບໍ່ມີ ນິບພິທາແລະວິຣາຄະຂອງບຸກຄົນຜູ້ມີຍະຖາພູຕະຍານທັດສະນະວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອນິບພິທາແລະວິຣາຄະບໍ່ມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີນິບພິທາແລະວິຣາຄະວິບັດຊື່ວ່າມີເຫດຖືກກຳຈັດແລ້ວ

ອະວິບປະຕິສານຂອງບຸກຄົນຜູ້ທຸສິນ ມີສິນວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອອະວິບປະຕິສານບໍ່ມີ ປາໂມດຂອງບຸກຄົນຜູ້ມີອະວິບປະຕິສານວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ຯລຯ ເມື່ອນິບພິທາແລະວິຣາຄະບໍ່ມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີນິບພິທາແລະວິຣາຄະວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ປຽບຄືຕົ້ນໄມ້ທີ່ມີງ່າແລະໃບວິບັດແລ້ວ ເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນ ຍ່ອມບໍ່ເຖິງຄວາມບໍລິບູນ ສັນນັ້ນ

ອະວິບປະຕິສານຂອງບຸກຄົນຜູ້ມີສິນ ສົມບູນດ້ວຍສິນຊື່ວ່າມີເຫດສົມບູນ ເມື່ອອະວິບປະຕິ

ສານມີ ປາໂມດຂອງບຸກຄົນຜູ້ສົມບູນດ້ວຍອະວິບປະຕິສານຊື່ວ່າມີເຫດສົມບູນ ເມື່ອປາໂມດມີ ປີຕິຂອງບຸກຄົນຜູ້ສົມບູນດ້ວຍປາໂມດຊື່ວ່າມີເຫດສົມບູນ ເມື່ອປີຕິມີ ປັດສັດທິຂອງບຸກຄົນຜູ້ສົມບູນດ້ວຍປີຕິຊື່ວ່າມີເຫດສົມບູນ ເມື່ອປັດສັດທິມີ ສຸກຂອງບຸກຄົນຜູ້ສົມບູນດ້ວຍປັດສັດທິຊື່ວ່າມີເຫດສົມບູນ ເມື່ອສຸກມີ ສຳມາສະມາທິຂອງບຸກຄົນ ຜູ້ສົມບູນດ້ວຍສຸກຊື່ວ່າມີເຫດສົມບູນ ເມື່ອສຳມາສະມາທິມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍສຳມາສະມາທິຊື່ວ່າມີເຫດສົມບູນ ເມື່ອຍະຖາພູຕະຍານທັດສະນະມີ ນິບພິທາແລະວິຣາຄະຂອງບຸກຄົນຜູ້ສົມບູນດ້ວຍຍະຖາພູຕະຍານທັດສະນະຊື່ວ່າມີເຫດສົມບູນ ເມື່ອນິບພິທາແລະວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍນິບພິທາແລະ ວິຣາຄະຊື່ວ່າມີເຫດສົມບູນ

ຜູ້ມີອາຍຸທັງຫຼາຍ ອະວິບປະຕິສານຂອງບຸກຄົນຜູ້ມີສິນ ສົມບູນດ້ວຍສິນຊື່ວ່າມີເຫດສົມບູນ ເມື່ອອະວິບປະຕິສານມີ ປາໂມດຂອງບຸກຄົນຜູ້ສົມບູນດ້ວຍອະວິບປະຕິສານຊື່ວ່າມີເຫດສົມບູນ ຯລຯ ເມື່ອນິບພິທາແລະວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍນິບພິທາແລະວິຣາຄະ ຊື່ວ່າມີເຫດສົມບູນ ປຽບຄືຕົ້ນໄມ້ທີ່ມີງ່າແລະໃບສົມບູນ ເກັດ ເປືອກນອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນ ຍ່ອມເຖິງຄວາມບໍລິບູນ ສັນນັ້ນ

**ທຸຕິຍະອຸປະນິດສູດທີ ໔ ຈົບ**

## ໕. ຕະຕິຍະອຸປະນິສະສູດ

## ວ່າດ້ວຍທຳມີເຫດໃຫ້ຖືກກຳຈັດ ສູດທີ ໕

[໕] ໃນບ່ອນນັ້ນແລ ທ່ານພຣະອານົນໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ອະວິບປະຕິສານຂອງບຸກຄົນຜູ້ທຸສິນ ມີສິນວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອອະວິບປະຕິສານບໍ່ມີ ປາໂມດຂອງບຸກຄົນຜູ້ມີອະວິບປະຕິສານວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອປາໂມດບໍ່ມີ ປີຕິຂອງບຸກຄົນຜູ້ມີປາໂມດວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອປີຕິບໍ່ມີ ປັດສັດທິຂອງບຸກຄົນຜູ້ມີປີຕິວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອປັດສັດທິບໍ່ມີ ສຸກຂອງບຸກຄົນຜູ້ມີປັດສັດທິວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອສຸກບໍ່ມີ ສຳມາສະມາທິຂອງບຸກຄົນຜູ້ມີສຸກວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອສຳມາສະມາທິບໍ່ມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ມີສຳມາສະມາທິວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອຍະຖາພູຕະຍານທັດສະນະບໍ່ມີ ນິບພິທາແລະ ວິຣາຄະຂອງບຸກຄົນຜູ້ມີຍະຖາພູຕະຍານທັດສະນະວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອນິບພິທາແລະວິຣາຄະບໍ່ມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີນິບພິທາແລະວິຣາຄະວິບັດຊື່ວ່າມີເຫດຖືກກຳຈັດແລ້ວ

ອະວິບປະຕິສານຂອງບຸກຄົນຜູ້ທຸສີນ ມີສີນວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອອະວິບປະຕິສານ ບໍ່ມີ ປາໂມດຂອງບຸກຄົນຜູ້ມີອະວິບປະຕິສານວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ຯລຯ ເມື່ອນິບພິທາແລະວິຣາຄະບໍ່ມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີນິບພິທາແລະວິຣາຄະວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ປຽບຄືຕົ້ນໄມ້ທີ່ມີງ່າແລະໃບວິບັດແລ້ວ ເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນ ຍ່ອມບໍ່ເຖິງຄວາມບໍລິບູນ ສັນນັ້ນ

ອະວິບປະຕິສານຂອງບຸກຄົນຜູ້ມີສີນ ສົມບູນດ້ວຍສີນຊື່ວ່າມີເຫດສົມບູນ ເມື່ອອະວິບປະຕິສານມີ ປາໂມດຂອງບຸກຄົນຜູ້ສົມບູນດ້ວຍອະວິບປະຕິສານຊື່ວ່າມີເຫດສົມບູນ ເມື່ອປາໂມດມີ ປີຕິຂອງບຸກຄົນຜູ້ສົມບູນດ້ວຍປາໂມດຊື່ວ່າມີເຫດສົມບູນ ເມື່ອປີຕິມີ ປັດສັດທິຂອງບຸກຄົນຜູ້ສົມບູນດ້ວຍປີຕິຊື່ວ່າມີເຫດສົມບູນ ເມື່ອປັດສັດທິມີ ສຸກຂອງ ບຸກຄົນຜູ້ສົມບູນດ້ວຍປັດສັດທິຊື່ວ່າມີເຫດສົມບູນ ເມື່ອສຸກມີ ສຳມາສະມາທິຂອງບຸກຄົນຜູ້ສົມບູນດ້ວຍສຸກຊື່ວ່າມີເຫດສົມບູນ ເມື່ອສຳມາສະມາທິມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍສຳມາສະມາທິຊື່ວ່າມີເຫດສົມບູນ ເມື່ອຍະຖາພູຕະຍານທັດສະນະມີ ນິບພິທາແລະວິຣາຄະຂອງບຸກຄົນຜູ້ສົມບູນດ້ວຍຍະຖາພູຕະຍານທັດສະນະຊື່ວ່າມີເຫດສົມບູນ ເມື່ອນິບພິທາແລະວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍນິບພິທາແລະ ວິຣາຄະຊື່ວ່າມີເຫດສົມບູນ

ຜູ້ມີອາຍຸທັງຫຼາຍ ອະວິບປະຕິສານຂອງບຸກຄົນຜູ້ມີສີນ ສົມບູນດ້ວຍສີນຊື່ວ່າມີເຫດສົມບູນ ເມື່ອອະວິບປະຕິສານມີ ປາໂມດຂອງບຸກຄົນຜູ້ສົມບູນດ້ວຍອະວິບປະຕິສານຊື່ວ່າ ມີເຫດສົມບູນ ຯລຯ ເມື່ອນິບພິທາແລະວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ ສົມບູນດ້ວຍນິບພິທາແລະວິຣາຄະຊື່ວ່າມີເຫດສົມບູນ ປຽບຄືຕົ້ນໄມ້ທີ່ມີງ່າ ແລະໃບສົມບູນ ເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນ ຍ່ອມເຖິງຄວາມບໍລິບູນ ສັນນັ້ນ

**ຕະຕິຍະອຸປະນິດສູດທີ ໕ ຈົບ**

## ໖. ສະມາທິສູດ

## ວ່າດ້ວຍການໄດ້ສະມາທິຂອງພິກຂຸ

[໖] ຄັ້ງນັ້ນແລ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ມີໄດ້ບໍນໍ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາ (ຄວາມຈື່ໄດ້ໝາຍຮູ້) ໃນທາດດິນວ່າເປັນທາດດິນ[១] ໃນທາດນ້ຳວ່າເປັນທາດນ້ຳ ໃນທາດໄຟວ່າເປັນທາດໄຟ ໃນທາດລົມວ່າເປັນທາດລົມ ໃນອາກາສານັນຈາຍະຕະນະຊານ[໒]ວ່າ ເປັນອາກາສາ

ນັນຈາຍະຕະນະຊານ ໃນວິນຍານັນຈາຍະຕະນະຊານ[໕]ວ່າເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍະຕະນະຊານ[໖]ວ່າເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າເປັນໂລກນີ້ ໃນໂລກໜ້າວ່າເປັນໂລກໜ້າ ແຕ່ຕ້ອງມີສັນຍາ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ມີໄດ້ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ໃນທາດນໍ້າວ່າເປັນທາດນໍ້າ ໃນທາດໄຟວ່າເປັນທາດໄຟ ໃນທາດລົມວ່າເປັນທາດລົມ ໃນອາກາສານັນຈາຍະຕະນະຊານວ່າເປັນອາກາສານັນຈາຍະຕະນະຊານ ໃນວິນຍານັນຈາຍະຕະນະຊານວ່າເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍະຕະນະຊານວ່າເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າເປັນໂລກນີ້ ໃນໂລກໜ້າວ່າເປັນໂລກໜ້າ ແຕ່ຕ້ອງມີສັນຍາ"

ທ່ານພຣະອານົນທູນຖາມວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ມີໄດ້ແນວໃດ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ໃນທາດນໍ້າວ່າເປັນທາດນໍ້າ ໃນທາດໄຟວ່າເປັນທາດໄຟ ໃນທາດລົມວ່າເປັນທາດລົມ ໃນອາກາສານັນຈາຍະຕະນະຊານວ່າເປັນ ອາກາສານັນຈາຍະຕະນະຊານ ໃນວິນຍານັນຈາຍະຕະນະຊານວ່າເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍນົດຊານວ່າເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າເປັນໂລກນີ້ ໃນໂລກໜ້າວ່າເປັນໂລກໜ້າ ແຕ່ຕ້ອງມີສັນຍາ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ພິກຂຸໃນທຳວິໄນນີ້ ເປັນຜູ້ມີສັນຍາ ແນວນີ້ວ່າ ພາວະທີ່ສະງົບ ປະນີດ ຄື ຄວາມລະງັບສັງຂານທັງປວງ ຄວາມສະລະຄືນອຸປະທິກິເລດທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບ ນິບພານ[໑] ອານົນ ມີໄດ້ຢ່າງນີ້ແລ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ໃນທາດນໍ້າວ່າເປັນທາດນໍ້າ ໃນທາດໄຟວ່າເປັນທາດໄຟ ໃນທາດລົມວ່າເປັນທາດລົມ ໃນອາກາສານັນຈາຍະຕະນະຊານວ່າເປັນອາກາສານັນຈາຍະຕະນະຊານ ໃນວິນຍານັນຈາຍະຕະນະຊານວ່າເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍະຕະນະຊານວ່າເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າເປັນໂລກນີ້ ໃນໂລກໜ້າວ່າເປັນໂລກໜ້າ ແຕ່ຕ້ອງມີສັນຍາ"

**ສະມາທິສູດທີ ໖ ຈົບ**

# ໗. ສາຣີປຸດຕະສູດ

## ວ່າດ້ວຍພຣະສາຣີບຸດຕອບບັນຫາພຣະອານົນ

[໗] ຄັ້ງນັ້ນແລ ທ່ານພຣະອານົນເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖີງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ວ່າ

"ທ່ານສາຣີບຸດ ມີໄດ້ບໍນໍ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ໃນທາດນ້ຳວ່າເປັນທາດນ້ຳ ໃນທາດໄຟວ່າເປັນທາດໄຟ ໃນທາດລົມ ວ່າເປັນທາດລົມ ໃນອາກາສານັນຈາຍະຕະນະຊານວ່າເປັນອາກາສານັນຈາຍະຕະນະຊານ ໃນວິນຍານັນຈາຍະຕະນະຊານວ່າເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍະຕະນະຊານ ວ່າເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າເປັນໂລກນີ້ ໃນໂລກໜ້າວ່າເປັນໂລກໜ້າ ແຕ່ຕ້ອງມີສັນຍາ"

ທ່ານພຣະສາຣີບຸດຕອບວ່າ "ທ່ານອານົນ ມີໄດ້ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ຯລຯ ໃນໂລກໜ້າວ່າເປັນໂລກໜ້າ ແຕ່ຕ້ອງມີສັນຍາ"

ທ່ານພຣະອານົນຖາມວ່າ "ທ່ານສາຣີບຸດ ມີໄດ້ແນວໃດ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ຯລຯ ໃນໂລກໜ້າວ່າເປັນໂລກໜ້າ ແຕ່ຕ້ອງມີສັນຍາ"

ທ່ານພຣະສາຣີບຸດຕອບວ່າ "ທ່ານອານົນ ສະໄໝໜຶ່ງ ຂ້ານ້ອຍຢູ່ທີ່ປ່າອັນທະວັນ ເຂດນະຄອນສາວັດຖີນີ້ແລ ໃນບ່ອນນັ້ນ ຂ້ານ້ອຍໄດ້ເຂົ້າສະມາທິໂດຍບໍ່ມີສັນຍາໃນທາດດິນວ່າເປັນທາດດິນ ໃນທາດນ້ຳວ່າເປັນທາດນ້ຳ ໃນທາດໄຟວ່າເປັນທາດໄຟ ໃນທາດລົມວ່າເປັນທາດລົມ ໃນ ອາກາສານັນຈາຍະຕະນະຊານວ່າເປັນອາກາສານັນຈາຍະຕະນະຊານ ໃນວິນຍານັນຈາຍະຕະນະຊານວ່າເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍະຕະນະຊານວ່າເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າເປັນໂລກນີ້ ໃນໂລກໜ້າວ່າເປັນໂລກໜ້າ ແຕ່ຂ້ານ້ອຍເປັນຜູ້ມີສັນຍາ"

ທ່ານພຣະອານົນຖາມວ່າ "ໃນສະໄໝນັ້ນ ທ່ານສາຣີບຸດເປັນຜູ້ມີສັນຍາແນວໃດ"

ທ່ານພຣະສາຣີບຸດຕອບວ່າ "ຜູ້ມີອາຍຸ ສັນຍາແນວໜຶ່ງເກີດຂຶ້ນແກ່ເຮົາວ່າ "ຄວາມດັບພົບເປັນນິບພານ ຄວາມດັບພົບເປັນນິບພານ" ສັນຍາແນວໜຶ່ງດັບໄປ ຜູ້ມີອາຍຸ ສັນຍາແນວໜຶ່ງເກີດຂຶ້ນແກ່ເຮົາວ່າ "ຄວາມດັບພົບເປັນນິບພານ ຄວາມດັບພົບເປັນ ນິບພານ" ສັນຍາແນວໜຶ່ງ

ດັບໄປ ປຽບຄືເມື່ອໄຟມີເຊື້ອກຳລັງໄໝ້ຢູ່ ນ້ຳໄຟແນວໜຶ່ງເກີດຂຶ້ນ ນ້ຳໄຟແນວໜຶ່ງດັບໄປສັນນັ້ນ ຜູ້ມີອາຍຸ ໃນສະໄໝນັ້ນ ຂ້ານ້ອຍໄດ້ມີສັນຍາ ວ່າ "ຄວາມດັບພົບເປັນນິບພານ"

**ສາຣີປຸດຕະສູດທີ ໗ ຈົບ**

## ໘. ຊານະສູດ

## ວ່າດ້ວຍພິກຂຸຜູ້ມີຊານ

[໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸເປັນຜູ້ມີສັດທາ ແຕ່ບໍ່ມີສີນ ແນວນີ້ ທ່ານຊື່ວ່າເປັນຜູ້ບໍ່ບໍລິບູນດ້ວຍອົງນັ້ນ ທ່ານເພິ່ງພ່ຳເພັງອົງນັ້ນໃຫ້ບໍລິບູນດ້ວຍຄິດວ່າ "ທາງທີ່ດີ ເຮົາຄວນເປັນຜູ້ມີສັດທາ ມີສີນ" ເມື່ອໃດ ພິກຂຸເປັນຜູ້ມີສັດທາ ມີສີນ ເມື່ອນັ້ນ ທ່ານຈຶ່ງຊື່ວ່າເປັນຜູ້ບໍລິບູນດ້ວຍອົງນັ້ນແນວນີ້

ພິກຂຸທັງຫຼາຍ ພິກຂຸເປັນຜູ້ມີສັດທາແລະມີສີນ ແຕ່ບໍ່ເປັນພະຫູສູດ ຯລຯ ເປັນພະຫູສູດແຕ່ບໍ່ເປັນທຳມະກະຖຶກ[໑] ເປັນທຳມະກະຖຶກແຕ່ບໍ່ເຂົ້າໄປສູ່ບໍລິສັດ ເຂົ້າໄປສູ່ບໍລິສັດແຕ່ບໍ່ແກ່ກ້າສະແດງທຳແກ່ບໍລິສັດ ແກ່ກ້າສະແດງທຳແກ່ບໍລິສັດແຕ່ບໍ່ຊົງວິໄນ ຊົງວິໄນແຕ່ບໍ່ຢູ່ປ່າເປັນຂໍ້ວັດປະຕິບັດ ແລະບໍ່ຢູ່ໃນເສນາສະນະອັນສະຫງັດ ຢູ່ປ່າເປັນຂໍ້ວັດປະຕິບັດ ແລະຢູ່ໃນເສນາສະນະອັນສະຫງັດແຕ່ບໍ່ໄດ້ຊານ ໔ ອັນມີໃນຈິດຍິ່ງ[໑] ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍຍາກ ໄດ້ໂດຍລຳບາກ ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ແຕ່ບໍ່ໄດ້ເຮັດໃຫ້ແຈ້ງເຈໂຕວິມຸດຕິ[໔] ປັນຍາວິມຸດຕິ[໓]ອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ແນວນີ້ ທ່ານຊື່ວ່າເປັນຜູ້ບໍ່ບໍລິບູນດ້ວຍອົງນັ້ນ ທ່ານເພິ່ງພ່ຳເພັງອົງນັ້ນໃຫ້ບໍລິບູນດ້ວຍຄິດວ່າ "ທາງທີ່ດີ ເຮົາຄວນເປັນຜູ້ມີສັດທາ ມີສີນ ເປັນພະຫູສູດ ເປັນທຳມະກະຖຶກ ເຂົ້າໄປສູ່ບໍລິສັດ ແກ່ກ້າສະແດງທຳແກ່ບໍລິສັດ ຊົງວິໄນ ຢູ່ປ່າເປັນຂໍ້ວັດປະຕິບັດ ແລະຢູ່ໃນເສນາສະນະອັນສະຫງັດ ໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ແລະເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ"

ເມື່ອໃດ ພິກຂຸເປັນຜູ້ມີສັດທາ ໑ ມີສີນ ໑ ເປັນພະຫູສູດ ໑ ເປັນທຳມະກະຖຶກ ໑ ເຂົ້າໄປສູ່ບໍລິສັດ ໑ ແກ່ກ້າສະແດງທຳແກ່ບໍລິສັດ ໑ ຊົງວິໄນ ໑ ຢູ່ປ່າເປັນຂໍ້ວັດປະຕິບັດ ແລະຢູ່ໃນເສນາສະນະອັນສະຫງັດ ໑ ໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ໑ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິ

ມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ໑ ເມື່ອນັ້ນ ທ່ານຈຶ່ງຊື່ວ່າເປັນຜູ້ບໍລິບູນດ້ວຍອົງນັ້ນ ແນວນີ້

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໑໐ ປະການນີ້ແລ ຈຶ່ງຊື່ວ່າເປັນຜູ້ກໍ່ໃຫ້ເກີດຄວາມເຫຼື້ອມໃສໄດ້ຮອບດ້ານ[໔] ແລະເປັນຜູ້ບໍລິບູນດ້ວຍອາການທັງປວງ

**ຊານສູດທີ ໗ ຈົບ**

# ໘. ສັນຕະວິໂມກຂະສູດ

## ວ່າດ້ວຍສັນຕະວິໂມກ[໑]

[໘] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸເປັນຜູ້ມີສັດທາແຕ່ບໍ່ມີສິນ ເປັນຜູ້ມີສິນແຕ່ບໍ່ເປັນພະຫູສູດ ເປັນພະຫູສູດແຕ່ບໍ່ເປັນທຳມະກະຖຶກ ເປັນທຳມະກະຖຶກແຕ່ບໍ່ເຂົ້າໄປສູ່ບໍລິສັດ ເຂົ້າໄປສູ່ບໍລິສັດແຕ່ບໍ່ເປັນຜູ້ແກ່ກ້າສະແດງທຳແກ່ບໍລິສັດ ແກ່ກ້າສະແດງທຳແກ່ບໍລິສັດແຕ່ບໍ່ຊົງວິໄນ ຊົງວິໄນແຕ່ບໍ່ຢູ່ປ່າເປັນຂໍ້ວັດປະຕິບັດ ແລະບໍ່ຢູ່ໃນເສນາສະນະ ອັນສະຫງັດ ຢູ່ປ່າເປັນຂໍ້ວັດປະຕິບັດ ແລະຢູ່ໃນເສນາສະນະອັນສະຫງັດ ແຕ່ບໍ່ໄດ້ສຳຜັດສັນຕະວິໂມກ ເຊິ່ງບໍ່ມີຮູບຍ້ອນລ່ວງຮູບຊານໄດ້ດ້ວຍກາຍ[໒]ຢູ່ ໄດ້ສຳຜັດສັນຕະວິໂມກເຊິ່ງບໍ່ມີຮູບຍ້ອນ ລ່ວງຮູບຊານໄດ້ດ້ວຍກາຍຢູ່ ແຕ່ບໍ່ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ແນວນີ້ ທ່ານຈຶ່ງຊື່ວ່າເປັນຜູ້ບໍ່ບໍລິບູນດ້ວຍອົງນັ້ນ ທ່ານເພິ່ງພ່ຳເພັງອົງນັ້ນໃຫ້ບໍລິບູນດ້ວຍຄິດວ່າ "ທາງທີ່ດີ ເຮົາຄວນເປັນຜູ້ມີສັດທາ ມີສິນເປັນພະຫູສູດ ເປັນທຳມະກະຖຶກ ເຂົ້າໄປສູ່ບໍລິສັດແກ່ກ້າສະແດງທຳແກ່ບໍລິສັດ ຊົງວິໄນ ຢູ່ປ່າເປັນຂໍ້ວັດປະຕິບັດ ແລະຢູ່ໃນເສນາສະນະອັນສະຫງັດ ໄດ້ສຳຜັດສັນຕະວິໂມກເຊິ່ງບໍ່ມີຮູບ ຍ້ອນລ່ວງຮູບຊານໄດ້ດ້ວຍກາຍຢູ່ ແລະເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາ ວິມຸດຕິອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນ ປັດຈຸບັນ"

ເມື່ອໃດ ພິກຂຸເປັນຜູ້ມີສັດທາ ໑ ມີສິນ ໑ ເປັນພະຫູສູດ ໑ ເປັນທຳມະກະຖຶກ ໑ ເຂົ້າໄປສູ່ ບໍລິສັດ ໑ ແກ່ກ້າສະແດງທຳແກ່ບໍລິສັດ ໑ ຊົງວິໄນ ໑ ຢູ່ປ່າເປັນຂໍ້ວັດປະຕິບັດ ແລະຢູ່ໃນເສນາສະນະອັນສະຫງັດ ໑ ໄດ້ສຳຜັດສັນຕະວິໂມກເຊິ່ງບໍ່ມີຮູບຍ້ອນລ່ວງຮູບຊານໄດ້ດ້ວຍກາຍຢູ່ ໑ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ໑ ເມື່ອນັ້ນ ທ່ານຈຶ່ງຊື່ວ່າເປັນຜູ້ບໍລິບູນດ້ວຍ ອົງນັ້ນ ແນວນີ້

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໑໐ ປະການນີ້ແລ ຈຶ່ງຊື່ວ່າເປັນຜູ້ກໍ່ໃຫ້ເກີດ ຄວາມເຫຼື້ອມໃສໄດ້ຮອບດ້ານ ແລະເປັນຜູ້ບໍລິບູນດ້ວຍອາການທັງປວງ

**ສັນຕະວິໂມກຂະສູດທີ ໙ ຈົບ**

## ໑໐. ວິດຊາສູດ

## ວ່າດ້ວຍວິດຊາ

[໑໐] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸເປັນຜູ້ມີສັດທາ ແຕ່ບໍ່ມີສີນ ແບບນີ້ ທ່ານຈຶ່ງຊື່ວ່າເປັນຜູ້ບໍ່ບໍລິບູນດ້ວຍອົງນັ້ນ ທ່ານເພິ່ງພ່ຳເພັງອົງນັ້ນໃຫ້ບໍລິບູນດ້ວຍຄິດວ່າ "ທາງທີ່ດີ ເຮົາຄວນເປັນຜູ້ມີສັດທາ ມີສີນ" ເມື່ອໃດ ພິກຂຸເປັນຜູ້ມີສັດທາ ມີສີນ ເມື່ອນັ້ນ ທ່ານ ຈຶ່ງຊື່ວ່າເປັນຜູ້ບໍລິບູນດ້ວຍອົງນັ້ນແບບນີ້

ພິກຂຸທັງຫຼາຍ ພິກຂຸເປັນຜູ້ມີສັດທາ ມີສີນ ແຕ່ບໍ່ເປັນພະຫູສູດ ເປັນພະຫູສູດ ແຕ່ບໍ່ເປັນ ທຳມະກະຖຶກ ເປັນທຳມະກະຖຶກ ແຕ່ບໍ່ເຂົ້າໄປສູ່ບໍລິສັດ ເຂົ້າໄປສູ່ບໍລິສັດ ແຕ່ບໍ່ແກ່ກ້າສະແດງ ທຳແກ່ບໍລິສັດ ແກ່ກ້າສະແດງທຳແກ່ບໍລິສັດ ແຕ່ບໍ່ຊົງວິໄນ ຊົງວິໄນ ແຕ່ຣະນຶກຊາດກ່ອນບໍ່ໄດ້ ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໆລໆ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໆລໆ ຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແບບ ນີ້ ແຕ່ບໍ່ເຫັນໝູ່ສັດ ໆລໆ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ບໍ່ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມ ກຳ ເຫັນໝູ່ສັດດ້ວຍຕາທິບອັນບໍລິສຸດເໜືອມະນຸດ ໆລໆ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳ ແຕ່ ບໍ່ເຮັດໃຫ້ແຈ້ງ ໆລໆ ຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນແບບ ນີ້ ທ່ານຈຶ່ງຊື່ວ່າ ບໍ່ເປັນຜູ້ບໍລິສຸດດ້ວຍອົງນັ້ນ ທ່ານເພິ່ງພ່ຳເພັງອົງນັ້ນໃຫ້ບໍລິບູນ ດ້ວຍຄິດວ່າ "ທາງທີ່ດີ ເຮົາຄວນເປັນຜູ້ມີສັດທາ ມີສີນ ເປັນພະຫູສູດ ເປັນທຳມະກະຖຶກ ເຂົ້າໄປສູ່ບໍລິສັດ ແກ່ກ້າສະແດງທຳແກ່ບໍລິສັດ ຊົງວິໄນ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດ ແດ່ ໆລໆ ຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແບບນີ້ ເຫັນໝູ່ສັດ ໆລໆ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳ ເຮັດ ໃຫ້ແຈ້ງ ໆລໆ ຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງ ເຂົ້າເຖິງຢູ່ໃນປັດຈຸບັນ

ເມື່ອໃດ ພິກຂຸເປັນຜູ້ມີສັດທາ ໑ ມີສີນ ໑ ເປັນພະຫູສູດ ໑ ເປັນທຳມະກະຖຶກ ໑ ເຂົ້າ ໄປສູ່ບໍລິສັດ ໑ ແກ່ກ້າສະແດງທຳແກ່ບໍລິສັດ ໑ ຊົງວິໄນ ໑ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໆລໆ ຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປແລະ ຊີວະປະຫວັດແບບນີ້ ໑ ເຫັນໝູ່ສັດ ໆລໆ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດ

ຜູ້ເປັນໄປຕາມກຳ ໑ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ອັນບໍ່ມີອາສະວະຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ໑ ເມື່ອນັ້ນ ພິກຂຸຈຶ່ງຊື່ວ່າເປັນຜູ້ບໍລິບູນດ້ວຍອົງນັ້ນ ແນວນີ້

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໑໐ ປະການນີ້ແລ ຈຶ່ງຊື່ວ່າເປັນຜູ້ ກໍ່ໃຫ້ເກີດຄວາມເຫຼື້ອມໃສໄດ້ຮອບດ້ານ ແລະເປັນຜູ້ບໍລິບູນດ້ວຍອາການທັງປວງ

**ວິດຊາສູດທີ ໑໐ ຈົບ**

**ອານິສັງສະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ກິມັດຖິຍະສູດ
໒. ເຈຕະນາກະຣະນີຍະສູດ
໓. ປະຖົມອຸປະນິສະສູດ
໔. ທຸຕິຍະອຸປະນິສະສູດ
໕. ຕະຕິຍະອຸປະນິສະສູດ
໖. ສະມາທິສູດ
໗. ສາຣີປຸດຕະສູດ
໘. ຊານະສູດ
໙. ສັນຕະວິໂມກຂະສູດ
໑໐. ວິດຊາສູດ

# ໔. ນາຖະກະຣະນະວັກ

##ໝວດວ່າດ້ວຍນາຖະກະຣະນະທຳ[1]

## ໑. ເສນາສະນະສູດ

### ວ່າດ້ວຍອົງປະກອບຂອງເສນາສະນະ

[໑໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ອາໄສໃຊ້ສອຍເສນາສະນະອັນປະກອບດ້ວຍອົງ ໕ ບໍ່ດົນປານໃດກໍຈະເຮັດໃຫ້ແຈ້ງເຈໂຕວິມຸດຕິປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ພິກຂຸຜູ້ປະກອບດ້ວຍອົງ ໕ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສັດທາ ເຊື່ອພຣະປັນຍາຕັດສະຣູ້ຂອງພຣະຕະຖາຄົດເຈົ້າວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ[໒] ເປັນພຣະຜູ້ມີພຣະພາກເຈົ້າ[໓]"

໒. ເປັນຜູ້ມີອາພາດໜ້ອຍ ມີພະຍາດເບົາບາງ ປະກອບດ້ວຍໄຟທາດສຳລັບຍ່ອຍອາຫານ ສະໝ່ຳສະເໝີ ບໍ່ເຢັນໂພດ ບໍ່ຮ້ອນໂພດ ເປັນປານກາງ ຄວນແກ່ການພ່ຳເພັງພຽນ

໓. ເປັນຜູ້ບໍ່ໂອ້ອວດ ບໍ່ມີມານຍາ ເຮັດຕົນໃຫ້ເປີດເຜີຍຕາມຄວາມເປັນຈິງໃນສາດສະດາຫຼືໃນເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍ

໔. ເປັນຜູ້ຜາຣົບຄວາມພຽນ[໑] ເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ[໒] ມີຄວາມບາກບັ່ນໝັ້ນຄົງ ບໍ່ຖືເບົາໃນກຸສົນທຳ ທັງຫຼາຍຢູ່

໕. ເປັນຜູ້ມີປັນຍາ ຄືປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ

ພິກຂຸຜູ້ປະກອບດ້ວຍອົງ ໕ ເປັນແນວນີ້ແລ
ເສນາສະນະປະກອບດ້ວຍອົງ ໕ ເປັນແນວໃດ?
ຄື ເສນາສະນະໃນທຳວິໄນນີ້

໑. ຢູ່ບໍ່ໄກເກີນໄປ ບໍ່ໃກ້ເກີນໄປ[๓] ມີທາງໄປມາສະດວກ ກາງເວັນບໍ່ສາລະວົນ ກາງຄືນມີສຽງໜ້ອຍ ບໍ່ອຶກກະທຶກ ມີເຮືອດ ຍຸງ ລົມ ແດດ ແລະສັດເລືອຄານກະທົບໜ້ອຍ

໒. ເມື່ອພິກຂຸຢູ່ໃນເສນາສະນະນັ້ນ ມີຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານທີ່ເກີດຂຶ້ນໂດຍບໍ່ຝືດເຄືອງເລີຍ

໓. ພິກຂຸຜູ້ເຖຣະທັງຫຼາຍ ເປັນພະຫູສູດ ຮຽນຈົບຄຳພີ[๔] ຊົງທຳ ຊົງວິໄນ ຊົງມາຕິກາຢູ່ໃນເສນາສະນະນັ້ນ

໔. ພິກຂຸນັ້ນເຂົ້າໄປຫາພິກຂຸຜູ້ເຖຣະເຫຼົ່ານັ້ນ ໃນເວລາທີ່ສົມຄວນແລ້ວ ຈຶ່ງສອບຖາມ ໄຕ່ຖາມວ່າ "ພຸດທະພົດນີ້ເປັນແນວໃດ? ເນື້ອຄວາມແຫ່ງພຸດທະພົດນີ້ເປັນ ແນວໃດ"

໕. ພິກຂຸຜູ້ເຖຣະເຫຼົ່ານັ້ນ ຍ່ອມເປີດເຜີຍຂໍ້ທີ່ຍັງບໍ່ເປີດເຜີຍ ເຮັດຂໍ້ທີ່ເຂົ້າໃຈຍາກໃຫ້ເຂົ້າໃຈງ່າຍ ແລະບັນເທົາຄວາມສົງໄສໃນທຳທີ່ໜ້າສົງໄສຫຼາຍແນວແກ່ພິກຂຸນັ້ນ

ເສນາສະນະປະກອບດ້ວຍອົງ ໕ ເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍອົງ ໕ ອາໄສໃຊ້ສອຍເສນາສະນະອັນປະກອບດ້ວຍອົງ ໕ ບໍ່ດົນປານໃດ ກໍຈະເຮັດໃຫ້ແຈ້ງ ໆລໆ ຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

**ເສນາສະນະສູດທີ ໑ ຈົບ**

## ໒. ປັນຈັງຄະສູດ
## ວ່າດ້ວຍອົງ ໕

[໑໒] ພິກຂຸທັງຫຼາຍ ພິກຂຸຜູ້ລະອົງ ໕ ປະກອບດ້ວຍອົງ ໕ ບັນດິດຮຽກວ່າ ຜູ້ປະກອບດ້ວຍຄຸນທັງມວນ ຜູ້ຢູ່ຈົບພົມມະຈັນ[๑] ເປັນອຸດົມບຸຣຸດໃນທຳວິໄນນີ້

ພິກຂຸຜູ້ລະອົງ ໕ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້

໑. ເປັນຜູ້ລະກາມສັນທະ (ຄວາມພໍໃຈໃນກາມ)
໒. ເປັນຜູ້ລະພະຍາບາດ (ຄວາມຄິດຮ້າຍ)
໓. ເປັນຜູ້ລະຖີນະມິດທະ (ຄວາມຫົດຫູ່ແລະງ່ວງເຫງົາ)
໔. ເປັນຜູ້ລະອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະຮ້ອນໃຈ)
໕. ເປັນຜູ້ລະວິຈິກິດສາ (ຄວາມລັງເລສົງໄສ)

ພິກຂຸເປັນຜູ້ລະອົງ ໕ ເປັນແນວນີ້ແລ
ພິກຂຸຜູ້ປະກອບດ້ວຍອົງ ໕ ເປັນແນວໃດ?
ຄື ພິກຂຸໃນທຳວິໄນນີ້

໑. ເປັນຜູ້ປະກອບດ້ວຍສີນຂັນ (ກອງສີນ) ທີ່ເປັນອະເສຂະ໑
໒. ເປັນຜູ້ປະກອບດ້ວຍສະມາທິຂັນ (ກອງສະມາທິ) ທີ່ເປັນອະເສຂະ
໓. ເປັນຜູ້ປະກອບດ້ວຍປັນຍາຂັນ (ກອງປັນຍາ) ທີ່ເປັນອະເສຂະ
໔. ເປັນຜູ້ປະກອບດ້ວຍວິມຸດຕິຂັນ (ກອງວິມຸດຕິ) ທີ່ເປັນອະເສຂະ
໕. ເປັນຜູ້ປະກອບດ້ວຍວິມຸດຕິຍານທັດສະນະຂັນ໒(ກອງວິມຸດຕິຍານທັດສະນະ) ທີ່ເປັນອະເສຂະ

ພິກຂຸຜູ້ປະກອບດ້ວຍອົງ ໕ ເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸຜູ້ລະອົງ ໕ ປະກອບດ້ວຍອົງ ໕ ບັນດິດຮຽກວ່າ ຜູ້ປະກອບດ້ວຍຄຸນທັງມວນ ຜູ້ຢູ່ຈົບພົມມະຈັນ ເປັນອຸດົມບຸຣຸດໃນທຳວິໄນນີ້

ກາມສັນທະ ພະຍາບາດ ຖີນະມິດທະ ອຸດທັດຈະກຸກກຸດຈະ
ແລະວິຈິກິດສາ ຍ່ອມບໍ່ມີແກ່ພິກຂຸໂດຍປະການທັງປວງ
ພິກຂຸຜູ້ເຊັ່ນນັ້ນ ສົມບູນດ້ວຍສີນຂັນທີ່ເປັນອະເສຂະ
ສະມາທິຂັນທີ່ເປັນອະເສຂະ ປັນຍາຂັນທີ່ເປັນອະເສຂະ
ວິມຸດຕິຂັນທີ່ເປັນອະເສຂະ
ແລະວິມຸດຕິຍານທັດສະນະຂັນທີ່ເປັນອະເສຂະ
ພິກຂຸນັ້ນແລ ຜູ້ລະອົງ ໕ ໄດ້ ສົມບູນດ້ວຍອົງ ໕
ພິກຂຸນັ້ນແລ ບັນດິດຮຽກວ່າ "ຜູ້ປະກອບດ້ວຍຄຸນທັງມວນ"
ໃນທຳວິໄນນີ້

**ປັນຈັງຄະສູດທີ ໒ ຈົບ**

## ໓. ສັງໂຍຊະນະສູດ
## ວ່າດ້ວຍສັງໂຍດ

[໑໓] ພິກຂຸທັງຫຼາຍ ສັງໂຍດ (ທຳທີ່ມັດສັດໄວ້ກັບທຸກ) ໑໐ ປະການນີ້

ສັງໂຍດ ໑໐ ປະການ ອັນໃດແດ່ ຄື

ໂອຣຳພາຄິຍະສັງໂຍດ (ສັງໂຍດເບື້ອງຕ່ຳ) ໕ ປະການ ອຸດທຳພາຄິຍະສັງໂຍດ (ສັງໂຍດເບື້ອງສູງ) ໕ ປະການ

ໂອຣຳພາຄິຍະສັງໂຍດ ໕ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ສັກກາຍະທິດຖິ | (ຄວາມເຫັນວ່າເປັນໂຕຂອງຕົນ) |
| ໒. ວິຈິກິດສາ | (ຄວາມລັງເລສົງໄສ) |
| ໓. ສີລັບພະຕະປະຣາມາດ | (ຄວາມຖືໝັ້ນສິນພິດ) |
| ໔. ກາມສັນທະ | (ຄວາມພໍໃຈໃນກາມ) |
| ໕. ພະຍາບາດ | (ຄວາມຄິດຮ້າຍ) |

ໂອຣຳພາຄິຍະສັງໂຍດ ໕ ປະການນີ້

ອຸດທຳພາຄິຍະສັງໂຍດ ໕ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ຣູບປະຣາຄະ | (ຄວາມຕິດໃຈໃນອາລົມແຫ່ງຣູບຊານ) |
| ໒. ອະຣູບປະຣາຄະ | (ຄວາມຕິດໃຈໃນອາລົມແຫ່ງອະຣູບປະຊານ) |
| ໓. ມານະ | (ຄວາມຖືໂຕ) |
| ໔. ອຸດທັດຈະ | (ຄວາມຟຸ້ງຊ່ານ) |
| ໕. ອະວິດຊາ | (ຄວາມບໍ່ຮູ້ແຈ້ງ) |

ອຸດທຳພາຄິຍະສັງໂຍດ ໕ ປະການນີ້

ພິກຂຸທັງຫຼາຍ ສັງໂຍດ ໑໐ ປະການນີ້ແລ

**ສັງໂຍຊະນສູດທີ ໓ ຈົບ**

## ໔. ເຈໂຕຂີລະສູດ[๑]
## ວ່າດ້ວຍກິເລດເຄື່ອງຕຶງຈິດຄືຕະປູ

[໑໔] ພິກຂຸທັງຫຼາຍ ກິເລດເຄື່ອງຕຶງຈິດຄືຕະປູ ໕ ປະການ ທີ່ບຸກຄົນຜູ້ໃດຜູ້ໜຶ່ງຈະເປັນພິກຂຸຫຼືພິກຂຸນີກໍຕາມ ຍັງລະບໍ່ໄດ້ ກິເລດເຄື່ອງມັດໃຈ ໕ ປະການ ທີ່ບຸກຄົນຜູ້ໃດຜູ້ໜຶ່ງຈະເປັນ

ພິກຂຸຫຼືພິກຂຸນີກໍຕາມ ຍັງຕັດບໍ່ຂາດ ເມື່ອກາງຄືນຫຼື ກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມເສື່ອມແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມຈະເລີນເລີຍ

ກິເລດເຄື່ອງຕຶງຈິດຄືຕະປູ ໕ ປະການ ທີ່ບຸກຄົນນັ້ນຍັງລະບໍ່ໄດ້ ອັນໃດແດ່ ຄື ພິກຂຸໃນທຳວິໄນນີ້

໑. ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສາດສະດາ[໓] ຈິດຂອງພິກຂຸຜູ້ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສາດສະດານັ້ນ ຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ ນີ້ເປັນກິເລດເຄື່ອງຕຶງຈິດຄືຕະປູປະການທີ ໑ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ ຍັງລະບໍ່ໄດ້

໒. ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນທຳ ฯລฯ ນີ້ເປັນກິເລດເຄື່ອງຕຶງຈິດຄືຕະປູປະການທີ ໒ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ ຍັງລະບໍ່ໄດ້

໓. ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສົງ ฯລฯ ນີ້ເປັນກິເລດເຄື່ອງຕຶງຈິດຄືຕະປູ ປະການທີ ໓ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ ຍັງລະບໍ່ໄດ້

໔. ເຄືອບແຄງສົງໄສ ບໍ່ນ້ອມໃຈເຊື່ອ ບໍ່ເຫຼື້ອມໃສໃນສິກຂາ (ຂໍ້ທີ່ຈະຕ້ອງສຶກສາ) ฯລฯ ນີ້ເປັນກິເລດເຄື່ອງຕຶງຈິດຄືຕະປູປະການທີ ໔ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປ ເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ ຍັງລະບໍ່ໄດ້

໕. ເປັນຜູ້ໂກດ ບໍ່ພໍໃຈ ມີຈິດຖືກໂທສະ (ຄວາມຄິດປະທຸດສະຮ້າຍ) ກະທົບ ມີຈິດແຂງກະດ້າງໃນເພື່ອນພົມມະຈາຣີທັງຫຼາຍ ຈິດຂອງພິກຂຸຜູ້ໂກດ ບໍ່ພໍໃຈ ມີຈິດຖືກໂທສະກະທົບ ມີຈິດແຂງກະດ້າງໃນເພື່ອນພົມມະຈາຣີທັງຫຼາຍນັ້ນ ຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ ນີ້ເປັນກິເລດເຄື່ອງຕຶງຈິດຄືຕະປູປະການທີ ໕ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ ຍັງລະບໍ່ໄດ້

ນີ້ເປັນກິເລດເຄື່ອງຕຶງຈິດຄືຕະປູ ໕ ປະການ ທີ່ບຸກຄົນນັ້ນຍັງລະບໍ່ໄດ້

ກິເລດເຄື່ອງມັດໃຈ ໕ ປະການ ທີ່ບຸກຄົນນັ້ນຍັງຕັດບໍ່ຂາດ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມຢາກ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມຢາກໃນກາມທັງຫຼາຍ ຈິດຂອງພິກຂຸຜູ້ຍັງບໍ່ປາສະຈາກຄວາມກຳໜັດ ບໍ່ປາສະຈາກຄວາມພໍໃຈ ບໍ່ປາສະຈາກຄວາມຮັກ ບໍ່ປາສະຈາກຄວາມຢາກ ບໍ່ປາສະຈາກຄວາມຮ້ອນຮົນ ບໍ່ປາສະຈາກຄວາມຢາກໃນກາມທັງຫຼາຍນັ້ນ ຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິເລດເຄື່ອງມັດໃຈປະການທີ ໑ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຍັງຕັດບໍ່ຂາດ

໒. ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດໃນກາຍ ຯລຯ ນີ້ເປັນກິເລດເຄື່ອງມັດໃຈປະການທີ ໒ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຍັງຕັດບໍ່ຂາດ

໓. ເປັນຜູ້ຍັງບໍ່ປາສະຈາກຄວາມກຳໜັດໃນຮູບ ຯລຯ ນີ້ເປັນກິເລດເຄື່ອງມັດໃຈປະການທີ ໓ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຍັງຕັດບໍ່ຂາດ

໔. ສັນອາຫານຕາມຄວາມຕ້ອງການຈົນອີ່ມເກີນໄປ ປະກອບຄວາມສຸກໃນການນອນ ຄວາມ ສຸກໃນການເອນຫຼັງ ຄວາມສຸກໃນການຫຼັບຢູ່ ຯລຯ ນີ້ເປັນກິເລດເຄື່ອງມັດໃຈປະການທີ ໔ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບ ເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຍັງຕັດບໍ່ຂາດ

໕. ປະພຶດພົມມະຈັນດ້ວຍຄວາມປາຖະໜາເປັນເທບນິກາຍໝູ່ໃດໝູ່ໜຶ່ງວ່າ "ດ້ວຍສິນ ຂໍ້ວັດປະຕິບັດ ຕະບະ ຫຼືພົມມະຈັນນີ້ ເຮົາຈັກເປັນເທບພະເຈົ້າ ຫຼືເທບຕົນໃດຕົນໜຶ່ງ" ຈິດຂອງພິກຂຸຜູ້ປະພຶດພົມມະຈັນດ້ວຍຄວາມປາຖະໜາເປັນເທບນິກາຍໝູ່ໃດໝູ່ໜຶ່ງວ່າ "ດ້ວຍສິນ ຂໍ້ວັດປະຕິບັດ ຕະບະ ຫຼື

ພົມມະຈັນນີ້ ເຮົາຈັກເປັນເທບພະເຈົ້າຫຼືເທບຕົນໃດຕົນໜຶ່ງ" ຍ່ອມບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ ນີ້ເປັນກິເລດເຄື່ອງມັດໃຈປະການທີ ໕ ທີ່ພິກຂຸຜູ້ມີຈິດບໍ່ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ ຍັງຕັດບໍ່ຂາດ

ນີ້ເປັນກິເລດເຄື່ອງມັດໃຈ ໕ ປະການ ທີ່ບຸກຄົນນັ້ນຍັງຕັດບໍ່ຂາດ

ກິເລດເຄື່ອງຕຶງຈິດຄືຕະປູ ໕ ປະການນີ້ ທີ່ບຸກຄົນຜູ້ໃດຜູ້ໜຶ່ງຈະເປັນພິກຂຸຫຼືພິກຂຸນີກໍຕາມ ຍັງລະບໍ່ໄດ້ ກິເລດເຄື່ອງມັດໃຈ ໕ ປະການນີ້ ທີ່ບຸກຄົນຜູ້ໃດຜູ້ໜຶ່ງຈະເປັນພິກຂຸຫຼືພິກຂຸນີກໍຕາມ ຍັງຕັດບໍ່ຂາດ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມເສື່ອມແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມຈະເລີນເລີຍ

ເມື່ອກາງຄືນຫຼືກາງເວັນຂອງດວງຈັນໃນກາລະປັກ (ຂ້າງແຮມ)ຜ່ານໄປ ດວງຈັນ ນັ້ນຍ່ອມເສື່ອມຈາກຄວາມງາມ ຍ່ອມເສື່ອມຈາກຣັດສະໝີ ຍ່ອມເສື່ອມຈາກແສງສະຫວ່າງ ຍ່ອມເສື່ອມຈາກດ້ານຍາວແລະດ້ານກວ້າງ ສັນໃດ

ກິເລດເຄື່ອງຕຶງຈິດຄືຕະປູ ໕ ປະການນີ້ ທີ່ບຸກຄົນຜູ້ໃດຜູ້ໜຶ່ງຈະເປັນພິກຂຸຫຼືພິກຂຸນີກໍຕາມ ຍັງລະບໍ່ໄດ້ ກິເລດເຄື່ອງມັດໃຈ ໕ ປະການນີ້ ທີ່ບຸກຄົນຜູ້ໃດຜູ້ໜຶ່ງຈະເປັນພິກຂຸຫຼືພິກຂຸນີກໍຕາມ ຍັງຕັດບໍ່ຂາດ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມເສື່ອມແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມຈະເລີນເລີຍ ສັນນັ້ນ

ກິເລດເຄື່ອງຕຶງຈິດຄືຕະປູ ໕ ປະການ ທີ່ບຸກຄົນຜູ້ໃດຜູ້ໜຶ່ງຈະເປັນພິກຂຸຫຼືພິກຂຸນີກໍຕາມລະໄດ້ແລ້ວ ກິເລດເຄື່ອງມັດໃຈ ໕ ປະການ ທີ່ບຸກຄົນຜູ້ໃດຜູ້ໜຶ່ງຈະເປັນພິກຂຸຫຼືພິກຂຸນີກໍຕາມຕັດຂາດແລ້ວ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ

ກິເລດເຄື່ອງຕຶງຈິດຄືຕະປູ ໕ ປະການ ທີ່ບຸກຄົນນັ້ນລະໄດ້ແລ້ວ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ບໍ່ເຄືອບແຄງສົງໄສ ນ້ອມໃຈເຊື່ອ ເຫຼື້ອມໃສໃນສາດສະດາ ຈິດຂອງພິກຂຸ ຜູ້ບໍ່ເຄືອບແຄງສົງໄສ ນ້ອມໃຈເຊື່ອ ເຫຼື້ອມໃສໃນສາດສະດານັ້ນ ຍ່ອມນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພໍ່າເພັງພຽນ ນີ້ເປັນກິເລດເຄື່ອງຕຶງຈິດຄືຕະປູປະການທີ ໑ ທີ່ພິກຂຸຜູ້ມີຈິດ

ນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ລະໄດ້ແລ້ວ

໒. ບໍ່ເຄືອບແຄງສົງໄສ ນ້ອມໃຈເຊື່ອ ເຫຼື້ອມໃສໃນພຣະທຳ ຯລຯ ນີ້ເປັນກິເລດ ເຄື່ອງຕຶງຈິດຄືຕະປູປະການທີ ໒ ທີ່ພິກຂຸຜູ້ມີຈິດນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ລະໄດ້ແລ້ວ

໓. ບໍ່ເຄືອບແຄງສົງໄສ ນ້ອມໃຈເຊື່ອ ເຫຼື້ອມໃສໃນພຣະສົງ ຯລຯ ນີ້ເປັນກິເລດເຄື່ອງຕຶງຈິດຄືຕະປູປະການທີ ໓ ທີ່ພິກຂຸຜູ້ມີຈິດນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ລະໄດ້ແລ້ວ

໔. ບໍ່ເຄືອບແຄງສົງໄສ ນ້ອມໃຈເຊື່ອ ເຫຼື້ອມໃສໃນສິກຂາ ຯລຯ ນີ້ເປັນກິເລດເຄື່ອງຕຶງຈິດຄືຕະປູປະການທີ ໔ ທີ່ພິກຂຸຜູ້ມີຈິດນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ລະໄດ້ແລ້ວ

໕. ເປັນຜູ້ບໍ່ໂກດ ພໍໃຈ ມີຈິດບໍ່ຖືກໂທສະກະທົບ ມີຈິດບໍ່ແຂງກະດ້າງໃນເພື່ອນພົມມະຈາຣີທັງຫຼາຍ ຈິດຂອງພິກຂຸຜູ້ບໍ່ໂກດ ພໍໃຈ ມີຈິດບໍ່ຖືກໂທສະກະທົບ ມີຈິດບໍ່ແຂງກະດ້າງໃນເພື່ອນພົມມະຈາຣີທັງຫຼາຍນັ້ນ ຍ່ອມນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງ ພຽນ ນີ້ເປັນກິເລດເຄື່ອງຕຶງຈິດຄືຕະປູປະການທີ ໕ ທີ່ພິກຂຸຜູ້ມີຈິດນ້ອມ ໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ລະໄດ້ແລ້ວ

ນີ້ເປັນກິເລດເຄື່ອງຕຶງຈິດຄືຕະປູ ໕ ປະການ ທີ່ບຸກຄົນນັ້ນລະໄດ້ແລ້ວ

ກິເລດເຄື່ອງມັດໃຈ ໕ ປະການ ທີ່ບຸກຄົນນັ້ນຕັດຂາດແລ້ວ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ປາສະຈາກຄວາມກຳໜັດ ປາສະຈາກຄວາມພໍໃຈ ປາສະຈາກຄວາມຮັກ ປາສະຈາກຄວາມຢາກ ປາສະຈາກຄວາມຮ້ອນຮົນ ປາສະຈາກຄວາມຢາກໃນກາມທັງຫຼາຍ ຈິດຂອງພິກຂຸຜູ້ປາສະຈາກຄວາມກຳໜັດ ປາສະຈາກຄວາມພໍໃຈ ປາສະຈາກຄວາມຮັກ ປາສະຈາກຄວາມຢາກ

ປາສະຈາກຄວາມຮ້ອນຮົນ ປາສະຈາກຄວາມຢາກໃນກາມທັງຫຼາຍນັ້ນ ຍ່ອມນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິເລດເຄື່ອງມັດໃຈປະການທີ ໑ ທີ່ພິກຂຸຜູ້ມີຈິດນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຕັດຂາດແລ້ວ

໒. ເປັນຜູ້ປາສະຈາກຄວາມກຳໜັດໃນກາຍ ຯລຯ ນີ້ເປັນກິເລດເຄື່ອງມັດໃຈປະການທີ ໒ ທີ່ພິກຂຸຜູ້ມີຈິດນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຕັດຂາດແລ້ວ

໓. ເປັນຜູ້ປາສະຈາກຄວາມກຳໜັດໃນຮູບ ຯລຯ ນີ້ເປັນກິເລດເຄື່ອງມັດໃຈປະການທີ ໓ ທີ່ພິກຂຸຜູ້ມີຈິດນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຕັດຂາດແລ້ວ

໔. ສັນອາຫານຕາມຕ້ອງການຈົນອີ່ມແລ້ວ ບໍ່ປະກອບຄວາມສຸກໃນການນອນ ຄວາມສຸກໃນການເອນຫຼັງ ຄວາມສຸກໃນການຫຼັບຢູ່ ຯລຯ ນີ້ເປັນກິເລດເຄື່ອງ ມັດໃຈປະການທີ ໔ ທີ່ພິກຂຸຜູ້ມີຈິດນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຕັດຂາດແລ້ວ

໕. ບໍ່ປະພຶດພົມມະຈັນດ້ວຍຄວາມປາຖະໜາເປັນເທບນິກາຍໝູ່ໃດໝູ່ໜຶ່ງ ວ່າ "ດ້ວຍສິນ ຂໍ້ ວັດປະຕິບັດ ຕະບະ ຫຼືພົມມະຈັນນີ້ ເຮົາຈັກເປັນເທບພະເຈົ້າຫຼືເທບຕົນໃດຕົນໜຶ່ງ" ຈິດຂອງພິກຂຸຜູ້ບໍ່ປະພຶດພົມມະຈັນ ດ້ວຍຄວາມປາຖະໜາເປັນເທບນິກາຍໝູ່ໃດໝູ່ໜຶ່ງວ່າ "ດ້ວຍສິນ ຂໍ້ວັດປະຕິບັດ ຕະບະ ຫຼືພົມມະຈັນນີ້ ເຮົາຈັກເປັນເທບພະເຈົ້າຫຼືເທບຕົນໃດຕົນໜຶ່ງ" ຍ່ອມນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ນີ້ເປັນກິເລດເຄື່ອງມັດໃຈປະການທີ ໕ ທີ່ພິກຂຸຜູ້ມີຈິດນ້ອມໄປເພື່ອຄວາມພຽນ ເພື່ອປະກອບເນືອງ ໆ ເພື່ອກະທຳຕໍ່ເນື່ອງ ເພື່ອພ່ຳເພັງພຽນ ຕັດຂາດແລ້ວ

ນີ້ເປັນກິເລດເຄື່ອງມັດໃຈ ໕ ປະການ ທີ່ບຸກຄົນນັ້ນຕັດຂາດແລ້ວ

ກິເລດເຄື່ອງຕຶງຈິດຄືຕະປູ ໕ ປະການນີ້ ທີ່ບຸກຄົນຜູ້ໃດຜູ້ໜຶ່ງຈະເປັນພິກຂຸຫຼືພິກຂຸນີກໍຕາມ ລະໄດ້ແລ້ວ ກິເລດເຄື່ອງມັດໃຈ ໕ ປະການນີ້ ທີ່ບຸກຄົນຜູ້ໃດຜູ້ໜຶ່ງຈະເປັນພິກຂຸຫຼືພິກຂຸນີກໍຕາມ ຕັດຂາດແລ້ວ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ

ພິກຂຸທັງຫຼາຍ ເມື່ອກາງຄືນຫຼືກາງເວັນຂອງດວງຈັນໃນຂຸນທະປັກ (ຂ້າງຂຶ້ນ) ຜ່ານໄປ ດວງຈັນນັ້ນຍ່ອມຈະເລີນດ້ວຍຄວາມງາມ ຍ່ອມຈະເລີນດ້ວຍຣັດສະໝີ ຍ່ອມຈະເລີນດ້ວຍແສງສະຫວ່າງ ຍ່ອມຈະເລີນດ້ວຍດ້ານຍາວແລະດ້ານກວ້າງ ສັນໃດ

ກິເລດເຄື່ອງຕຶງຈິດຄືຕະປູ ໕ ປະການນີ້ ທີ່ບຸກຄົນຜູ້ໃດຜູ້ໜຶ່ງຈະເປັນພິກຂຸຫຼືພິກຂຸນີກໍຕາມ ລະໄດ້ແລ້ວ ກິເລດເຄື່ອງມັດໃຈ ໕ ປະການນີ້ ທີ່ບຸກຄົນຜູ້ໃດຜູ້ໜຶ່ງຈະເປັນພິກຂຸຫຼືພິກຂຸນີກໍຕາມ ຕັດຂາດແລ້ວ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ ສັນນັ້ນ

**ເຈໂຕຂີລະສູດທີ ໔ ຈົບ**

## ໕. ອັບປະມາທະສູດ

## ວ່າດ້ວຍຄວາມບໍ່ຜະໝາດເລີດກວ່າກຸສົນທຳ

[໑໕] ພິກຂຸທັງຫຼາຍ ສັດທັງຫຼາຍທີ່ບໍ່ມີຕີນ ມີສອງຕີນ ມີສີ່ຕີນ ຫຼືມີຕີນຫຼາຍກໍຕາມ ມີຮູບບໍ່ມີຮູບກໍຕາມ ມີສັນຍາ ບໍ່ມີສັນຍາ ຫຼືມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນກໍຕາມ ມີປະມານທໍ່ໃດ ຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ບັນດິດກ່າວວ່າ ເລີດກວ່າສັດມີປະມານທໍ່ນັ້ນ ສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນແລ ມີຄວາມບໍ່ຜະໝາດເປັນມູນ ລວມລົງໃນຄວາມບໍ່ຜະໝາດ ຄວາມບໍ່ຜະໝາດ ບັນດິດກ່າວວ່າ ເລີດກວ່າກຸສົນທຳເຫຼົ່ານັ້ນ

ຮອຍຕີນຂອງສັດທີ່ທ່ຽວໄປເທິງແຜ່ນດິນທັງໝົດ ລວມລົງໃນຮອຍຕີນຊ້າງ ຮອຍຕີນຊ້າງຊາວໂລກກ່າວວ່າ ເລີດກວ່າຮອຍຕີນເຫຼົ່ານັ້ນ ຍ້ອນເປັນຮອຍຕີນໃຫຍ່ ສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນແລ ມີຄວາມບໍ່ຜະໝາດເປັນມູນ ລວມລົງໃນຄວາມບໍ່ຜະໝາດ ຄວາມບໍ່ຜະໝາດບັນດິດກ່າວວ່າ ເລີດກວ່າກຸສົນທຳເຫຼົ່ານັ້ນ

ກອນຂອງເຮືອນຍອດທັງໝົດ ທອດໄປເຖິງຍອດ ລວມລົງທີ່ຍອດ ຍອດເຮືອນ ຊາວໂລກກ່າວວ່າ ເລີດກວ່າກອນເຫຼົ່ານັ້ນທັງໝົດ ສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ມີຄວາມບໍ່ຜະໝາດເປັນມູນ ລວມລົງໃນຄວາມບໍ່ຜະໝາດ ຄວາມບໍ່ຜະໝາດ ບັນດິດກ່າວວ່າ ເລີດກວ່າກຸສົນທຳເຫຼົ່ານັ້ນ

ກິ່ນຫອມທີ່ເກີດແຕ່ຮາກຊະນິດໃດຊະນິດໜຶ່ງ ເກດສະໜາ ຊາວໂລກກ່າວວ່າ ເລີດກວ່າກິ່ນຫອມທີ່ເກີດແຕ່ຮາກເຫຼົ່ານັ້ນ ສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ຯລຯ

ກິ່ນຫອມທີ່ເກີດແຕ່ແກ່ນຊະນິດໃດຊະນິດໜຶ່ງ ຈັນແດງ ຊາວໂລກກ່າວວ່າ ເລີດກວ່າກິ່ນຫອມທີ່ເກີດແຕ່ແກ່ນເຫຼົ່ານັ້ນ ສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ฯລฯ

ກິ່ນຫອມທີ່ເກີດແຕ່ດອກຊະນິດໃດຊະນິດໜຶ່ງ ດອກມະລິ ຊາວໂລກກ່າວວ່າ ເລີດກວ່າກິ່ນທີ່ເກີດແຕ່ດອກເຫຼົ່ານັ້ນ ສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ฯລฯ

ພຣະຣາຊາຜູ້ມີອຳນາດນ້ອຍທັງໝົດ ຍ່ອມຄ້ອຍຕາມພຣະເຈົ້າຈັກກະພັດ ພຣະເຈົ້າຈັກກະພັດ ຊາວໂລກກ່າວວ່າ ເລີດກວ່າພຣະຣາຊາຜູ້ມີອຳນາດນ້ອຍເຫຼົ່ານັ້ນ ສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ฯລฯ

ແສງສະຫວ່າງຂອງດວງດາວທັງໝົດ ຍ່ອມບໍ່ເຖິງສ່ວນທີ ໑໖ ແຫ່ງແສງສະຫວ່າງຂອງດວງຈັນ ແສງສະຫວ່າງຂອງດວງຈັນ ຊາວໂລກກ່າວວ່າ ເລີດກວ່າແສງສະຫວ່າງຂອງດວງດາວເຫຼົ່ານັ້ນ ສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ฯລฯ

ໃນສາຣະທະລະດູ ເມື່ອຝົນຂາດຫາຍປາສະຈາກກ້ອນເຟື້ອ ດວງອາທິດອຸໄທຂຶ້ນສູ່ທ້ອງຟ້າ ກຳຈັດຄວາມມືດທີ່ມີຢູ່ໃນອາກາດທັງໝົດ ຍ່ອມສ່ອງແສງ ແຜດແສງເຈີດຈ້າ ແລະແຈ່ມກະຈ່າງ ສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນ ฯລฯ

ແມ່ນ້ຳໃຫຍ່ທັງຫຼາຍ ຄື ແມ່ນ້ຳຄົງຄາ ແມ່ນ້ຳຍະມຸນາ ແມ່ນ້ຳອະຈິຣະວະດີ ແມ່ນ້ຳສະຣະພູ ແມ່ນ້ຳມະຮີ ທັງໝົດຍ່ອມໄຫຼບ່າລົງສູ່ມະຫາສະມຸດ ນ້ອມໄປສູ່ມະຫາສະມຸດ ອຽງໄປສູ່ ມະຫາສະມຸດ ໂອນໄປສູ່ມະຫາສະມຸດ ມະຫາສະມຸດ ຊາວໂລກກ່າວວ່າ ເລີດກວ່າແມ່ນ້ຳໃຫຍ່ເຫຼົ່ານັ້ນ ສັນໃດ ກຸສົນທຳທັງໝົດກໍຄືກັນສັນນັ້ນແລ ມີຄວາມບໍ່ຜະໝາດເປັນມູນ ລວມລົງໃນຄວາມບໍ່ຜະໝາດ ຄວາມບໍ່ຜະໝາດ ບັນດິດກ່າວວ່າເລີດກວ່າກຸສົນທຳ ເຫຼົ່ານັ້ນ

**ອັບປະມາທະສູດທີ ໕ ຈົບ**

## ໖. ອາຫຸເນີຍຍະສູດ

## ວ່າດ້ວຍບຸກຄົນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ

[໑໖] ພິກຂຸທັງຫຼາຍ ບຸກຄົນ ໑໐ ຈຳພວກນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

ບຸກຄົນ ໑໐ ຈຳພວກໃດແດ່ ຄື

໑. ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ
໒. ພຣະປັດເຈກສຳພຸດທະເຈົ້າ
໓. ທ່ານຜູ້ເປັນອຸພະໂຕພາຄະວິມຸດ[໑]
໔. ທ່ານຜູ້ເປັນປັນຍາວິມຸດ[໑]
໕. ທ່ານຜູ້ເປັນກາຍະສັກຂີ[໒]
໖. ທ່ານຜູ້ເປັນທິດຖິປັດຕະ[໓]
໗. ທ່ານຜູ້ເປັນສັດທາວິມຸດ[໔]
໘. ທ່ານຜູ້ເປັນທຳມານຸສາຣີ[໕]
໙. ທ່ານຜູ້ເປັນສັດທານຸສາຣີ[໖]
໑໐. ທ່ານຜູ້ເປັນໂຄຕະຣະພູ[໗]

ພິກຂຸທັງຫຼາຍ ບຸກຄົນ ໑໐ ຈຳພວກນີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຯລຯ ເປັນນາບຸນອັນປະເສີດຂອງໂລກ

**ອາຫຸເນີຍຍະສູດທີ ໖ ຈົບ**

## ໗. ປະຖົມນາຖະສູດ

## ວ່າດ້ວຍນາຖະກະຣະນະທຳ ສູດທີ ໑

[໑໗] ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງເປັນຜູ້ມີທີ່ເພິ່ງຢູ່ເທີ້ນ ຢ່າເປັນຜູ້ບໍ່ມີທີ່ເພິ່ງຢູ່ເລີຍ ບຸກຄົນຜູ້ບໍ່ມີທີ່ເພິ່ງຍ່ອມຢູ່ເປັນທຸກ ນາຖະກະຣະນະທຳ (ທຳເຄື່ອງກະທຳທີ່ເພິ່ງ) ໑໐ ປະການນີ້

ນາຖະກະຣະນະທຳ ໑໐ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ[໑] ພຽບພ້ອມດ້ວຍອາຈາຣະ[໒] (ມາຣະຍາດ) ແລະໂຄຈອນ (ການທ່ຽວໄປ) ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ແມ່ນການທີ່ພິກຂຸເປັນຜູ້ມີສີນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍນີ້ກໍເປັນນາຖະກະຣະນະທຳ

໒. ເປັນພະຫູສູດ ຊົງສຸຕະ[໓] ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທັງຫຼາຍທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນ

ບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນ ຄົບຖ້ວນ ແລ້ວຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ[໑] ແມ່ນການທີ່ພິກຂຸເປັນພະຫູສູດ ໆລໆ ແທງຕະຫຼອດດີດ້ວຍທິດຖິ ນີ້ກໍເປັນນາຖະກະຣະນະທຳ

໓. ເປັນຜູ້ມີມິດດີ[໒] ມີສະຫາຍດີ[໓] ມີເພື່ອນດີ[໔] ແມ່ນການທີ່ພິກຂຸເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ນີ້ກໍເປັນນາຖະກະຣະນະທຳ

໔. ເປັນຜູ້ວ່າງ່າຍ ປະກອບດ້ວຍທຳເປັນເຄື່ອງເຮັດໃຫ້ເປັນຜູ້ວ່າງ່າຍ ອົດທົນ ຮັບຟັງຄຳພ່ຳສອນໂດຍເຄົາລົບ ແມ່ນການທີ່ພິກຂຸເປັນຜູ້ວ່າງ່າຍ ປະກອບດ້ວຍທຳເປັນເຄື່ອງເຮັດໃຫ້ເປັນຜູ້ວ່າງ່າຍ ອົດທົນ ຮັບຟັງຄຳພ່ຳສອນໂດຍເຄົາລົບ ນີ້ກໍເປັນນາຖະກະຣະນະທຳ

໕. ເປັນຜູ້ດຸໝັ່ນ ບໍ່ຂີ້ຄ້ານໃນວຽກງານທີ່ຈະຕ້ອງຊ່ອຍກັນເຮັດທັງງານສູງ ແລະ ງານຕ່ຳ[໕]ຂອງເພື່ອນພົມມະຈາຣີທັງຫຼາຍ ປະກອບດ້ວຍປັນຍາເປັນເຄື່ອງ ພິຈາລະນາອັນເປັນອຸບາຍໃນວຽກງານທີ່ຈະຕ້ອງຊ່ອຍກັນເຮັດນັ້ນ ສາມາດເຮັດໄດ້ ສາມາດຈັດໄດ້ ແມ່ນການທີ່ພິກຂຸເປັນຜູ້ດຸໝັ່ນ ບໍ່ຂີ້ຄ້ານ ໃນວຽກງານທີ່ຈະຕ້ອງຊ່ອຍກັນເຮັດທັງງານສູງແລະງານຕ່ຳຂອງເພື່ອນພົມມະຈາຣີທັງຫຼາຍໆລໆ ສາມາດ ເຮັດໄດ້ ສາມາດຈັດໄດ້ ນີ້ກໍເປັນນາຖະກະຣະນະທຳ

໖. ເປັນຜູ້ຕ້ອງການທຳ[໖] ເປັນຜູ້ຟັງແລະຜູ້ສະແດງທຳອັນເປັນທີ່ພໍໃຈ ມີປາໂມດຢ່າງຍິ່ງໃນອະພິທຳ[໗] ໃນອະພິວິໄນ[໘] ແມ່ນການທີ່ພິກຂຸເປັນຜູ້ຕ້ອງການທຳ ເປັນຜູ້ຟັງແລະຜູ້ສະແດງທຳອັນເປັນທີ່ພໍໃຈ ມີປາໂມດຢ່າງຍິ່ງໃນອະພິທຳ ໃນອະພິວິໄນ ນີ້ກໍເປັນນາຖະກະຣະນະທຳ

໗. ເປັນຜູ້ຜາຣົບຄວາມພຽນເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖີ້ເບົາໃນກຸສົນທຳທັງຫຼາຍຢູ່ ແມ່ນການທີ່ພິກຂຸເປັນຜູ້ຜາຣົບຄວາມພຽນເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖີ້ເບົາໃນກຸສົນທຳທັງຫຼາຍຢູ່ ນີ້ກໍເປັນນາຖະກະຣະນະທຳ

໘. ເປັນຜູ້ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະແລະຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້ ແມ່ນການທີ່ພິກຂຸເປັນຜູ້ສັນໂດດ

ດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້ ນີ້ກໍເປັນນາຖະກະຣະນະທຳ

໙. ເປັນຜູ້ມີສະຕິ ຄື ປະກອບດ້ວຍສະຕິປັນຍາເປັນເຄື່ອງຮັກສາຕົນ[១]ຢ່າງຍິ່ງ ຣະນຶກເຖິງສິ່ງທີ່ເຮັດແລະຄຳທີ່ເວົ້າແມ່ນດົນໄດ້ ແມ່ນການທີ່ພິກຂຸເປັນຜູ້ມີສະຕິ ຄື ປະກອບດ້ວຍສະຕິປັນຍາເປັນເຄື່ອງຮັກສາຕົນຢ່າງຍິ່ງ ຣະນຶກເຖິງສິ່ງທີ່ເຮັດແລະຄຳທີ່ເວົ້າແມ່ນດົນໄດ້ ນີ້ກໍເປັນນາຖະກະຣະນະທຳ

໑໐. ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງຄວາມສິ້ນທຸກ ໂດຍຖືກຕ້ອງ ແມ່ນການທີ່ພິກຂຸເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດ ໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ນີ້ກໍເປັນນາຖະກະຣະນະທຳ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງເປັນຜູ້ມີທີ່ເພິ່ງຢູ່ເທີ້ນ ຢ່າເປັນຜູ້ບໍ່ມີທີ່ເພິ່ງຢູ່ເລີຍ ບຸກຄົນຜູ້ບໍ່ມີທີ່ເພິ່ງຍ່ອມຢູ່ເປັນທຸກ

ນາຖະກະຣະນະທຳ ໑໐ ປະການນີ້ແລ

**ປະຖົມນາຖະສູດທີ ៧ ຈົບ**

## ໘. ທຸຕິຍະນາຖະສູດ

### ວ່າດ້ວຍນາຖະກະຣະນະທຳ ສູດທີ ໒

[໑໘] ຂ້າພະເຈົ້າໄດ້ຟັງມາແບບນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງເປັນຜູ້ມີທີ່ເພິ່ງຢູ່ເທີ້ນ ຢ່າເປັນຜູ້ບໍ່ມີທີ່ເພິ່ງຢູ່ເລີຍ ບຸກຄົນຜູ້ບໍ່ມີທີ່ເພິ່ງຍ່ອມຢູ່ເປັນທຸກ ນາຖະກະຣະນະທຳ ໑໐ ປະການນີ້

ນາຖະກະຣະນະທຳ ໑໐ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສີນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ພິກຂຸທັງຫຼາຍຜູ້ເປັນເຖຣະກໍດີ ຜູ້ເປັນມັດຊິມະກໍດີ ຜູ້ເປັນນະວະກະ[?]ກໍດີ ຍ່ອມສຳຄັນພິກຂຸນັ້ນວ່າ ເປັນຜູ້ຄວນວ່າກ່າວສັ່ງສອນໄດ້ວ່າ "ພິກຂຸນີ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍນໍ" ພິກຂຸນັ້ນຜູ້ອັນພິກຂຸຜູ້ເປັນເຖຣະ ຜູ້ເປັນມັດຊິມະ ຜູ້ເປັນນະວະກະອະນຸເຄາະແລ້ວ ເພິ່ງຫວັງໄດ້[໒] ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ ນີ້ກໍເປັນນາຖະກະຣະນະທຳ

໔. ເປັນພະຫູສູດ ຯລຯ ແທງຕະຫຼອດດີດ້ວຍທິດຖິ ພິກຂຸທັງຫຼາຍຜູ້ເປັນເຖຣະກໍດີ ຜູ້ເປັນມັດຊິມະກໍດີ ຜູ້ເປັນນະວະກະກໍດີ ຍ່ອມສຳຄັນພິກຂຸນັ້ນວ່າເປັນຜູ້ຄວນວ່າກ່າວສັ່ງສອນໄດ້ວ່າ "ພິກຂຸນີ້ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທັງຫຼາຍທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິນໍ" ພິກຂຸນັ້ນຜູ້ອັນພິກຂຸຜູ້ເປັນເຖຣະ ຜູ້ເປັນມັດຊິມະ ຜູ້ເປັນນະວະກະອະນຸເຄາະແລ້ວ ເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ ນີ້ກໍເປັນນາຖະກະຣະນະທຳ

໓. ເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ພິກຂຸທັງຫຼາຍຜູ້ເປັນເຖຣະກໍດີ ຜູ້ເປັນມັດຊິມະກໍດີ ຜູ້ເປັນນະວະກະກໍດີ ຍ່ອມສຳຄັນພິກຂຸນັ້ນວ່າເປັນຜູ້ຄວນວ່າກ່າວສັ່ງສອນໄດ້ວ່າ "ພິກຂຸນີ້ເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີນໍ" ພິກຂຸນັ້ນຜູ້ອັນພິກຂຸຜູ້ເປັນເຖຣະ ຜູ້ເປັນມັດຊິມະ ຜູ້ເປັນນະວະກະອະນຸເຄາະແລ້ວ ເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ ນີ້ກໍເປັນນາຖະກະຣະນະທຳ

໔. ເປັນຜູ້ວ່າງ່າຍ ປະກອບດ້ວຍທຳເປັນເຄື່ອງເຮັດໃຫ້ເປັນຜູ້ວ່າງ່າຍ ອົດທົນ ຮັບຟັງຄຳພ່ຳສອນໂດຍເຄົາລົບ ພິກຂຸທັງຫຼາຍຜູ້ເປັນເຖຣະກໍດີ ຜູ້ເປັນມັດຊິມະກໍດີ ຜູ້ເປັນນະວະກະກໍດີ ຍ່ອມສຳຄັນພິກຂຸນັ້ນວ່າເປັນຜູ້ຄວນວ່າກ່າວສັ່ງສອນໄດ້ວ່າ "ພິກຂຸນີ້ເປັນຜູ້ວ່າງ່າຍ ປະກອບດ້ວຍທຳເປັນເຄື່ອງເຮັດໃຫ້ເປັນຜູ້ວ່າງ່າຍ ອົດທົນ ຮັບຟັງຄຳພ່ຳສອນໂດຍເຄົາລົບນໍ" ພິກຂຸນັ້ນຜູ້ອັນພິກຂຸຜູ້ເປັນເຖຣະ ຜູ້ເປັນມັດຊິມະ ຜູ້ເປັນນະວະກະອະນຸເຄາະແລ້ວ ເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ ນີ້ກໍເປັນນາຖະກະຣະນະທຳ

໕. ເປັນຜູ້ດຸໝັ່ນ ບໍ່ຂີ້ຄ້ານໃນວຽກງານທີ່ຈະຕ້ອງຊ່ອຍກັນເຮັດທັງງານສູງແລະ ງານຕ່ຳໆ ຂອງເພື່ອນພົມມະຈາຣີທັງຫຼາຍ ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາອັນເປັນອຸບາຍໃນວຽກງານທີ່ຈະຕ້ອງຊ່ອຍກັນເຮັດນັ້ນ ສາມາດເຮັດໄດ້ ສາມາດຈັດໄດ້ ພິກຂຸທັງຫຼາຍຜູ້ເປັນເຖຣະກໍດີ ຜູ້ເປັນມັດຊິມະກໍດີ ຜູ້ເປັນນະວະກະກໍດີ ຍ່ອມສຳຄັນພິກຂຸນັ້ນວ່າເປັນຜູ້ຄວນວ່າກ່າວສັ່ງສອນໄດ້ວ່າ "ພິກຂຸນີ້ເປັນຜູ້ດຸໝັ່ນບໍ່ຂີ້ຄ້ານໃນວຽກງານທີ່ຈະຕ້ອງຊ່ອຍກັນເຮັດ ທັງງານສູງແລະງານຕ່ຳຂອງເພື່ອນພົມມະຈາຣີທັງຫຼາຍ ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາ ອັນເປັນອຸບາຍໃນວຽກງານທີ່ຈະຕ້ອງຊ່ອຍກັນເຮັດນັ້ນ ສາມາດເຮັດໄດ້ ສາມາດຈັດໄດ້ນໍ" ພິກຂຸນັ້ນຜູ້ອັນພິກຂຸຜູ້ເປັນເຖຣະ ຜູ້ເປັນມັດຊິມະ ຜູ້ເປັນນະວະກະ ອະນຸເຄາະແລ້ວ ເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ ນີ້ກໍເປັນນາຖະກະຣະນະທຳ

໖. ເປັນຜູ້ຕ້ອງການທຳ ເປັນຜູ້ຟັງແລະຜູ້ສະແດງທຳອັນເປັນທີ່ພໍໃຈ ມີປາໂມດຢ່າງຍິ່ງໃນອະພິທຳ ໃນອະພິວິໄນ ພິກຂຸທັງຫຼາຍຜູ້ເປັນເຖຣະກໍດີ ຜູ້ເປັນມັດຊິມະກໍດີ ຜູ້ເປັນນະວະກະກໍດີຍ່ອມສຳຄັນພິກຂຸນັ້ນວ່າເປັນຜູ້ຄວນວ່າກ່າວ ສັ່ງສອນໄດ້ວ່າ "ພິກຂຸນີ້ເປັນຜູ້ຕ້ອງການທຳ ເປັນຜູ້ຟັງແລະຜູ້ສະແດງທຳອັນເປັນທີ່ພໍໃຈ ມີປາໂມດຢ່າງຍິ່ງໃນອະພິທຳ ໃນອະພິວິໄນນໍ" ພິກຂຸນັ້ນຜູ້ອັນພິກຂຸຜູ້ເປັນເຖຣະ ຜູ້ເປັນມັດຊິມະ ຜູ້ເປັນນະວະກະອະນຸເຄາະແລ້ວ ເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ ນີ້ກໍເປັນນາຖະກະຣະນະທຳ

໗. ເປັນຜູ້ຜາຣົບຄວາມພຽນເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງມີຄວາມບາກບັ່ນໝັ້ນຄົງ ບໍ່ຖືເບົາໃນກຸສົນທຳທັງຫຼາຍຢູ່ ພິກຂຸທັງຫຼາຍຜູ້ເປັນເຖຣະກໍດີ ຜູ້ເປັນມັດຊິມະກໍດີ ຜູ້ເປັນນະວະກະກໍດີ ຍ່ອມສຳຄັນພິກຂຸນັ້ນວ່າເປັນຜູ້ຄວນວ່າກ່າວສັ່ງສອນໄດ້ວ່າ "ພິກຂຸນີ້ເປັນຜູ້ຜາຣົບຄວາມພຽນເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖືເບົາໃນກຸສົນທຳທັງຫຼາຍຢູ່ນໍ" ພິກຂຸນັ້ນຜູ້ອັນພິກຂຸຜູ້ເປັນເຖຣະ ຜູ້ເປັນມັດຊິມະ ຜູ້ເປັນນະວະກະອະນຸເຄາະແລ້ວ ເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ ນີ້ກໍເປັນນາຖະກະຣະນະທຳ

໘. ເປັນຜູ້ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້ ພິກຂຸທັງຫຼາຍຜູ້ເປັນເຖຣະກໍດີ ຜູ້ເປັນມັດຊິມະກໍດີ ຜູ້ເປັນນະວະກະກໍດີຍ່ອມສຳຄັນພິກຂຸນັ້ນວ່າເປັນຜູ້ຄວນວ່າກ່າວສັ່ງສອນໄດ້ວ່າ "ພິກຂຸນີ້ເປັນຜູ້ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້ນໍ" ພິກຂຸນັ້ນຜູ້ອັນພິກຂຸຜູ້ເປັນເຖຣະ ຜູ້ເປັນມັດຊິມະ ຜູ້ເປັນນະວະກະອະນຸເຄາະແລ້ວ ເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ ນີ້ກໍເປັນນາຖະກະຣະນະທຳ

໙. ເປັນຜູ້ມີສະຕິ ຄື ປະກອບດ້ວຍສະຕິປັນຍາເປັນເຄື່ອງຮັກສາຕົນຢ່າງຍິ່ງ ຣະນຶກເຖິງສິ່ງທີ່ເຮັດແລະຄຳທີ່ເວົ້າແມ່ນດົນໄດ້ ພິກຂຸທັງຫຼາຍຜູ້ເປັນເຖຣະກໍດີ ຜູ້ເປັນມັດຊິມະກໍດີ ຜູ້ເປັນນະວະກະກໍດີ ຍ່ອມສຳຄັນພິກຂຸນັ້ນວ່າເປັນຜູ້ຄວນວ່າກ່າວສັ່ງສອນໄດ້ວ່າ "ພິກຂຸນີ້ເປັນຜູ້ມີສະຕິຄືປະກອບດ້ວຍສະຕິປັນຍາເປັນເຄື່ອງຮັກສາຕົນຢ່າງຍິ່ງ ຣະນຶກເຖິງສິ່ງທີ່ເຮັດແລະຄຳທີ່ເວົ້າແມ່ນດົນໄດ້ນໍ" ພິກຂຸນັ້ນຜູ້ອັນພິກຂຸຜູ້ເປັນເຖຣະ ຜູ້ເປັນມັດຊິມະ ຜູ້ເປັນນະວະກະອະນຸເຄາະແລ້ວເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ ນີ້ກໍເປັນນາຖະກະຣະນະທຳ

໑໐. ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງ ພິກຂຸທັງຫຼາຍຜູ້ເປັນເຖຣະກໍດີ ຜູ້ເປັນມັດຊິມະກໍດີ ຜູ້ເປັນນະວະກະກໍດີຍ່ອມ ສຳຄັນພິກຂຸນັ້ນວ່າເປັນຜູ້ຄວນວ່າກ່າວສັ່ງສອນໄດ້ວ່າ "ພິກຂຸນີ້ເປັນຜູ້ມີປັນຍາ ຄື ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງຄວາມສິ້ນທຸກໂດຍຖືກຕ້ອງນໍ" ພິກຂຸນັ້ນຜູ້ອັນພິກຂຸຜູ້ເປັນເຖຣະ ຜູ້ເປັນມັດຊິມະ ຜູ້ເປັນນະວະກະອະນຸເຄາະແລ້ວ ເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ ນີ້ກໍເປັນນາຖະກະຣະນະທຳ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງເປັນຜູ້ມີທີ່ເພິ່ງຢູ່ເທີ້ນ ຢ່າເປັນຜູ້ບໍ່ມີທີ່ເພິ່ງຢູ່ເລີຍ ບຸກຄົນຜູ້ບໍ່ມີທີ່ເພິ່ງຍ່ອມຢູ່ເປັນທຸກ

ນາຖະກະຣະນະທຳ ໑໐ ປະການນີ້ແລ

**ທຸຕິຍະນາຖະສູດທີ ໗ ຈົບ**

## ໘. ປະຖົມອະຣິຍະວາສະສູດ

## ວ່າດ້ວຍທຳເປັນເຄື່ອງຢູ່ແຫ່ງພຣະອະຣິຍະ ສູດທີ ໑

[໑໙] ພິກຂຸທັງຫຼາຍ ທຳເປັນເຄື່ອງຢູ່ແຫ່ງພຣະອະຣິຍະ ໑໐ ປະການນີ້ ທີ່ພຣະອະຣິຍະຢູ່ແລ້ວ ກຳລັງຢູ່ ຫຼື ຈັກຢູ່

ທຳເປັນເຄື່ອງຢູ່ແຫ່ງພຣະອະຣິຍະ ໑໐ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ເປັນຜູ້ລະອົງ ໕ ໄດ້

໒. ເປັນຜູ້ປະກອບດ້ວຍອົງ ໖
໓. ເປັນຜູ້ມີທຳເປັນເຄື່ອງຮັກສາແນວເອກ
໔. ເປັນຜູ້ມີອະປັດເສນະທຳ (ທຳເປັນຄືພະນັກພິງ) ໔ ປະການ
໕. ເປັນຜູ້ມີປັດເຈກສັດຈະບັນເທົາໄດ້
໖. ເປັນຜູ້ມີການສະແຫວງຫາອັນສະລະໄດ້ດີ
໗. ເປັນຜູ້ມີຄວາມດຳຣິອັນບໍ່ຂຸ່ນມົວ
໘. ເປັນຜູ້ມີກາຍສັງຂານອັນລະງັບໄດ້
໙. ເປັນຜູ້ມີຈິດລຸດພົ້ນໄດ້ດີ
໑໐. ເປັນຜູ້ມີປັນຍາລຸດພົ້ນໄດ້ດີ

ພິກຂຸທັງຫຼາຍ ທຳເປັນເຄື່ອງຢູ່ແຫ່ງພຣະອະຣິຍະ ໑໐ ປະການນີ້ແລ ທີ່ພຣະອະຣິຍະຢູ່ແລ້ວ ກຳລັງຢູ່ ຫຼືຈັກຢູ່

**ປະຖົມອະຣິຍະວາສະສູດທີ ໙ ຈົບ**

## ໑໐. ທຸຕິຍະອະຣິຍະວາສະສູດ

## ວ່າດ້ວຍທຳເປັນເຄື່ອງຢູ່ແຫ່ງພຣະອະຣິຍະ ສູດທີ ໒

[໒໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ນິຄົມຂອງຊາວກຸຣຸ ຊື່ກຳມາສະທຳມະ ແຄວັ້ນກຸຣຸໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ທຳເປັນເຄື່ອງຢູ່ແຫ່ງພຣະອະຣິຍະ ໑໐ ປະການນີ້ແລ ທີ່ພຣະອະຣິຍະຢູ່ແລ້ວ ກຳລັງຢູ່ ຫຼືຈັກຢູ່

ທຳເປັນເຄື່ອງຢູ່ແຫ່ງພຣະອະຣິຍະ ໑໐ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ລະອົງ ໕ ໄດ້
໒. ເປັນຜູ້ປະກອບດ້ວຍອົງ ໖
໓. ເປັນຜູ້ມີທຳເປັນເຄື່ອງຮັກສາແນວເອກ
໔. ເປັນຜູ້ມີອະປັດເສນະທຳ ໔ ປະການ

໕. ເປັນຜູ້ມີປັດເຈກສັດຈະ^ບັນເທົາໄດ້
໖. ເປັນຜູ້ມີການສະແຫວງຫາອັນສະລະໄດ້ດີ
໗. ເປັນຜູ້ມີຄວາມດຳຣິອັນບໍ່ຂຸ່ນມົວ
໘. ເປັນຜູ້ມີກາຍສັງຂານອັນລະງັບໄດ້
໙. ເປັນຜູ້ມີຈິດລຸດພົ້ນໄດ້ດີ
໑໐. ເປັນຜູ້ມີປັນຍາລຸດພົ້ນໄດ້ດີ

ພິກຂຸເປັນຜູ້ລະອົງ ໕ ໄດ້ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ລະກາມສັນທະໄດ້ ເປັນຜູ້ລະພະຍາບາດໄດ້ ເປັນຜູ້ລະຖີນະມິດທະໄດ້ ເປັນຜູ້ລະອຸດທັດຈະກຸກກຸດຈະໄດ້ ເປັນຜູ້ລະວິຈິກິດສາໄດ້ ພິກຂຸເປັນຜູ້ລະ ອົງ ໕ ໄດ້ ເປັນແນວນີ້ແລ

ພິກຂຸເປັນຜູ້ປະກອບດ້ວຍອົງ ໖ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວ ເປັນຜູ້ບໍ່ດີໃຈ ບໍ່ເສຍໃຈ ມີອຸເປກຂາ ມີສະຕິສຳປະຊັນຍະຢູ່ ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ທຳມາຣົມທາງໃຈແລ້ວ ເປັນຜູ້ບໍ່ດີໃຈ ບໍ່ເສຍໃຈ ມີອຸເປກຂາ ມີສະຕິສຳປະຊັນຍະຢູ່ ພິກຂຸເປັນຜູ້ປະກອບດ້ວຍອົງ ໖ ເປັນແນວນີ້ແລ

ພິກຂຸເປັນຜູ້ມີທຳເປັນເຄື່ອງຮັກສາແນວເອກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ປະກອບດ້ວຍໃຈທີ່ຮັກສາດ້ວຍສະຕິ ພິກຂຸເປັນຜູ້ມີທຳເປັນເຄື່ອງຮັກສາແນວເອກ ເປັນແນວນີ້ແລ

ພິກຂຸເປັນຜູ້ມີອະປັດເສນະທຳ ໔ ປະການ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາແລ້ວເສບແນວໜຶ່ງ ພິຈາລະນາແລ້ວອົດກັ້ນ ແນວໜຶ່ງ ພິຈາລະນາແລ້ວເວັ້ນແນວໜຶ່ງ ພິຈາລະນາແລ້ວບັນເທົາແນວໜຶ່ງ^ ພິກຂຸເປັນຜູ້ມີອະປັດເສນະທຳ ໔ ປະການ ເປັນແນວນີ້ແລ

ພິກຂຸເປັນຜູ້ມີປັດເຈກສັດຈະບັນເທົາໄດ້ ເປັນແນວໃດ?

ຄື ປັດເຈກສັດຈະຫຼວງຫຼາຍ ຄືເຫັນວ່າ "ໂລກທ່ຽງ" ແດ່ "ໂລກບໍ່ທ່ຽງ" ແດ່ "ໂລກມີບ່ອນສຸດ" ແດ່ "ໂລກບໍ່ມີບ່ອນສຸດ" ແດ່ "ຊີວະ^ກັບສະຣີຣະເປັນແນວດຽວກັນ" ແດ່ "ຊີວະກັບສະຣີຣະເປັນຄົນລະແນວກັນ" ແດ່ "ຫຼັງຈາກຕາຍແລ້ວຕະຖາຄົດ^ເກີດອີກ" ແດ່ "ຫຼັງຈາກຕາຍ

ແລ້ວຕະຖາຄົດບໍ່ເກີດອີກ" ແດ່ "ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ບໍ່ເກີດອີກ ກໍມີ" ແດ່ "ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ" ແດ່ ເຫຼົ່ານັ້ນທັງໝົດຂອງສະມະນະພາມຈໍານວນຫຼາຍອັນພິກຂຸໃນທໍາວິໄນນີ້ບັນເທົາໄດ້ ກໍາຈັດໄດ້ ສະລະໄດ້ ຄາຍໄດ້ ປ່ອຍວາງໄດ້ ລະໄດ້ ສະລະຄືນໄດ້ ພິກຂຸເປັນຜູ້ມີປັດເຈກສັດຈະບັນເທົາໄດ້ ເປັນແບວນີ້ແລ

ພິກຂຸເປັນຜູ້ມີການສະແຫວງຫາອັນສະລະໄດ້ດີ ເປັນແບວໃດ?

ຄື ພິກຂຸໃນທໍາວິໄນນີ້ເປັນຜູ້ລະການສະແຫວງຫາກາມໄດ້ ລະການສະແຫວງຫາພົບໄດ້ ລະງັບການສະແຫວງຫາພົມມະຈັນໄດ້ ພິກຂຸເປັນຜູ້ມີການສະແຫວງຫາອັນສະລະໄດ້ດີ ເປັນແບວນີ້ແລ

ພິກຂຸເປັນຜູ້ມີຄວາມດໍາຣິອັນບໍ່ຂຸ່ນມົວ ເປັນແບວໃດ?

ຄື ພິກຂຸໃນທໍາວິໄນນີ້ເປັນຜູ້ລະຄວາມດໍາຣິໃນກາມໄດ້ ເປັນຜູ້ລະຄວາມດໍາຣິໃນພະຍາບາດໄດ້ ເປັນຜູ້ລະຄວາມດໍາຣິໃນວິຫິງສາໄດ້ ພິກຂຸເປັນຜູ້ມີຄວາມດໍາຣິອັນບໍ່ຂຸ່ນມົວ ເປັນແບວນີ້ແລ

ພິກຂຸເປັນຜູ້ມີກາຍສັງຂານອັນລະງັບໄດ້ ເປັນແບວໃດ?

ຄື ພິກຂຸໃນທໍາວິໄນນີ້ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ພິກຂຸບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ພິກຂຸເປັນຜູ້ມີກາຍສັງຂານອັນລະງັບໄດ້ ເປັນແບວນີ້ແລ

ພິກຂຸເປັນຜູ້ມີຈິດລຸດພົ້ນໄດ້ດີ ເປັນແບວໃດ?

ຄື ພິກຂຸໃນທໍາວິໄນນີ້ເປັນຜູ້ມີຈິດລຸດພົ້ນຈາກຣາຄະ ລຸດພົ້ນຈາກໂທສະ ແລະລຸດພົ້ນຈາກໂມຫະ ພິກຂຸເປັນຜູ້ມີຈິດລຸດພົ້ນໄດ້ດີ ເປັນແບວນີ້ແລ

ພິກຂຸເປັນຜູ້ມີປັນຍາລຸດພົ້ນໄດ້ດີ ເປັນແບວໃດ?

ຄື ພິກຂຸໃນທໍາວິໄນນີ້ຮູ້ແຈ້ງວ່າ "ຣາຄະເຮົາລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້" ຮູ້ແຈ້ງວ່າ "ໂທສະເຮົາລະໄດ້ເດັດຂາດ ຯລຯ ໂມຫະເຮົາລະໄດ້ເດັດຂາດ ຕັດຮາກກົ່ນເຫງົ້າ ຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວ ເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້" ພິກຂຸເປັນຜູ້ມີປັນຍາລຸດພົ້ນໄດ້ດີ ເປັນແບວນີ້ແລ

ພຣະອະຣິຍະເຫຼົ່າໃດເຫຼົ່າໜຶ່ງໃນອະດີດຕະການ ໄດ້ອາໄສທຳເປັນເຄື່ອງຢູ່ແຫ່ງພຣະ ອະຣິຍະ ໑໐ ປະການນີ້ຢູ່ຄືກັນ ພຣະອະຣິຍະເຫຼົ່າໃດເຫຼົ່າໜຶ່ງໃນອະນາຄົດຕະການ ຈັກອາໄສທຳເປັນເຄື່ອງຢູ່ແຫ່ງພຣະອະຣິຍະ ໑໐ ປະການນີ້ຢູ່ຄືກັນ ພຣະອະຣິຍະເຫຼົ່າໃດເຫຼົ່າໜຶ່ງໃນປັດຈຸບັນການນີ້ ກໍອາໄສທຳເປັນເຄື່ອງຢູ່ແຫ່ງພຣະອະຣິຍະ ໑໐ ປະການນີ້ຢູ່ຄືກັນ

ພິກຂຸທັງຫຼາຍ ທຳເປັນເຄື່ອງຢູ່ແຫ່ງພຣະອະຣິຍະ ໑໐ ປະການນີ້ແລ ທີ່ພຣະອະຣິຍະຢູ່ແລ້ວ ກຳລັງຢູ່ ຫຼືຈັກຢູ່

**ທຸຕິຍະອະຣິຍະວາສະສູດທີ ໑໐ ຈົບ**

**ນາຖະກະຣະນະວັກທີ ໘ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໒. ມະຫາວັກ

## ໝວດວ່າດ້ວຍເລື້ອງໃຫຍ່

## ໑. ສີຫະນາທະສູດ[1]

## ວ່າດ້ວຍການບັນລືສີຫະນາດ

[໒໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ໃນເວລາຄໍ່າ ພະຍາຣາດຊະສີອອກຈາກທີ່ອາໄສແລ້ວບິດກາຍ ເຫຼືອດຕາເບິ່ງຮອບ ໆ ທັງ ໔ ທິດ ບັນລືສີຫະນາດ ໓ ຄັ້ງແລ້ວກໍໜີໄປຫາກິນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນມັນຄິດວ່າ “ເຮົາຢ່າເຮັດໃຫ້ສັດນ້ອຍ ໆ ທີ່ຫາກິນຢູ່ໃນບ່ອນບໍ່ສະໝ່ຳສະເໝີຕ້ອງຖືກຂ້າເລີຍ[໒]”

ຄຳວ່າ ສີຫະ ນີ້ ເປັນຊື່ຂອງຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ອາການທີ່ຕະຖາຄົດສະແດງທຳແກ່ບໍລິສັດ ເປັນສີຫະນາດຂອງຕະຖາຄົດແທ້

ກຳລັງຂອງຕະຖາຄົດ ໑໐ ປະການນີ້ທີ່ຕະຖາຄົດປະກອບແລ້ວ ເປັນເຫດໃຫ້ປະຕິຍານຖານະທີ່ອົງອາດ[໓] ບັນລືສີຫະນາດ[໔] ປະກາດພົມມະຈັກ[໕]ໃນບໍລິສັດ[໖]

ກຳລັງຂອງຕະຖາຄົດ ໑໐ ປະການ ອັນໃດແດ່ ຄື

໑. ຕະຖາຄົດຮູ້ແຈ້ງຖານະ[໗]ໂດຍເປັນຖານະ ແລະອະຖານະໂດຍເປັນອະຖານະໃນໂລກນີ້ຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງຖານະໂດຍເປັນຖານະ ແລະອະຖານະໂດຍເປັນອະຖານະຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວ ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

໒. ຕະຖາຄົດຮູ້ແຈ້ງວິບາກແຫ່ງການຢຶດຖືກຳທີ່ເປັນທັງອະດີດ ອະນາຄົດ ແລະປັດຈຸບັນໂດຍຖານະ ໂດຍເຫດຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງວິບາກແຫ່ງການຢຶດຖືກຳທີ່ເປັນທັງອະດີດ ອະນາຄົດ ແລະປັດຈຸບັນໂດຍຖານະ ໂດຍເຫດຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

໓. ຕະຖາຄົດຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງພູມທັງປວງ[໘]ຕາມຄວາມເປັນຈິງ ການທີ່ຕະຖາຄົດ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງພູມທັງປວງຕາມຄວາມເປັນຈິງນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສ ແລ້ວປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

໔. ຕະຖາຄົດຮູ້ແຈ້ງໂລກທີ່ມີທາດຫຼາຍຊະນິດ[໙] ມີທາດທີ່ແຕກຕ່າງກັນ[໑໐]ຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງໂລກທີ່ມີທາດຫຼາຍຊະນິດ ມີທາດທີ່ແຕກຕ່າງກັນຕາມຄວາມເປັນຈິງນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

໕. ຕະຖາຄົດຮູ້ແຈ້ງວ່າໝູ່ສັດເປັນຜູ້ມີອັດທະຍາໄສຕ່າງກັນຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງວ່າໝູ່ສັດເປັນຜູ້ມີອັດທະຍາໄສຕ່າງກັນຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດທີ່ ຕະຖາຄົດອາໄສແລ້ວປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

໖. ຕະຖາຄົດຮູ້ແຈ້ງວ່າສັດເຫຼົ່າອື່ນ ແລະບຸກຄົນເຫຼົ່າອື່ນມີອິນຊີແກ່ກ້າແລະອິນຊີອ່ອນຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງວ່າສັດເຫຼົ່າອື່ນ ແລະບຸກຄົນເຫຼົ່າອື່ນມີອິນຊີແກ່ກ້າແລະອິນຊີອ່ອນຕາມຄວາມເປັນຈິງນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວປະຕິຍານຖານະທີ່ອົງອາດ ບັນລື ສີຫະນາດ ປະກາດພົມມະຈັກໃນບໍລິສັດ

ຌ. ຕະຖາຄົດຮູ້ແຈ້ງຄວາມເສົ້າໝອງ[໑] ຄວາມຜ່ອງແຜ້ວ[໒] ແຫ່ງຊານ ວິໂມກ ສະມາທິ ແລະສະມາບັດ ແລະການອອກຈາກຊານ ວິໂມກ ສະມາທິ ແລະສະມາບັດ[໓]ຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງຄວາມເສົ້າໝອງ ຄວາມຜ່ອງແຜ້ວ ແຫ່ງຊານ ວິໂມກ ສະມາທິ ແລະສະ ມາບັດ ແລະການອອກຈາກຊານ ວິໂມກ ສະມາທິ ແລະ ສະມາບັດຕາມຄວາມເປັນຈິງ ນີ້ເປັນ ກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະ ກາດພົມມະຈັກໃນບໍລິສັດ

ຍ. ຕະຖາຄົດຣະນຶກເຖິງຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດ ແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດ ແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບ[໑]ຫຼວງຫຼາຍແດ່ ຕະຫຼອດວິວັດຕະກັບ[໒]ຫຼວງຫຼາຍແດ່ ຕະຫຼອດສັງວັດຕະກັບແລະວິວັດຕະກັບຫຼວງຫຼາຍແດ່ວ່າ "ໃນພົບນັ້ນ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວ ນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຮົາກໍມີຊື່ ແນວນັ້ນ ມີຕະກູນ ມີ ວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວ ນັ້ນ ໆ ຈຸຕິຈາກພົບນັ້ນແລ້ວຈຶ່ງມາເກີດ ໃນພົບນີ້" ຕະຖາຄົດຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປ ແລະຊີວະ ປະຫວັດແນວນີ້ ການທີ່ຕະຖາຄົດຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ຯລຯ ພ້ອມທັງ ລັກສະນະທົ່ວໄປ ແລະຊີວະປະຫວັດແນວນີ້ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະ ຖາຄົດ ອາໄສແລ້ວປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນ ບໍລິສັດ

ດ. ຕະຖາຄົດເຫັນໝູ່ສັດຜູ້ກຳລັງຈຸຕິ (ເຄື່ອນ) ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມ ແລະບໍ່ງາມ ເກີດດີ ແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປ ຕາມກຳວ່າ "ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ກ່າວຮ້າຍ ພຣະອະຣິຍະ ມີຄວາມເຫັນຜິດ ແລະຊັກຊວນຜູ້ອື່ນໃຫ້ເຮັດຕາມຄວາມເຫັນຜິດ ພວກເຂົາຫຼັງ ຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ແຕ່ໝູ່ສັດທີ່ປະກອບກາຍສຸດ ຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ແລະ ຊັກຊວນຜູ້ອື່ນໃຫ້ເຮັດຕາມຄວາມເຫັນຖືກ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິ ໂລກສະຫວັນ ຕະຖາຄົດເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳ ແນວນີ້ແລ ການທີ່ຕະຖາຄົດເຫັນໝູ່ສັດ ຯລຯ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ ສັດຜູ້ເປັນໄປຕາມກຳ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວ ປະຕິຍານຖານະທີ່ ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

໑໐. ຕະຖາຄົດເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ການທີ່ຕະຖາຄົດເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວປະຕິຍານຖານະ ທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

ພິກຂຸທັງຫຼາຍ ກຳລັງຂອງຕະຖາຄົດ ໑໐ ປະການນີ້ແລ ທີ່ຕະຖາຄົດປະກອບແລ້ວ ເປັນເຫດໃຫ້ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

**ສີຫະນາດສູດທີ ໑ ຈົບ**

## ໘. ອະທິມຸດຕິປະທະສູດ

## ວ່າດ້ວຍອະທິມຸດຕິບົດ໑

[໘໘] ຄັ້ງນັ້ນແລ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດກັບທ່ານພຣະອານົນດັ່ງນີ້ ວ່າ

ອານົນ ເຮົາກ້າປະຕິຍານໃນທຳທັງຫຼາຍ໌ທີ່ເປັນໄປເພື່ອເຮັດໃຫ້ແຈ້ງອະທິມຸດຕິບົດ ນັ້ນ ໆ ດ້ວຍປັນຍາອັນຍິ່ງ ເພື່ອສະແດງທຳໂດຍວິທີທີ່ບຸກຄົນຜູ້ປະຕິບັດຕາມແລ້ວ ຈັກຮູ້ທຳທີ່ມີຢູ່ວ່າ "ມີຢູ່" ແດ່ ທີ່ບໍ່ມີຢູ່ວ່າ "ບໍ່ມີຢູ່" ແດ່ ທີ່ຫຍາບວ່າ "ຫຍາບ" ແດ່ ທີ່ປະນີດວ່າ "ປະນີດ" ແດ່ ທີ່ບໍ່ປະເສີດວ່າ "ບໍ່ປະເສີດ" ແດ່ ທີ່ຍອດຢ້ຽມວ່າ "ປະເສີດ" ແດ່ ຫຼື ເປັນໄປໄດ້ທີ່ຜູ້ປະຕິບັດຕາມຈັກຮູ້ສິ່ງທີ່ເພິ່ງຮູ້ ຈັກເຫັນສິ່ງທີ່ເພິ່ງເຫັນ ຫຼື ຈັກເຮັດໃຫ້ແຈ້ງສິ່ງທີ່ເພິ່ງເຮັດໃຫ້ແຈ້ງ

ອານົນ ຍານທີ່ຍອດຢ້ຽມກວ່າຍານທັງຫຼາຍ ຄື ຍະຖາພູຕະຍານ[໒] ໃນທຳເຫຼົ່ານັ້ນ ໆ ກຳລັງຂອງຕະຖາຄົດ ໑໐ ປະການນີ້ ທີ່ຕະຖາຄົດມີແລ້ວ ເປັນເຫດໃຫ້ປະຕິຍານຖານະ ທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

ກຳລັງຂອງຕະຖາຄົດ ໑໐ ປະການ ອັນໃດແດ່ ຄື

໑. ຕະຖາຄົດ ຮູ້ແຈ້ງຖານະໂດຍເປັນຖານະ ແລະອະຖານະໂດຍເປັນອະຖານະໃນໂລກນີ້ຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງຖານະໂດຍເປັນຖານະ ແລະອະຖານະໂດຍເປັນອະຖານະຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

๔. ຕະຖາຄົດ ຮູ້ແຈ້ງວິບາກແຫ່ງການຍຶດຖືກຳທີ່ເປັນທັງອະດີດ ອະນາຄົດ ແລະປັດຈຸບັນ ໂດຍຖານະ ໂດຍເຫດຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງວິບາກແຫ່ງການຍຶດຖືກຳ ຯລຯ ນີ້ເປັນກຳລັງຂອງຕະຖາຄົດ ຯລຯ[6]

๓. ຕະຖາຄົດ ຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງພູມທັງປວງຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງປະຕິປະທາທີ່ໃຫ້ເຖິງພູມທັງປວງຕາມຄວາມເປັນຈິງ ຯລຯ ນີ້ເປັນກຳລັງຂອງຕະຖາຄົດ ຯລຯ

๔. ຕະຖາຄົດ ຮູ້ແຈ້ງໂລກທີ່ມີທາດຫຼາຍຊະນິດ ມີທາດທີ່ແຕກຕ່າງກັນຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງໂລກທີ່ມີທາດຫຼາຍຊະນິດ ມີທາດທີ່ແຕກຕ່າງກັນຕາມຄວາມເປັນຈິງ ຯລຯ ນີ້ເປັນກຳລັງຂອງຕະຖາຄົດ ຯລຯ

๕. ຕະຖາຄົດ ຮູ້ແຈ້ງວ່າໝູ່ສັດເປັນຜູ້ມີອັດທະຍາໄສຕ່າງກັນຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງວ່າໝູ່ສັດເປັນຜູ້ມີອັດທະຍາໄສຕ່າງກັນຕາມຄວາມເປັນຈິງ ຯລຯ ນີ້ເປັນກຳລັງຂອງຕະຖາຄົດ ຯລຯ

๖. ຕະຖາຄົດ ຮູ້ແຈ້ງວ່າສັດເຫຼົ່າອື່ນແລະບຸກຄົນເຫຼົ່າອື່ນ ມີອິນຊີແກ່ກ້າແລະອິນຊີອ່ອນຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງວ່າສັດເຫຼົ່າອື່ນ ແລະບຸກຄົນເຫຼົ່າອື່ນມີອິນຊີແກ່ກ້າແລະອິນຊີອ່ອນຕາມຄວາມເປັນຈິງ ຯລຯ ນີ້ເປັນກຳລັງຂອງຕະຖາຄົດ ຯລຯ

๗. ຕະຖາຄົດ ຮູ້ແຈ້ງຄວາມເສົ້າໝອງ ຄວາມຜ່ອງແຜ້ວ ແຫ່ງຊານ ວິໂມກ ສະມາທິ ແລະສະມາບັດ ແລະການອອກຈາກຊານ ວິໂມກ ສະມາທິ ແລະສະມາບັດຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ແຈ້ງຄວາມເສົ້າໝອງ ຄວາມຜ່ອງແຜ້ວ ແຫ່ງຊານ ວິໂມກ ສະມາທິ ແລະສະມາບັດ ແລະການອອກ ຯລຯ ຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດ ຯລຯ

๘. ຕະຖາຄົດ ຣະນຶກເຖິງຊາດກ່ອນໄດ້ຫຼາຍຊາດ ຄື ๑ ຊາດແດ່ ๔ ຊາດແດ່ ຯລຯ ຣະນຶກຊາດກ່ອນໄດ້ຫຼາຍຊາດພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້ ຯລຯ ນີ້ເປັນກຳລັງຂອງຕະຖາຄົດ ຯລຯ

๙. ຕະຖາຄົດ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ຯລຯ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້ແລ ການທີ່ຕະຖາຄົດເຫັນໝູ່ສັດ ຯລຯ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຯລຯ ນີ້ເປັນກຳລັງ ຂອງຕະຖາຄົດ ຯລຯ

๑๐. ຕະຖາຄົດ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະ ສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ການທີ່ຕະຖາຄົດເຮັດໃຫ້ແຈ້ງເຈໂຕ

ວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ນີ້ເປັນກຳລັງຂອງຕະຖາຄົດທີ່ຕະຖາຄົດອາໄສແລ້ວປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

ພິກຂຸທັງຫຼາຍ ກຳລັງຂອງຕະຖາຄົດ ໑໐ ປະການນີ້ແລ ທີ່ຕະຖາຄົດມີແລ້ວ ເປັນເຫດໃຫ້ປະຕິຍານຖານະທີ່ອົງອາດ ບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ

**ອະທິມຸດຕິປະທະສູດທີ ໘ ຈົບ**

## ໙. ກາຍະສູດ

## ວ່າດ້ວຍທຳທີ່ເພິ່ງລະທາງກາຍ

[໘໙] ພິກຂຸທັງຫຼາຍ ທຳທີ່ບຸກຄົນເພິ່ງລະທາງກາຍ ແຕ່ບໍ່ແມ່ນທາງວາຈາກໍມີ ທຳທີ່ບຸກຄົນເພິ່ງລະທາງວາຈາ ແຕ່ບໍ່ແມ່ນທາງກາຍກໍມີ ທຳທີ່ບຸກຄົນເພິ່ງລະທາງກາຍກໍບໍ່ໄດ້ ທາງວາຈາກໍບໍ່ໄດ້ ແຕ່ເພິ່ງເຫັນແຈ້ງດ້ວຍປັນຍາແລ້ວຈຶ່ງລະໄດ້ກໍມີ

ທຳທີ່ບຸກຄົນເພິ່ງລະທາງກາຍ ແຕ່ບໍ່ແມ່ນທາງວາຈາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເປັນຜູ້ຕ້ອງອາບັດບາງສ່ວນທີ່ເປັນອະກຸສົນທາງກາຍ ເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍພິຈາລະນາແລ້ວວ່າກ່າວພິກຂຸນັ້ນແນວນີ້ວ່າ "ທ່ານນັ້ນແລ ເປັນຜູ້ຕ້ອງອາບັດບາງສ່ວນທີ່ເປັນອະກຸສົນທາງກາຍ ຈະເປັນການດີບໍ ທີ່ທ່ານຈະລະກາຍທຸດຈະຣິດພ່ຳເພັງກາຍສຸດຈະຣິດ" ພິກຂຸນັ້ນຖືກເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍພິຈາລະນາແລ້ວວ່າກ່າວຢູ່ ຈຶ່ງລະກາຍທຸດຈະຣິດ ພ່ຳເພັງກາຍສຸດຈະຣິດ

ນີ້ຮຽກວ່າ ທຳທີ່ບຸກຄົນເພິ່ງລະທາງກາຍ ແຕ່ບໍ່ແມ່ນທາງວາຈາ

ທຳທີ່ບຸກຄົນເພິ່ງລະທາງວາຈາ ແຕ່ບໍ່ແມ່ນທາງກາຍ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ຕ້ອງອາບັດບາງສ່ວນທີ່ເປັນອະກຸສົນທາງວາຈາ ເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍພິຈາລະນາແລ້ວວ່າກ່າວພິກຂຸນັ້ນແນວນີ້ວ່າ "ທ່ານນັ້ນແລເປັນຜູ້ຕ້ອງອາບັດບາງສ່ວນທີ່ເປັນອະກຸສົນທາງວາຈາ ຈະເປັນການດີບໍ ທີ່ທ່ານຈະລະວະຈີທຸດຈະຣິດ ພ່ຳເພັງວະຈີສຸດຈະຣິດ" ພິກຂຸນັ້ນຖືກເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍພິຈາລະນາແລ້ວວ່າກ່າວຢູ່ ຈຶ່ງລະວະຈີທຸດຈະຣິດ ພ່ຳເພັງວະຈີສຸດຈະຣິດ

ນີ້ຮຽກວ່າ ທຳທີ່ບຸກຄົນເພິ່ງລະທາງວາຈາ ແຕ່ບໍ່ແມ່ນທາງກາຍ

ທຳທີ່ບຸກຄົນເພິ່ງລະທາງກາຍກໍບໍ່ໄດ້ ທາງວາຈາກໍບໍ່ໄດ້ ແຕ່ເພິ່ງເຫັນແຈ້ງດ້ວຍປັນຍາແລ້ວຈຶ່ງລະໄດ້ ເປັນແນວໃດ?

ຄື ໂລພະ (ຄວາມໂລບ) ທີ່ບຸກຄົນເພິ່ງລະທາງກາຍກໍບໍ່ໄດ້ ທາງວາຈາກໍບໍ່ໄດ້ ແຕ່ເພິ່ງເຫັນແຈ້ງດ້ວຍປັນຍາແລ້ວຈຶ່ງລະໄດ້ ໂທສະ (ຄວາມປະທຸດສະຮ້າຍ) ຯລຯ ໂມຫະ (ຄວາມຫຼົງ) ຯລຯ ໂກທະ(ຄວາມໂກດ) ຯລຯ ອຸປະນາຫະ (ຄວາມຜູກໂກດ) ຯລຯ ມັກຂະ (ຄວາມລົບຫຼູ່) ຯລຯ ປະລາສະ (ຄວາມຕີໂຕສະເໝີ) ຯລຯ ມັດສະຣິຍະ (ຄວາມຂີ້ຖີ່) ທີ່ບຸກຄົນເພິ່ງລະທາງກາຍກໍບໍ່ໄດ້ ທາງວາຈາກໍບໍ່ໄດ້ ແຕ່ເພິ່ງເຫັນແຈ້ງດ້ວຍປັນຍາແລ້ວຈຶ່ງລະໄດ້

ຄວາມຣິດສະຫຍາອັນຊົ່ວທີ່ບຸກຄົນເພິ່ງລະທາງກາຍກໍບໍ່ໄດ້ ທາງວາຈາກໍບໍ່ໄດ້ ແຕ່ເພິ່ງເຫັນແຈ້ງດ້ວຍປັນຍາແລ້ວຈຶ່ງລະໄດ້

ຄວາມຣິດສະຫຍາອັນຊົ່ວ ເປັນແນວໃດ?

ຄື ເມື່ອຄະຫະບໍດີ ຫຼື ບຸດຂອງຄະຫະບໍດີໃນໂລກນີ້ສົມບູນດ້ວຍຊັບ ເຂົ້າເປືອກ ເງິນ ຫຼື ຄຳ ຂ້າທາດ ຫຼື ຜູ້ເຂົ້າໄປອາໄສຂອງຄະຫະບໍດີ ຫຼື ບຸດຂອງຄະຫະບໍດີຄົນໃດຄົນໜຶ່ງ ມີຄວາມຄິດແນວນີ້ວ່າ “ເປັນຫຍັງນໍ ຄະຫະບໍດີ ຫຼື ບຸດຂອງຄະຫະບໍດີນີ້ ຈຶ່ງຈະບໍ່ສົມບູນດ້ວຍ ຊັບ ເຂົ້າເປືອກ ເງິນ ຫຼື ຄຳ”

ອັນໜຶ່ງ ເມື່ອສະມະນະຫຼືພາມຜູ້ໃດຜູ້ໜຶ່ງເປັນຜູ້ໄດ້ຈີວອນ ບິນທະບາດ ເສນາສະນະ ແລະ ຄິລານະປັດໄຈເພສັດຊະບໍຣິຂານ ມີຄວາມຄິດແນວນີ້ວ່າ “ເປັນຫຍັງນໍ ທ່ານຜູ້ນີ້ຈຶ່ງຈະບໍ່ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ”

ນີ້ຮຽກວ່າ ຄວາມຣິດສະຫຍາອັນຊົ່ວ

ຄວາມຣິດສະຫຍາອັນຊົ່ວທີ່ບຸກຄົນເພິ່ງລະທາງກາຍກໍບໍ່ໄດ້ ທາງວາຈາກໍບໍ່ໄດ້ ແຕ່ເພິ່ງເຫັນແຈ້ງດ້ວຍປັນຍາແລ້ວຈຶ່ງລະໄດ້

(ຄວາມປາຖະໜາອັນຊົ່ວທີ່ບຸກຄົນເພິ່ງລະທາງກາຍກໍບໍ່ໄດ້ ທາງວາຈາກໍບໍ່ໄດ້ ແຕ່ເພິ່ງເຫັນແຈ້ງດ້ວຍປັນຍາແລ້ວຈຶ່ງລະໄດ້)

ຄວາມປາຖະໜາອັນຊົ່ວ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ບໍ່ມີສັດທາ ປາຖະໜາວ່າ “ຄົນທັງຫຼາຍເພິ່ງຮູ້ຈັກເຮົາວ່າ “ເປັນຜູ້ມີສັດທາ” ເປັນຜູ້ທຸສິນ ປາຖະໜາວ່າ “ຄົນທັງຫຼາຍເພິ່ງຮູ້ຈັກເຮົາວ່າ “ເປັນຜູ້ມີສິນ” ເປັນຜູ້ມີສຸຕະໜ້ອຍ ປາຖະໜາວ່າ “ຄົນທັງຫຼາຍເພິ່ງຮູ້ຈັກເຮົາວ່າ “ເປັນພະຫູສູດ” ເປັນຜູ້ຍິນດີ

ການຄຸກຄີດ້ວຍໝູ່ ປາຖະໜາວ່າ "ຄົນທັງຫຼາຍເພິ່ງຮູ້ຈັກເຮົາວ່າ "ເປັນຜູ້ມັກສະຫງັດ" ເປັນຜູ້ຂີ້ຄ້ານ ປາຖະໜາວ່າ "ຄົນທັງຫຼາຍເພິ່ງຮູ້ຈັກເຮົາວ່າ "ເປັນຜູ້ພາຣົບຄວາມພຽນ" ເປັນຜູ້ຫຼົງລືມສະຕິ ປາຖະໜາວ່າ "ຄົນທັງຫຼາຍເພິ່ງຮູ້ຈັກເຮົາວ່າ "ເປັນຜູ້ມີສະຕິຕັ້ງໝັ້ນ" ເປັນຜູ້ມີປັນຍາຊາມ ປາຖະໜາວ່າ "ຄົນທັງຫຼາຍເພິ່ງຮູ້ຈັກເຮົາວ່າ "ເປັນຜູ້ມີປັນຍາ" ບໍ່ເປັນພຣະຂີນາສົບ ປາດຖະໜາວ່າ "ຄົນທັງຫຼາຍເພິ່ງຮູ້ຈັກເຮົາວ່າ "ເປັນພຣະຂີນາສົບ"

ນີ້ຮຽກວ່າ ຄວາມປາຖະໜາອັນຊົ່ວ

(ຄວາມປາຖະໜາອັນຊົ່ວ ທີ່ບຸກຄົນເພິ່ງລະທາງກາຍກໍບໍ່ໄດ້ ທາງວາຈາກໍບໍ່ໄດ້ ແຕ່ເພິ່ງເຫັນແຈ້ງດ້ວຍປັນຍາແລ້ວຈຶ່ງລະໄດ້)

ຫາກໂລພະເຂົ້າຄອບງຳພິກຂຸນັ້ນໄດ້ ຯລຯ ຫາກໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວເຂົ້າ ຄອບງຳພິກຂຸນັ້ນໄດ້ ຄົນກໍຈະເພິ່ງຮູ້ພິກຂຸນັ້ນແນວນີ້ວ່າ "ທ່ານຜູ້ນີ້ຍ່ອມບໍ່ຮູ້ແຈ້ງແນວທີ່ໂລພະຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ໂລພະຈຶ່ງເຂົ້າຄອບງຳທ່ານຜູ້ນີ້ບໍ່ໄດ້ ທ່ານຜູ້ນີ້ຍ່ອມບໍ່ຮູ້ແຈ້ງແນວທີ່ໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ຄວາມປາຖະໜາອັນຊົ່ວຈຶ່ງເຂົ້າຄອບງຳທ່ານຜູ້ນີ້ໄດ້

ຫາກໂລພະເຂົ້າຄອບງຳພິກຂຸນັ້ນບໍ່ໄດ້ ຯລຯ ຫາກໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວເຂົ້າຄອບງຳພິກຂຸນັ້ນບໍ່ໄດ້ ຄົນກໍຈະເພິ່ງຮູ້ພິກຂຸນັ້ນແນວນີ້ວ່າ "ທ່ານຜູ້ນີ້ຍ່ອມຮູ້ແຈ້ງແນວທີ່ໂລພະຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ໂລພະຈຶ່ງເຂົ້າຄອບງຳທ່ານຜູ້ນີ້ບໍ່ໄດ້ ທ່ານຜູ້ນີ້ຍ່ອມຮູ້ແຈ້ງແນວທີ່ໂທສະ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາ ອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ຄວາມປາຖະໜາອັນຊົ່ວຈຶ່ງເຂົ້າຄອບງຳທ່ານຜູ້ນີ້ບໍ່ໄດ້" ແນວນີ້ແລ

**ກາຍະສູດທີ ໑ ຈົບ**

# ໘. ມະຫາຈຸນທະສູດ

## ວ່າດ້ວຍພຣະມະຫາຈຸນທະ

[໔໘] ສະໄໝໜຶ່ງ ທ່ານພຣະມະຫາຈຸນທະຢູ່ທີ່ສະຫະຊາຕິວັນ ແຄວ້ນເຈຕີ ໃນບ່ອນນັ້ນແລ ທ່ານພຣະມະຫາຈຸນທະໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະມະຫາຈຸນທະຈຶ່ງໄດ້ກ່າວເລື້ອງນີ້ ວ່າ

ຜູ້ມີອາຍຸທັງຫຼາຍ ພິກຂຸເມື່ອກ່າວອວດຄວາມຮູ້ ຍ່ອມກ່າວວ່າ "ເຮົາຮູ້ທຳນີ້ ເຮົາເຫັນທຳນີ້" ຫາກໂລພະເຂົ້າຄອບງຳພິກຂຸນັ້ນໄດ້ ຯລຯ ຫາກໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຄວາມປາຖະໜາອັນຊົ່ວເຂົ້າຄອບງຳພິກຂຸນັ້ນໄດ້ ຄົນກໍຈະເພິ່ງຮູ້ພິກຂຸນັ້ນແນວນີ້ວ່າ "ທ່ານຜູ້ນີ້ຍ່ອມບໍ່ຮູ້ແຈ້ງແນວທີ່ ໂລພະຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ໂລພະຈຶ່ງເຂົ້າຄອບງຳທ່ານຜູ້ນີ້ໄດ້ ທ່ານຜູ້ນີ້ຍ່ອມບໍ່ຮູ້ແຈ້ງແນວທີ່ໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ຄວາມປາຖະໜາອັນຊົ່ວຈຶ່ງເຂົ້າຄອບງຳທ່ານຜູ້ນີ້ໄດ້"

ພິກຂຸ ເມື່ອກ່າວອວດການຈະເລີນ ຍ່ອມກ່າວວ່າ "ເຮົາເປັນຜູ້ມີກາຍອັນຈະເລີນແລ້ວ ມີສີນອັນຈະເລີນແລ້ວ ມີຈິດອັນຈະເລີນແລ້ວ ມີປັນຍາອັນຈະເລີນແລ້ວ" ຫາກໂລພະເຂົ້າຄອບງຳພິກຂຸນັ້ນໄດ້ ຯລຯ ຫາກໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວເຂົ້າຄອບງຳພິກຂຸນັ້ນໄດ້ ຄົນກໍຈະເພິ່ງຮູ້ພິກຂຸນັ້ນ ແນວນີ້ວ່າ "ທ່ານຜູ້ນີ້ຍ່ອມບໍ່ຮູ້ແຈ້ງແນວທີ່ໂລພະຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ໂລພະຈຶ່ງເຂົ້າຄອບງຳທ່ານຜູ້ນີ້ໄດ້ ທ່ານຜູ້ນີ້ຍ່ອມບໍ່ຮູ້ແຈ້ງແນວທີ່ໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ຄວາມປາຖະໜາອັນຊົ່ວຈຶ່ງເຂົ້າຄອບງຳທ່ານຜູ້ນີ້ໄດ້"

ພິກຂຸ ເມື່ອກ່າວອວດຄວາມຮູ້ແລະການຈະເລີນ ຍ່ອມກ່າວວ່າ "ເຮົາຮູ້ທຳນີ້ ເຮົາເຫັນທຳນີ້ ເຮົາເປັນຜູ້ມີກາຍອັນຈະເລີນແລ້ວ ມີສີນອັນຈະເລີນແລ້ວ ມີຈິດອັນຈະເລີນແລ້ວ ມີປັນຍາອັນຈະເລີນແລ້ວ" ຫາກໂລພະເຂົ້າຄອບງຳພິກຂຸນັ້ນໄດ້ ຯລຯ ຫາກໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວເຂົ້າຄອບງຳພິກຂຸນັ້ນໄດ້ ຄົນກໍຈະເພິ່ງຮູ້ພິກຂຸນັ້ນ

ແບບນີ້ວ່າ "ທ່ານຜູ້ນີ້ຍ່ອມບໍ່ຮູ້ແຈ້ງແນວທີ່ໂລພະຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ໂລພະຈຶ່ງເຂົ້າຄອບງຳທ່ານຜູ້ນີ້ໄດ້ ທ່ານຜູ້ນີ້ຍ່ອມບໍ່ຮູ້ແຈ້ງແນວທີ່ໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ຄວາມປາຖະໜາອັນຊົ່ວຈຶ່ງເຂົ້າຄອບງຳທ່ານຜູ້ນີ້ໄດ້"

ປຽບຄື ບຸຣຸດເປັນຄົນຍາກຈົນແຕ່ກ່າວອວດວ່າຮັ່ງມີ ເປັນຄົນບໍ່ມີຊັບແຕ່ກ່າວອວດວ່າມີຊັບ ເປັນຄົນບໍ່ມີໂພຄະແຕ່ກ່າວອວດວ່າມີໂພຄະ ເຂົາເມື່ອມີກິດຈຳເປັນຕ້ອງໃຊ້ຊັບຈັກຢ່າງເກີດຂຶ້ນກໍບໍ່ອາດນຳຊັບ ເຂົ້າເປືອກ ເງິນ ຫຼື ຄຳອອກໃຊ້ຈ່າຍໄດ້ ຄົນທັງຫຼາຍກໍຈະເພິ່ງຮູ້ຈັກເຂົາແນວນີ້ວ່າ "ທ່ານຜູ້ນີ້ເປັນຄົນຍາກຈົນແຕ່ກ່າວອວດວ່າຮັ່ງມີ ເປັນຄົນບໍ່ມີຊັບແຕ່ກ່າວອວດວ່າມີຊັບ ເປັນຄົນບໍ່ມີໂພຄະແຕ່ກ່າວອວດວ່າມີໂພຄະ" ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນທ່ານຜູ້ນີ້ເມື່ອມີກິດຈຳເປັນຕ້ອງໃຊ້ຊັບຈັກຢ່າງເກີດຂຶ້ນກໍບໍ່ອາດນຳຊັບ ເຂົ້າເປືອກ ເງິນ ຫຼື ຄຳອອກໃຊ້ຈ່າຍໄດ້ສັນໃດ

ພິກຂຸ ກໍຄືກັນສັນນັ້ນ ເມື່ອກ່າວອວດຄວາມຮູ້ແລະການຈະເລີນ ຍ່ອມກ່າວວ່າ "ເຮົາຮູ້ທຳນີ້ ເຮົາເຫັນທຳນີ້ ເຮົາເປັນຜູ້ມີກາຍອັນຈະເລີນແລ້ວ ມີສິນອັນຈະເລີນແລ້ວ ມີຈິດອັນຈະເລີນແລ້ວ ມີປັນຍາອັນຈະເລີນແລ້ວ" ຫາກໂລພະເຂົ້າຄອບງຳພິກຂຸນັ້ນໄດ້ ຯລຯ ຫາກໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາ ອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວເຂົ້າຄອບງຳພິກຂຸນັ້ນໄດ້ ຄົນກໍຈະເພິ່ງຮູ້ພິກຂຸນັ້ນແນວນີ້ວ່າ "ທ່ານຜູ້ນີ້ ຍ່ອມບໍ່ຮູ້ແຈ້ງແນວທີ່ໂລພະຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ໂລພະຈຶ່ງເຂົ້າຄອບງຳທ່ານຜູ້ນີ້ໄດ້ ທ່ານຜູ້ນີ້ຍ່ອມບໍ່ຮູ້ແຈ້ງແນວທີ່ໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວຈະບໍ່ເກີດ ແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ຄວາມປາຖະໜາອັນຊົ່ວ ຈຶ່ງເຂົ້າຄອບງຳທ່ານຜູ້ນີ້ໄດ້"

ພິກຂຸ ເມື່ອກ່າວອວດຄວາມຮູ້ ຍ່ອມກ່າວວ່າ "ເຮົາຮູ້ທຳນີ້ ເຮົາເຫັນທຳນີ້" ຫາກໂລພະເຂົ້າຄອບງຳພິກຂຸນັ້ນບໍ່ໄດ້ ຯລຯ ຫາກໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວເຂົ້າຄອບງຳພິກຂຸນັ້ນບໍ່ໄດ້ ຄົນກໍຈະເພິ່ງຮູ້ພິກຂຸນັ້ນແນວນີ້ວ່າ "ທ່ານຜູ້ນີ້ຍ່ອມຮູ້ແຈ້ງແນວທີ່ໂລພະຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ໂລພະຈຶ່ງເຂົ້າຄອບງຳທ່ານຜູ້ນີ້ບໍ່ໄດ້ ທ່ານຜູ້ນີ້ຍ່ອມຮູ້ແຈ້ງແນວທີ່ ໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຯລຯ ຄວາມ

ປາຖະໜາອັນຊົ່ວຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ຄວາມປາຖະໜາອັນຊົ່ວຈຶ່ງເຂົ້າຄອບງຳທ່ານຜູ້ນີ້ບໍ່ໄດ້"

ພິກຂຸ ເມື່ອກ່າວອວດການຈະເລີນ ຍ່ອມກ່າວວ່າ "ເຮົາເປັນຜູ້ມີກາຍອັນຈະເລີນແລ້ວ ມີສີນອັນຈະເລີນແລ້ວ ມີຈິດອັນຈະເລີນແລ້ວ ມີປັນຍາອັນຈະເລີນແລ້ວ" ຫາກໂລພະເຂົ້າຄອບງຳພິກຂຸນັ້ນບໍ່ໄດ້ ຯລຯ ຫາກໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວເຂົ້າຄອບງຳພິກຂຸນັ້ນບໍ່ໄດ້ ຄົນກໍຈະເພິ່ງຮູ້ພິກຂຸນັ້ນແນວນີ້ວ່າ "ທ່ານຜູ້ນີ້ຍ່ອມຮູ້ແຈ້ງແນວທີ່ໂລພະຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ໂລພະຈຶ່ງເຂົ້າຄອບງຳທ່ານຜູ້ນີ້ບໍ່ໄດ້ ທ່ານຜູ້ນີ້ຍ່ອມຮູ້ແຈ້ງແນວທີ່ໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ຄວາມປາຖະໜາອັນຊົ່ວຈຶ່ງເຂົ້າຄອບງຳທ່ານຜູ້ນີ້ບໍ່ໄດ້"

ພິກຂຸ ເມື່ອກ່າວອວດຄວາມຮູ້ ແລະການຈະເລີນ ຍ່ອມກ່າວວ່າ "ເຮົາຮູ້ທຳນີ້ ເຮົາເຫັນທຳນີ້ ເຮົາເປັນຜູ້ມີກາຍອັນຈະເລີນແລ້ວ ມີສີນອັນຈະເລີນແລ້ວ ມີຈິດອັນຈະເລີນແລ້ວ ມີປັນຍາອັນຈະເລີນແລ້ວ" ຫາກໂລພະເຂົ້າຄອບງຳພິກຂຸນັ້ນບໍ່ໄດ້ ຯລຯ ຫາກໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວເຂົ້າຄອບງຳພິກຂຸນັ້ນບໍ່ໄດ້ ຄົນກໍຈະເພິ່ງຮູ້ພິກຂຸນັ້ນແນວນີ້ວ່າ "ທ່ານຜູ້ນີ້ຍ່ອມ ຮູ້ແຈ້ງແນວທີ່ໂລພະຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ໂລພະຈຶ່ງເຂົ້າຄອບງຳທ່ານຜູ້ນີ້ບໍ່ໄດ້ ທ່ານຜູ້ນີ້ຍ່ອມຮູ້ແຈ້ງແນວທີ່ໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ຄວາມປາຖະໜາອັນຊົ່ວ ຈຶ່ງເຂົ້າຄອບງຳທ່ານຜູ້ນີ້ບໍ່ໄດ້"

ປຽບຄື ບຸຣຸດເປັນຄົນຮັ່ງມີຈິງ ກ່າວອວດວ່າຮັ່ງມີ ເປັນຄົນມີຊັບຈິງ ກ່າວອວດວ່າມີຊັບເປັນຄົນມີໂພຄະຈິງ ກ່າວອວດວ່າມີໂພຄະ ເຂົາເມື່ອມີກິດຈຳເປັນຕ້ອງໃຊ້ຊັບຈັກຢ່າງເກີດຂຶ້ນກໍອາດນຳຊັບ ເຂົ້າເປືອກ ເງິນ ຫຼືຄຳອອກໃຊ້ຈ່າຍໄດ້ ຄົນທັງຫຼາຍເພິ່ງຮູ້ຈັກເຂົາແນວນີ້ວ່າ "ທ່ານຜູ້ນີ້ເປັນຄົນຮັ່ງມີຈິງ ຈຶ່ງກ່າວອວດວ່າຮັ່ງມີ ເປັນຄົນມີຊັບຈິງ ຈຶ່ງກ່າວອວດວ່າມີຊັບ ເປັນຄົນມີໂພຄະຈິງ ຈຶ່ງກ່າວອວດວ່າມີໂພຄະ ຂໍ້ນັ້ນຍ້ອນເຫດໃດ ຍ້ອນທ່ານຜູ້ນີ້ເມື່ອມີກິດຈຳເປັນຕ້ອງໃຊ້ຊັບຈັກຢ່າງເກີດຂຶ້ນກໍສາມາດນຳຊັບ ເຂົ້າເປືອກ ເງິນ ຫຼືຄຳອອກໃຊ້ຈ່າຍໄດ້" ສັນໃດ

ຜູ້ມີອາຍຸທັງຫຼາຍ ພິກຂຸກໍຄືກັນສັນນັ້ນ ເມື່ອກ່າວອວດຄວາມຮູ້ແລະການຈະເລີນ ຍ່ອມກ່າວວ່າ "ເຮົາຮູ້ທຳນີ້ ເຮົາເຫັນທຳນີ້ ເຮົາເປັນຜູ້ມີກາຍອັນຈະເລີນແລ້ວ ມີສີນອັນ ຈະເລີນແລ້ວ ມີຈິດອັນຈະເລີນແລ້ວ ມີປັນຍາອັນຈະເລີນແລ້ວ" ຫາກໂລພະເຂົ້າຄອບງຳພິກຂຸ ນັ້ນບໍ່ໄດ້ ຯລຯ ຫາກໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວເຂົ້າຄອບງຳພິກຂຸນັ້ນບໍ່ໄດ້ ຄົນກໍຈະເພິ່ງຮູ້ພິກຂຸນັ້ນແນວນີ້ວ່າ "ທ່ານຜູ້ນີ້ຍ່ອມຮູ້ແຈ້ງແນວທີ່ໂລພະຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ໂລພະຈຶ່ງເຂົ້າຄອບງຳທ່ານຜູ້ນີ້ບໍ່ໄດ້ ທ່ານຜູ້ນີ້ຍ່ອມຮູ້ແຈ້ງແນວທີ່ໂທສະ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ມັດສະຣິຍະ ຯລຯ ຄວາມຣິດສະຫຍາອັນຊົ່ວ ຯລຯ ຄວາມປາຖະໜາອັນຊົ່ວຈະບໍ່ເກີດແກ່ຜູ້ຮູ້ແຈ້ງ ຍ້ອນແນວນັ້ນ ຄວາມປາຖະໜາອັນຊົ່ວ ຈຶ່ງເຂົ້າຄອບງຳທ່ານຜູ້ນີ້ບໍ່ໄດ້" ແນວນີ້ແລ

**ມະຫາຈຸນທະສູດທີ ໔ ຈົບ**

## ໕. ກະສິນສູດ

## ວ່າດ້ວຍບໍ່ເກີດແຫ່ງທຳທີ່ມີກະສິນເປັນອາລົມ[1]

[໔໕] ພິກຂຸທັງຫຼາຍ ບໍ່ເກີດແຫ່ງທຳທີ່ມີກະສິນເປັນອາລົມ ໑໐ ປະການນີ້

ບໍ່ເກີດແຫ່ງທຳທີ່ມີກະສິນເປັນອາລົມ ໑໐ ປະການ ອັນໃດແດ່ ຄື

໑. ບຸກຄົນໜຶ່ງຍ່ອມຮູ້ແຈ້ງ ປະຖະວີກະສິນ (ກະສິນຄືດິນ) ເບື້ອງເທິງ ເບື້ອງຕ່ຳເບື້ອງຂວາງ ບໍ່ມີສອງ ບໍ່ມີປະມານ
໒. ບຸກຄົນໜຶ່ງຍ່ອມຮູ້ແຈ້ງ ອາໂປກະສິນ (ກະສິນຄືນ້ຳ) ຯລຯ
໓. ບຸກຄົນໜຶ່ງຍ່ອມຮູ້ແຈ້ງ ເຕໂຊກະສິນ (ກະສິນຄືໄຟ) ຯລຯ
໔. ບຸກຄົນໜຶ່ງຍ່ອມຮູ້ແຈ້ງ ວາໂຍກະສິນ (ກະສິນຄືລົມ) ຯລຯ
໕. ບຸກຄົນໜຶ່ງຍ່ອມຮູ້ແຈ້ງ ນີລະກະສິນ (ກະສິນຄືສີຂຽວ) ຯລຯ
໖. ບຸກຄົນໜຶ່ງຍ່ອມຮູ້ແຈ້ງ ປີຕະກະສິນ (ກະສິນຄືສີເຫຼືອງ) ຯລຯ
໗. ບຸກຄົນໜຶ່ງຍ່ອມຮູ້ແຈ້ງ ໂລຫິຕະກະສິນ (ກະສິນຄືສີແດງ) ຯລຯ
໘. ບຸກຄົນໜຶ່ງຍ່ອມຮູ້ແຈ້ງ ໂອທາຕະກະສິນ (ກະສິນຄືສີຂາວ) ຯລຯ
໙. ບຸກຄົນໜຶ່ງຍ່ອມຮູ້ແຈ້ງ ອາກາສກະສິນ (ກະສິນຄືທີ່ວ່າງເປົ່າ) ຯລຯ
໑໐. ບຸກຄົນໜຶ່ງຍ່ອມຮູ້ແຈ້ງ ວິນຍານກະສິນ (ກະສິນຄືວິນຍານ) ເບື້ອງເທິງ ເບື້ອງຕ່ຳ ເບື້ອງຂວາງ ບໍ່ມີສອງ ບໍ່ມີປະມານ

ພິກຂຸທັງຫຼາຍ ບໍ່ເກີດແຫ່ງທຳທີ່ມີກະສິນເປັນອາລົມ ໑໐ ປະການ ນີ້ແລ

**ກະສິນສູດທີ ໕ ຈົບ**

# ໖. ກາລີສູດ

## ວ່າດ້ວຍອຸປາສິກາຊື່ກາລີ

[໔໖] ສະໄໝໜຶ່ງ ທ່ານພຣະມະຫາກັດຈານະຢູ່ ປະວັດຕະບັນພົດ ເຂດນະຄອນກຸນຣະຄະຣະ ແຄວ້ນອະວັນຕີຊົນນະບົດ ຄັ້ງນັ້ນແລ ອຸປາສິກາຊື່ກາລີຊາວນະຄອນກຸນຣະຄະຣະ ເຂົ້າໄປຫາທ່ານພຣະ ມະຫາກັດຈານະຮອດບ່ອນຢູ່ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະມະຫາກັດຈານະດັ່ງນີ້ວ່າ ທ່ານຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດພຣະດຳຣັດນີ້ໄວ້ໃນກຸມາຣີບັນຫາ[໑]ວ່າ

ການບັນລຸປະໂຫຍດ[໒] ເປັນຄວາມສະງົບແຫ່ງຫະໄທ
ເຮົາຊະນະເສນາ[໓] ທີ່ມີຮູບເປັນທີ່ຮັກເປັນທີ່ຊື່ນໃຈແລ້ວ
ເປັນຜູ້ດຽວເພ່ງຢູ່ ໄດ້ຕັດສະຣູ້ຄວາມສຸກໂດຍລຳດັບ
ຍ້ອນແນວນັ້ນ ເຮົາຈຶ່ງບໍ່ຕ້ອງອ້າງບຸກຄົນເປັນພະຍານ
ການອ້າງອີງໃຜ ໆ ເປັນພະຍານຈຶ່ງບໍ່ມີສຳລັບເຮົາ

ທ່ານຜູ້ຈະເລີນ ເນື້ອຄວາມແຫ່ງພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ນີ້ຈະເພິ່ງເຫັນໄດ້ໂດຍພິດສະດານ ແນວໃດນໍ

ທ່ານພຣະມະຫາກັດຈານະຕອບວ່າ ນາງ ສະມະນະພາມພວກໜຶ່ງເຮັດປະໂຫຍດຊັ້ນຍອດ ຄືສະມາບັດ[໔]ທີ່ມີປະຖະວີກະສິນເປັນອາລົມໃຫ້ເກີດແລ້ວ ແຕ່ພຣະຜູ້ມີພຣະພາກເຈົ້າໄດ້ຊົງຮູ້ປະໂຫຍດຊັ້ນຍອດ ຄືສະມາບັດທີ່ມີປະຖະວີກະສິນເປັນອາລົມນັ້ນແລ້ວໄດ້ຊົງເຫັນເບື້ອງຕົ້ນ[໕]ຯລຯ ໂທດ[໖]ຯລຯ ທຳເປັນເຄື່ອງສະລັດອອກ[໗]ຯລຯ ມັກຄາມັກຄະຍານທັດສະນະ[໘] ຍ້ອນເຫດທີ່ຊົງເຫັນເບື້ອງຕົ້ນ ໂທດ ທຳເປັນເຄື່ອງສະລັດອອກ ແລະມັກຄາມັກຄະຍານທັດສະນະ ການບັນລຸປະໂຫຍດຈຶ່ງເປັນອັນພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າເປັນຄວາມສະງົບແຫ່ງຫະໄທ

ສະມະນະພາມພວກໜຶ່ງເຮັດປະໂຫຍດຊັ້ນຍອດ ຄືສະມາບັດທີ່ມີອາໂປກະສິນເປັນອາລົມ ຯລຯ ເຮັດປະໂຫຍດຊັ້ນຍອດ ຄືສະມາບັດທີ່ມີເຕໂຊກະສິນເປັນອາລົມ ຯລຯ ເຮັດປະໂຫຍດ ຊັ້ນຍອດ ຄືສະມາບັດທີ່ມີວາໂຍກະສິນເປັນອາລົມ ຯລຯ ເຮັດປະໂຫຍດຊັ້ນຍອດ ຄືສະມາບັດທີ່ມີນີລະກະສິນເປັນອາລົມ ຯລຯ ເຮັດປະໂຍດເຊັ້ນຍອດ ຄືສະມາບັດທີ່ມີປີຕະກະສິນເປັນອາລົມ ຯລຯ ເຮັດປະໂຫຍດຊັ້ນຍອດ ຄືສະມາບັດທີ່ມີໂລຫິຕະກະສິນເປັນອາລົມ ຯລຯ

ເຮັດປະໂຫຍດຊັ້ນຍອດ ຄື ສະມາບັດທີ່ມີໂອທາຕະກະສິນເປັນອາລົມ ຯລຯ ເຮັດປະໂຫຍດຊັ້ນຍອດ ຄືສະມາບັດທີ່ມີອາກາສກະສິນເປັນອາລົມ ຯລຯ ສະມະນະພາມພວກໜຶ່ງເຮັດປະໂຫຍດຊັ້ນຍອດ ຄືສະມາບັດທີ່ມີວິນຍານກະສິນເປັນອາລົມໃຫ້ເກີດແລ້ວ ແຕ່ພຣະຜູ້ມີພຣະພາກເຈົ້າໄດ້ຊົງຮູ້ປະໂຫຍດຊັ້ນຍອດ ຄືສະມາບັດທີ່ມີວິນຍານກະສິນເປັນອາລົມນັ້ນແລ້ວໄດ້ຊົງເຫັນເບື້ອງຕົ້ນ ຯລຯ ໂທດ ຯລຯ ທໍາ ເປັນເຄື່ອງສະລັດອອກ ຯລຯ ມັກຄາມັກຄະຍານທັດສະນະ ຍ້ອນເຫດທີ່ຊົງເຫັນເບື້ອງຕົ້ນ ໂທດ ທໍາເປັນເຄື່ອງສະລັດອອກ ແລະມັກຄາມັກຄະຍານທັດສະນະ ການບັນລຸປະໂຫຍດເປັນອັນພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າເປັນຄວາມສະງົບແຫ່ງຫະໄທ

ເຫດດັ່ງນີ້ແລ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດພຣະດໍາຣັດໄວ້ໃນກຸມາຣີບັນຫາວ່າ

ການບັນລຸປະໂຫຍດເປັນຄວາມສະງົບແຫ່ງຫະໄທ
ເຮົາຊະນະເສນາທີ່ມີຮູບເປັນທີ່ຮັກເປັນທີ່ຊື່ນໃຈແລ້ວ
ເປັນຜູ້ດຽວເພ່ງຢູ່ ໄດ້ຕັດສະຮູ້ຄວາມສຸກໂດຍລໍາດັບ
ຍ້ອນແນວນັ້ນ ເຮົາຈຶ່ງບໍ່ຕ້ອງອ້າງບຸກຄົນເປັນພະຍານ
ການອ້າງອີງໃຜ ໆ ເປັນພະຍານຈຶ່ງບໍ່ມີສໍາລັບເຮົາ

ນາງ ເນື້ອຄວາມແຫ່ງພຣະດໍາຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ນີ້ ເພິ່ງເຫັນໄດ້ໂດຍພິດສະດານແນວນີ້ແລ

**ກາລີສູດທີ ໖ ຈົບ**

## ໗. ປະຖົມມະຫາປັນຫາສູດ

## ວ່າດ້ວຍບັນຫາໃຫຍ່ ສູດທີ ໑

[໔໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ເມື່ອໃນເວລາເຊົ້າ ພິກຂຸຫຼາຍອົງຄອງອັນຕະຣະວາສົກ ຖືບາດຈີວອນເຂົ້າໄປບິນທະບາດໃນນະຄອນສາວັດຖີໄດ້ມີຄວາມຄິດແນວນີ້ວ່າ "ການທ່ຽວໄປບິນທະບາດໃນນະຄອນ ສາວັດຖີຍັງເຊົ້າໂພດ ທາງທີ່ດີ ເຮົາທັງຫຼາຍຄວນຈະເຂົ້າໄປສູ່ອາຮາມຂອງພວກອັນຍະເດຍຣະຖີ ປະຣິພາຊົກ"

ຄັ້ງນັ້ນແລ ພິກຂຸເຫຼົ່ານັ້ນຈຶ່ງເຂົ້າໄປສູ່ອາຮາມຂອງພວກອັນຍະເດຍຣະຖີປະຣິພາຊົກ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພວກອັນຍະເດຍຣະຖີໄດ້ກ່າວກັບພິກຂຸເຫຼົ່ານັ້ນດັ່ງນີ້ວ່າ

"ຜູ້ມີອາຍຸທັງຫຼາຍ ພຣະສະມະນະໂຄດົມສະແດງທຳແກ່ສາວົກທັງຫຼາຍແນວນີ້ວ່າ "ພິກຂຸທັງຫຼາຍ ມາເທີ້ນ ທ່ານທັງຫຼາຍຈົ່ງຮູ້ແຈ້ງທຳທັງປວງເທີ້ນ ເມື່ອຮູ້ແຈ້ງທຳທັງປວງແລ້ວຈົ່ງຢູ່ເທີ້ນ" ຜູ້ມີອາຍຸທັງຫຼາຍ ແມ່ນແຕ່ເຮົາທັງຫຼາຍກໍສະແດງທຳແກ່ສາວົກທັງຫຼາຍແນວນີ້ວ່າ "ຜູ້ມີອາຍຸທັງຫຼາຍ ມາເທີ້ນ ທ່ານທັງຫຼາຍຈົ່ງຮູ້ແຈ້ງທຳທັງປວງເທີ້ນ ເມື່ອຮູ້ແຈ້ງທຳທັງປວງແລ້ວຈົ່ງຢູ່ເທີ້ນ" ຜູ້ມີອາຍຸທັງຫຼາຍ ໃນທຳມະເທດສະໜາຫຼືອະນຸສາສະນີນີ້ ຄື ທຳມະເທດສະໜາຂອງພຣະສະມະນະໂຄດົມກັບທຳມະເທດສະໜາຂອງພວກເຮົາ ຫຼືອະນຸສາສະນີຂອງ ພຣະສະມະນະໂຄດົມກັບອະນຸສາສະນີຂອງພວກເຮົາຈະຜິດແຜກແຕກຕ່າງກັນແນວໃດ"

ພິກຂຸເຫຼົ່ານັ້ນບໍ່ຍິນດີ ບໍ່ຄັດຄ້ານພາສິດຂອງອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ລຸກຈາກອາສະນະຫຼີກໄປດ້ວຍຄິດວ່າ "ເຮົາທັງຫຼາຍຈັກຮູ້ແຈ້ງເນື້ອຄວາມແຫ່ງພາສິດນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ"

ພິກຂຸເຫຼົ່ານັ້ນ ເມື່ອທ່ຽວໄປບິນທະບາດໃນນະຄອນສາວັດຖີ ກັບຈາກບິນທະບາດພາຍຫຼັງສັນອາຫານສຳເລັດແລ້ວ ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ພຣະອົງຜູ້ຈະເລີນ ເມື່ອເຊົ້ານີ້ ຂ້າພຣະອົງທັງຫຼາຍຄອງອັນຕະຣະວາສົກ ຖືບາດຈີວອນເຂົ້າໄປບິນທະບາດໃນນະຄອນສາວັດຖີ ໄດ້ມີຄວາມຄິດແນວນີ້ວ່າ "ການທ່ຽວໄປບິນທະບາດໃນນະຄອນສາວັດຖີຍັງເຊົ້າໂພດ ທາງທີ່ດີ ເຮົາທັງຫຼາຍຄວນຈະເຂົ້າໄປສູ່ອາຣາມຂອງພວກອັນຍະເດຍຣະຖີປະຣິພາຊົກ" ບັດແລ້ວຂ້າພຣະອົງທັງຫຼາຍໄດ້ເຂົ້າໄປສູ່ອາຣາມ ຂອງພວກອັນຍະເດຍຣະຖີປະຣິພາຊົກ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນ ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພວກອັນຍະເດຍຣະຖີປະຣິພາຊົກໄດ້ກ່າວກັບຂ້າພຣະອົງທັງຫຼາຍດັ່ງນີ້ວ່າ "ຜູ້ມີອາຍຸທັງຫຼາຍ ພຣະສະມະນະໂຄດົມສະແດງທຳແກ່ສາວົກທັງຫຼາຍແນວນີ້ວ່າ "ພິກຂຸທັງຫຼາຍ ມາເທີ້ນ ທ່ານທັງຫຼາຍຈົ່ງຮູ້ແຈ້ງທຳທັງປວງເທີ້ນ ເມື່ອຮູ້ແຈ້ງທຳທັງປວງແລ້ວຈົ່ງຢູ່ເທີ້ນ" ຜູ້ມີອາຍຸທັງຫຼາຍ ແມ່ນແຕ່ເຮົາທັງຫຼາຍກໍສະແດງທຳແກ່ສາວົກທັງຫຼາຍແນວນີ້ວ່າ "ຜູ້ມີ ອາຍຸທັງຫຼາຍ ມາເທີ້ນ ທ່ານທັງຫຼາຍຈົ່ງຮູ້ແຈ້ງທຳທັງປວງເທີ້ນ ເມື່ອຮູ້ແຈ້ງທຳທັງປວງແລ້ວຈົ່ງຢູ່ເທີ້ນ" ຜູ້ມີອາຍຸທັງຫຼາຍ ໃນທຳມະເທດສະໜາຫຼືອະນຸສາສະນີນີ້ ຄື ທຳມະເທດສະໜາຂອງພຣະສະມະນະໂຄດົມກັບທຳມະເທດສະໜາຂອງພວກເຮົາ ຫຼືອະນຸສາສະນີຂອງພຣະສະມະນະໂຄດົມ ກັບອະນຸສາສະນີຂອງພວກເຮົາຈະຜິດແຜກແຕກຕ່າງກັນແນວໃດ" ຂ້າແດ່ພຣະອົງຜູ້ຈະເລີນ ຄັ້ງນັ້ນ ຂ້າພຣະອົງທັງຫຼາຍບໍ່ຍິນດີ ບໍ່ຄັດຄ້ານພາສິດຂອງອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ລຸກຈາກອາສະນະຫຼີກໄປດ້ວຍຄິດວ່າ "ເຮົາທັງຫຼາຍຈັກຮູ້ແຈ້ງເນື້ອຄວາມແຫ່ງພາສິດນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ພວກອັນຍະເດຍຣະຖີປະຣິພາຊົກມີວາທະແນວນີ້ ທ່ານທັງຫຼາຍຄວນຖາມແນວນີ້ວ່າ ຜູ້ມີອາຍຸທັງຫຼາຍ ບັນຫາ ໑ ອຸດເທດ ໑ ໄວຍາກອນ ໑ ບັນຫາ ໒ ອຸດເທດ ໒ ໄວຍາກອນ ໒ ບັນຫາ ໓ ອຸດເທດ ໓ ໄວຍາກອນ ໓ ບັນຫາ ໔ ອຸດເທດ ໔ ໄວຍາກອນ ໔ ບັນຫາ ໕ ອຸດເທດ ໕ ໄວຍາກອນ ໕ ບັນຫາ ໖ ອຸດເທດ ໖ ໄວຍາກອນ ໖ ບັນຫາ ໗ ອຸດເທດ ໗ ໄວຍາກອນ ໗ ບັນຫາ ໘ ອຸດເທດ ໘ ໄວຍາກອນ ໘ ບັນຫາ ໙ ອຸດເທດ ໙ ໄວຍາກອນ ໙ ບັນຫາ ໑໐ ອຸດເທດ ໑໐ ໄວຍາກອນ ໑໐ ເປັນ ແນວໃດ ພິກຂຸທັງຫຼາຍ ພວກອັນຍະເດຍຣະຖີປະຣິພາຊົກຖືກຖາມແນວນີ້ແລ້ວ ຈັກບໍ່ສາມາດຕອບໃຫ້ບໍລິບູນໄດ້ ຈັກເຖິງຄວາມລຳບາກຢ່າງຍິ່ງ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພວກອັນຍະເດຍຣະຖີປະຣິພາຊົກຖືກຖາມບັນຫາອັນບໍ່ແມ່ນວິໄສ

ພິກຂຸທັງຫຼາຍ ໃນໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ເຮົາຍັງບໍ່ເຫັນບຸກຄົນທີ່ຈະຍັງຈິດໃຫ້ຍິນດີໄດ້ດ້ວຍການຕອບບັນຫາເຫຼົ່ານີ້ ເວັ້ນຈາກຕະຖາຄົດຫຼືສາວົກຂອງຕະຖາຄົດ ຫຼືຜູ້ທີ່ຟັງຈາກສາວົກຂອງຕະຖາຄົດນີ້

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ “ບັນຫາ ໑ ອຸດເທດ ໑ ໄວຍາກອນ ໑” ຍ້ອນອາໄສອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ພິກຂຸທັງຫຼາຍ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນ ທຳ ໑ ປະການແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ທຳ ໑ ປະການຄື ອັນໃດ ຄື ສັດທັງປວງດຳລົງຢູ່ໄດ້ດ້ວຍອາຫານ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໑ ປະການນີ້ແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ “ບັນຫາ ໑ ອຸດເທດ ໑ ໄວຍາກອນ ໑” ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ “ບັນຫາ ໒ ອຸດເທດ ໒ ໄວຍາກອນ ໒” ຍ້ອນອາໄສອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ພິກຂຸທັງຫຼາຍ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນ ທຳ ໒ ປະການແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ທຳ ໒ ປະການຄື ອັນໃດ ຄື ນາມແລະຮູບ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໒ ປະການ ນີ້ແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ “ບັນຫາ ໒ ອຸດເທດ ໒ ໄວຍາກອນ ໒” ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ບັນຫາ ໓ ອຸດເທດ ໓ ໄວຍາກອນ ໓" ຍ້ອນອາໄສອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ພິກຂຸທັງຫຼາຍ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນ ທຳ ໓ ປະການແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ທຳ ໓ ປະການຄື ອັນໃດ ຄື ເວທະນາ ໓[໑] ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນ ໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໓ ປະການນີ້ແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ບັນຫາ ໓ ອຸດເທດ ໓ ໄວຍາກອນ ໓" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ບັນຫາ ໔ ອຸດເທດ ໔ ໄວຍາກອນ ໔" ຍ້ອນອາໄສອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ພິກຂຸທັງຫຼາຍ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໔ ປະການແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ທຳ ໔ ປະການຄືອັນໃດ ຄື ອາຫານ ໔[໑] ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໔ ປະການນີ້ແລ້ວ ຈຶ່ງເປັນ ຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ບັນຫາ ໔ ອຸດເທດ ໔ ໄວຍາກອນ ໔" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ບັນຫາ ໕ ອຸດເທດ ໕ ໄວຍາກອນ ໕" ຍ້ອນອາໄສ ອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ພິກຂຸທັງຫຼາຍ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍ ກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໕ ປະການແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ທຳ ໕ ປະການຄືອັນໃດ ຄືອຸປາທານຂັນ ໕໔ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໕ ປະການນີ້ແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ບັນຫາ ໕ ອຸດເທດ ໕ ໄວຍາກອນ ໕" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ບັນຫາ ໖ ອຸດເທດ ໖ ໄວຍາກອນ ໖" ຍ້ອນອາໄສອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ພິກຂຸທັງຫຼາຍ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນ ທຳ ໖ ປະການແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ທຳ ໖ ປະການຄື ອັນໃດ ຄື ອາຍະຕະນະພາຍໃນ ໖[໑] ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍ

ຖືກຕ້ອງໃນທຳ ໖ ປະການນີ້ແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ບັນຫາ ໖ ອຸດເທດ ໖ ໄວຍາກອນ ໖" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ບັນຫາ ໗ ອຸດເທດ ໗ ໄວຍາກອນ ໗" ຍ້ອນອາໄສອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ພິກຂຸທັງຫຼາຍ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນ ທຳ ໗ ປະການແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ທຳ ໗ ປະການຄືອັນໃດ ຄື ວິນຍານັດຖິຕິ ໗[໒] ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໗ ປະການນີ້ແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ບັນຫາ ໗ ອຸດເທດ ໗ ໄວຍາກອນ ໗" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ຄຳທີ່ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ບັນຫາ ໘ ອຸດເທດ ໘ ໄວຍາກອນ ໘" ຍ້ອນອາໄສອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ພິກຂຸທັງຫຼາຍ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໘ ປະການແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ທຳ ໘ ປະການຄືອັນໃດ ຄື ໂລກກະທຳ ໘[໓] ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໘ ປະການນີ້ແລ້ວ ຈຶ່ງເປັນ ຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ຍ້ອນອາໄສຄຳທີ່ເຮົາກ່າວວ່າ "ບັນຫາ ໘ ອຸດເທດ ໘ ໄວຍາກອນ ໘" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ບັນຫາ ໙ ອຸດເທດ ໙ ໄວຍາກອນ ໙" ຍ້ອນອາໄສອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ພິກຂຸທັງຫຼາຍ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໙ ປະການແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ທຳ ໙ ປະການຄືອັນໃດ ຄື ສັດຕາວາດ ໙[໑] ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໙ ປະການນີ້ແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ບັນຫາ ໙ ອຸດເທດ ໙ ໄວຍາກອນ ໙" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ບັນຫາ ໑໐ ອຸດເທດ ໑໐ ໄວຍາກອນ ໑໐" ຍ້ອນອາໄສອັນໃດເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ ພິກຂຸທັງຫຼາຍ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດ

ໂດຍຖືກຕ້ອງໃນທຳ ໑໐ ປະການແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ທຳ ໑໐ ປະການຄືອັນໃດ ຄື ອະກຸສົນກຳມະບົດ໌ ໑໐ ປະການ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໑໐ ປະການນີ້ແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ບັນຫາ ໑໐ ອຸດເທດ ໑໐ ໄວຍາກອນ ໑໐" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

**ປະຖົມມະຫາບັນຫາສູດທີ ໗ ຈົບ**

# ໘. ທຸຕິຍະມະຫາປັນຫາສູດ

## ວ່າດ້ວຍບັນຫາໃຫຍ່ ສູດທີ ໘

[໔໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເວລຸວັນ ໃກ້ກະຊັງຄະລະນິຄົມ ຄັ້ງນັ້ນອຸປາສົກຊາວກະຊັງຄະລະຫຼວງຫຼາຍເຂົ້າໄປຫາພິກຂຸນີຊາວກະຊັງຄະລະຮອດບ່ອນຢູ່ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມພິກຂຸນີຊາວເມືອງກະຊັງຄະລະດັ່ງນີ້ວ່າ

"ຂ້າແດ່ ແມ່ເຈົ້າ ພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໃນມະຫາປັນຫາສູດທັງຫຼາຍວ່າ "ບັນຫາ ໑ ອຸດເທດ ໑ ໄວຍາກອນ ໑ ບັນຫາ ໒ ອຸດເທດ ໒ ໄວຍາກອນ ໒ ບັນຫາ ໓ ອຸດເທດ ໓ ໄວຍາກອນ ໓ ບັນຫາ ໔ ອຸດເທດ ໔ ໄວຍາກອນ ໔ ບັນຫາ ໕ ອຸດເທດ ໕ ໄວຍາກອນ ໕ ບັນຫາ ໖ ອຸດເທດ ໖ ໄວຍາກອນ ໖ ບັນຫາ ໗ ອຸດເທດ ໗ ໄວຍາກອນ ໗ ບັນຫາ ໘ ອຸດເທດ ໘ ໄວຍາກອນ ໘ ບັນຫາ ໙ ອຸດເທດ ໙ ໄວຍາກອນ ໙ ບັນຫາ ໑໐ ອຸດເທດ ໑໐ ໄວຍາກອນ ໑໐" ຂ້າແດ່ແມ່ເຈົ້າ ເນື້ອຄວາມແຫ່ງພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຫຍໍ້ນີ້ ຈະເພິ່ງເຫັນໄດ້ໂດຍພິດສະດານແນວໃດນໍ"

ພິກຂຸນີຊາວກະຊັງຄະລະຕອບວ່າ "ຜູ້ມີອາຍຸທັງຫຼາຍ ພຣະດຳຣັດນີ້ ເຮົາໄດ້ສະດັບຮັບມາສະເພາະພຣະພັກຂອງພຣະຜູ້ມີພຣະພາກເຈົ້າກໍເປັນໄປບໍ່ໄດ້ ເຮົາໄດ້ສະດັບຮັບມາສະເພາະໜ້າຂອງ ພິກຂຸທັງຫຼາຍຜູ້ໄດ້ອົບຮົມໃຈກໍເປັນໄປບໍ່ໄດ້ແຕ່ວ່າເນື້ອຄວາມແຫ່ງພຣະດຳຣັດນີ້ຍາກົດແກ່ເຮົາ ແນວໃດ ທ່ານທັງຫຼາຍກໍຈົ່ງຟັງເນື້ອຄວາມແຫ່ງພຣະດຳຣັດນັ້ນແນວນັ້ນ ຈົ່ງໃສ່ໃຈໃຫ້ດີເຮົາຈັກກ່າວ" ພວກອຸປາສົກຊາວເມືອງກະຊັງຄະລະຮັບຄຳຂອງພິກຂຸນີຊາວເມືອງກະຊັງຄະລະແລ້ວ ພິກຂຸນີຊາວເມືອງກະຊັງຄະລະໄດ້ກ່າວດັ່ງນີ້ວ່າ

ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວເຊັ່ນນີ້ແລວ່າ "ບັນຫາ ໑ ອຸດເທດ ໑ ໄວຍາກອນ ໑" ຍ້ອນຊົງອາໄສອັນໃດພຣະອົງຈຶ່ງຕັດໄວ້ເຊັ່ນນັ້ນ ຜູ້ມີອາຍຸທັງຫຼາຍ ພິກຂຸເມື່ອເບື່ອໜ່າຍໂດຍ

ຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໑ ປະການແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ທຳ ໑ ປະການຄືອັນໃດ ຄື ສັດທັງປວງດຳລົງຢູ່ໄດ້ດ້ວຍອາຫານ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໑ ປະການນີ້ແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນ ປັດຈຸບັນ ຍ້ອນຊົງອາໄສພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບັນຫາ ໑ ອຸດເທດ ໑ ໄວຍາກອນ ໑" ພຣະອົງຈຶ່ງຕັດໄວ້ເຊັ່ນນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວເຊັ່ນນີ້ແລວ່າ "ບັນຫາ ໔ ອຸດເທດ ໔ ໄວຍາກອນ ໔" ຍ້ອນຊົງອາໄສອັນໃດພຣະອົງຈຶ່ງຕັດໄວ້ເຊັ່ນນັ້ນ ຜູ້ມີອາຍຸທັງຫຼາຍ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໔ ປະການແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ທຳ ໔ ປະການຄືອັນໃດ ຄື ນາມແລະຮູບ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນ ທຳ ໔ ປະການນີ້ແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ຍ້ອນຊົງອາໄສ ພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບັນຫາ ໔ ອຸດເທດ ໔ ໄວຍາກອນ ໔" ພຣະອົງຈຶ່ງຕັດໄວ້ເຊັ່ນນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວເຊັ່ນນີ້ແລວ່າ "ບັນຫາ ໓ ອຸດເທດ ໓ ໄວຍາກອນ ໓" ຍ້ອນຊົງອາໄສອັນໃດພຣະອົງຈຶ່ງຕັດໄວ້ເຊັ່ນນັ້ນ ຜູ້ມີອາຍຸທັງຫຼາຍ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໓ ປະການແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ທຳ ໓ ປະການຄືອັນໃດ ຄື ເວທະນາ ໓ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໓ ປະການນີ້ແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ຍ້ອນຊົງອາໄສພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດ ໄວ້ວ່າ "ບັນຫາ ໓ ອຸດເທດ ໓ ໄວຍາກອນ ໓" ພຣະອົງຈຶ່ງຕັດໄວ້ເຊັ່ນນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວເຊັ່ນນີ້ແລວ່າ "ບັນຫາ ໔ ອຸດເທດ ໔ ໄວຍາກອນ ໔" ຍ້ອນຊົງອາໄສອັນໃດພຣະອົງຈຶ່ງຕັດໄວ້ເຊັ່ນນັ້ນ ຜູ້ມີອາຍຸທັງຫຼາຍ ພິກຂຸຜູ້ມີຈິດອັນອົບຮົມດີແລ້ວໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໔ ປະການແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ທຳ ໔ ປະການຄືອັນໃດ ຄື ສະຕິປັດຖານ ໔໑ ພິກຂຸຜູ້ມີຈິດອັນອົບຮົມດີແລ້ວໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງ ໃນທຳ ໔ ປະການນີ້ແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນ

ປັດຈຸບັນ ຍ້ອນຊົງອາໄສພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບັນຫາ ໘ ອຸດເທດ ໘ ໄວຍາກອນ ໘" ພຣະອົງຈຶ່ງຕັດໄວ້ເຊັ່ນນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວເຊັ່ນນີ້ແລວ່າ "ບັນຫາ ໕ ອຸດເທດ ໕ ໄວຍາກອນ ໕" ຍ້ອນຊົງອາໄສອັນໃດພຣະອົງຈຶ່ງຕັດໄວ້ເຊັ່ນນັ້ນ ຜູ້ມີອາຍຸທັງຫຼາຍ ພິກຂຸຜູ້ມີຈິດອັນອົບຮົມດີແລ້ວໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໕ ປະການແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ທຳ ໕ ປະການຄືອັນໃດ ຄື ອິນຊີ໌ ໕ ຯລຯ ທຳ ໖ ປະການຄືອັນໃດ ຄື ນິດສະຣະນີຍະທາດ ໖໌ຯລຯ ທຳ ໗ ປະການ ຄືອັນໃດ ຄື ໂພດຊົງ໌ ໗ ຯລຯ ທຳ ໘ ປະການຄືອັນໃດ ຄື ອະຣິຍະມັກມີອົງ໌ ໘ ພິກຂຸຜູ້ມີຈິດອັນອົບຮົມດີແລ້ວໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໘ ປະການນີ້ແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ຍ້ອນຊົງອາໄສພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບັນຫາ ໘ ອຸດເທດ ໘ ໄວຍາກອນ ໘" ພຣະອົງຈຶ່ງຕັດໄວ້ເຊັ່ນນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວເຊັ່ນນີ້ແລວ່າ "ບັນຫາ ໙ ອຸດເທດ ໙ ໄວຍາກອນ ໙" ຍ້ອນຊົງອາໄສອັນໃດພຣະອົງຈຶ່ງຕັດໄວ້ເຊັ່ນນັ້ນ ຜູ້ມີອາຍຸທັງຫຼາຍ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງ ໃນທຳ ໙ ປະການແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ທຳ ໙ ປະການຄືອັນໃດ ຄື ສັດຕາວາດ ໙ ພິກຂຸເມື່ອເບື່ອໜ່າຍໂດຍຖືກຕ້ອງ ຄາຍກຳໜັດໂດຍຖືກຕ້ອງ ລຸດພົ້ນໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດ ໂດຍຖືກຕ້ອງໃນທຳ ໙ ປະການນີ້ແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ຍ້ອນຊົງອາໄສພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບັນຫາ ໙ ອຸດເທດ ໙ ໄວຍາກອນ ໙" ພຣະອົງຈຶ່ງຕັດໄວ້ເຊັ່ນນັ້ນ

ພຣະຜູ້ມີພຣະພາກເຈົ້າຕັດໄວ້ແລ້ວເຊັ່ນນີ້ແລວ່າ "ບັນຫາ ໑໐ ອຸດເທດ ໑໐ ໄວຍາກອນ ໑໐" ຍ້ອນຊົງອາໄສອັນໃດພຣະອົງຈຶ່ງຕັດໄວ້ເຊັ່ນນັ້ນ ຜູ້ມີອາຍຸທັງຫຼາຍ ພິກຂຸຜູ້ມີຈິດອັນອົບຮົມດີແລ້ວໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຖືກຕ້ອງ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໑໐ ປະການແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ທຳ ໑໐ ປະການຄືອັນໃດ ຄື ກຸສົນກຳມະບົດ໌ ໑໐ ພິກຂຸຜູ້ມີຈິດອັນອົບຮົມດີແລ້ວໂດຍຖືກຕ້ອງ ມີປົກກະຕິເຫັນບ່ອນສຸດໂດຍຊອບ ບັນລຸປະໂຫຍດໂດຍຖືກຕ້ອງໃນທຳ ໑໐ ປະການນີ້ແລ້ວ ຈຶ່ງເປັນຜູ້ເຮັດບ່ອນສຸດແຫ່ງທຸກໄດ້ໃນປັດຈຸບັນ ຍ້ອນຊົງອາໄສພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ວ່າ "ບັນຫາ ໑໐ ອຸດເທດ ໑໐ ໄວຍາກອນ ໑໐" ພຣະອົງຈຶ່ງຕັດໄວ້ເຊັ່ນນັ້ນ

ຜູ້ມີອາຍຸທັງຫຼາຍ ພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໃນມະຫາບັນຫາທັງຫຼາຍວ່າ "ບັນຫາ ໑ ອຸດເທດ ໑ ໄວຍາກອນ ໑ ຯລຯ ບັນຫາ ໑໐ ອຸດເທດ ໑໐ ໄວຍາກອນ ໑໐" ນັ້ນເຮົາຍ່ອມຮູ້ທົ່ວເຖິງເນື້ອຄວາມແຫ່ງພຣະດຳຣັດທີ່ພຣະຜູ້ມີພຣະພາກເຈົ້າຕັດໂດຍຫຍໍ້ນີ້ໄດ້ໂດຍພິດສະດານແບບນີ້ ຖ້າທ່ານທັງຫຼາຍຍັງຈຳນົງຢູ່ ເພິ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແລ້ວຂາບທູນສອບຖາມເນື້ອຄວາມນີ້ເບິ່ງເທີ້ນ ພຣະຜູ້ມີພຣະພາກເຈົ້າຈະຊົງຕອບແກ່ທ່ານທັງຫຼາຍແບບໃດ ທ່ານທັງຫຼາຍເພິ່ງຊົງຈຳເນື້ອຄວາມນີ້ໄວ້ແບບນັ້ນເທີ້ນ"

ພວກອຸປາສົກຊາວກະຊັງຄະລະຮັບຄຳແລ້ວ ຊົມຊື່ນ ອະນຸໂມທະນາພາສິດຂອງພິກຂຸນີຊາວເມືອງກະຊັງຄະລະແລ້ວລຸກຈາກອາສະນະ ໄຫວ້ແລ້ວ ກະທຳປະທັກຂິນ[9] ເຂົ້າໄປເຝົ້າພຣະຜູ້ມີ ພຣະພາກຮອດບ່ອນຢູ່ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ບ່ອນທີ່ສົມຄວນຂາບທູນຄຳເວົ້າສົນທະນາກັບພິກຂຸນີຊາວເມືອງກະຊັງຄະລະທັງໝົດນັ້ນແດ່ພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ຄະຫະບໍດີທັງຫຼາຍ ພິກຂຸນີຊາວເມືອງກະຊັງຄະລະເປັນບັນດິດ ມີປັນຍາຫຼາຍ ຖ້າທ່ານທັງຫຼາຍມາຖາມເນື້ອຄວາມນັ້ນກັບເຮົາ ແມ່ນເຮົາກໍຈະເພິ່ງຕອບເນື້ອຄວາມນີ້ຄືພິກຂຸນີຊາວເມືອງກະຊັງຄະລະໄດ້ຕອບແລ້ວແລະເນື້ອຄວາມຂອງຄຳນັ້ນກໍມີຄວາມ ໝາຍເຊັ່ນນີ້ແລ ຂໍທ່ານທັງຫຼາຍເພິ່ງຊົງຈຳເນື້ອຄວາມນັ້ນໄວ້ແບບນີ້ເທີ້ນ"

**ທຸຕິຍະມະຫາບັນຫາສູດທີ ໘ ຈົບ**

## ໙. ປະຖົມໂກສະລະສູດ

## ວ່າດ້ວຍພຣະເຈົ້າປະເສນທິໂກສົນ ສູດທີ ໑

[໒໙] ພິກຂຸທັງຫຼາຍ ຊົນນະບົດຂອງຊາວກາສີແລະໂກສົນປະມານທໍ່ໃດ ແວ່ນແຄວ້ນຂອງພຣະເຈົ້າປະເສນທິໂກສົນປະມານທໍ່ໃດ ພຣະເຈົ້າປະເສນທິໂກສົນອັນພະສົກນິກອນຮຽກວ່າເປັນຜູ້ເລີດໃນຊົນນະບົດຂອງຊາວກາສີແລະໂກສົນ ແລະແວ່ນແຄວ້ນເຫຼົ່ານັ້ນປະມານທໍ່ນັ້ນຢ່າງໃດກໍ່ຕາມພຣະເຈົ້າປະເສນທິໂກສົນກໍຍັງມີຄວາມຜັນປ່ຽນ[9]ມີຄວາມຜັນແປ[10]ໄປໄດ້ ອະຣິຍະສາວົກຜູ້ໄດ້ສະດັບ ເຫັນຢູ່ແບບນີ້ ຍ່ອມເບື່ອໜ່າຍແມ່ນໃນສົມບັດນັ້ນ ເມື່ອເບື່ອໜ່າຍໃນສົມບັດນັ້ນ ກໍຄາຍກຳໜັດໃນຄວາມເປັນພຣະຣາຊາເຊິ່ງເປັນເລີດ ບໍ່ຈຳເປັນຕ້ອງເວົ້າເຖິງສົມບັດທີ່ຕໍ່າຕ້ອຍກວ່າ (໑)

ພິກຂຸທັງຫຼາຍ ດວງຈັນແລະດວງອາທິດ ຍ່ອມໝູນວຽນສ່ອງທິດທັງຫຼາຍໃຫ້ສະຫວ່າງຢູ່ໃນທີ່ປະມານທໍ່ໃດ ສະຫັດສະຫາໂລກກະທາດ[11]ມີຢູ່ໃນບ່ອນປະມານທໍ່ນັ້ນ ໃນສະຫັດສະຫາໂລກ

ກະທາດນັ້ນ ມີດວງຈັນ ໑,໐໐໐ ດວງ ມີດວງອາທິດ ໑,໐໐໐ ດວງ ມີຂຸນເຂົາສິເນຣຸ ໑,໐໐໐ ລູກ ມີຊົມພູທະວີບ ໑,໐໐໐ ມີອະປະຣະໂຄຍານທະວີບ ໑,໐໐໐ ມີອຸດຕະຣະກຸຣຸທະວີບ ໑,໐໐໐ ມີປຸບພະວິເທຫະທະວີບ ໑,໐໐໐ ມີມະຫາສະມຸດ ໔,໐໐໐ ມີທ້າວມະຫາຣາດ ໔,໐໐໐ ມີເທວະໂລກຊັ້ນຈາຕຸມະຫາຣາດ ໑,໐໐໐ ມີເທວະໂລກຊັ້ນຕາວະຕິງສາ ໑,໐໐໐ ມີເທວະໂລກຊັ້ນຍາມາ ໑,໐໐໐ ມີເທວະໂລກຊັ້ນດຸສິດ ໑,໐໐໐ ມີພົມມະໂລກ ໑,໐໐໐ ສະຫັດສະທາໂລກກະທາດປະມານທໍ່ໃດ ທ້າວມະຫາພົມ ອັນຊາວໂລກກ່າວວ່າ ເປັນຜູ້ເລີດໃນສະຫັດສະທາໂລກກະທາດປະມານທໍ່ນັ້ນ ຢ່າງໃດກໍ່ຕາມທ້າວມະຫາພົມກໍຍັງມີຄວາມຜັນປ່ຽນ ມີຄວາມຜັນແປໄປໄດ້ ອະຣິຍະສາວົກ ຜູ້ໄດ້ສະດັບ ເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນສະຫັດສະທາໂລກກະທາດນັ້ນ ເມື່ອເບື່ອໜ່າຍໃນສະຫັດສະທາໂລກກະທາດນັ້ນ ກໍຄາຍກຳໜັດໃນຄວາມເປັນທ້າວມະຫາພົມເຊິ່ງເປັນເລີດ ບໍ່ຈຳເປັນຕ້ອງເວົ້າເຖິງພາວະທີ່ຕໍ່າຕ້ອຍກວ່າ (໘)

ສະໄໝທີ່ໂລກນີ້ພິນາດ ເມື່ອໂລກພິນາດຢູ່ ສັດທັງຫຼາຍຍ່ອມບັງເກີດໃນພົມມະໂລກຊັ້ນອາພັດສະສ່ວນຫຼາຍ ສັດເຫຼົ່ານັ້ນເປັນຜູ້ບັງເກີດດ້ວຍອຳນາດຊານ ມີປິຕິເປັນພັກສາ ມີຣັດສະໝີໃນໂຕເອງ ທ່ຽວໄປໃນອາກາດ ມີປົກກະຕິດຳລົງຢູ່ດ້ວຍດີ ຍ່ອມດຳລົງຢູ່ໃນພົມມະໂລກຊັ້ນອາພັດສະນັ້ນຕະຫຼອດການດົນນານ ເມື່ອໂລກພິນາດຢູ່ ອາພັດສະຣະພົມທັງຫຼາຍ ອັນຊາວໂລກກ່າວວ່າ ເປັນຜູ້ເລີດ ຢ່າງໃດກໍ່ຕາມອາພັດສະຣະພົມທັງຫຼາຍກໍຍັງມີຄວາມຜັນປ່ຽນ ມີຄວາມຜັນແປໄປໄດ້ ອະຣິຍະສາວົກຜູ້ໄດ້ສະດັບ ເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນພົມມະໂລກຊັ້ນອາພັດສະນັ້ນ ເມື່ອເບື່ອໜ່າຍໃນພົມມະໂລກຊັ້ນອາພັດສະນັ້ນ ກໍຄາຍກຳໜັດໃນຄວາມເປັນອາພັດສະຣະພົມເຊິ່ງເປັນເລີດ ບໍ່ຈຳເປັນຕ້ອງເວົ້າເຖິງພາວະທີ່ຕໍ່າຕ້ອຍກວ່າ (໙)

ບໍ່ເກີດແຫ່ງທຳທີ່ມີກະສິນເປັນອາລົມ ໑໐ ປະການ

ພິກຂຸທັງຫຼາຍ ບໍ່ເກີດແຫ່ງທຳທີ່ມີກະສິນເປັນອາລົມ ໑໐ ປະການນີ້

ບໍ່ເກີດແຫ່ງທຳທີ່ມີກະສິນເປັນອາລົມ ໑໐ ປະການ ອັນໃດແດ່ ຄື

໑. ບຸກຄົນໜຶ່ງຍ່ອມຮູ້ແຈ້ງປະຖະວີກະສິນເບື້ອງເທິງ ເບື້ອງຕໍ່າ ເບື້ອງຂວາງ ບໍ່ມີສອງ ບໍ່ມີປະມານ
໒. ບຸກຄົນໜຶ່ງຍ່ອມຮູ້ແຈ້ງອາໂປກະສິນ ฯลฯ
໓. ບຸກຄົນໜຶ່ງຍ່ອມຮູ້ແຈ້ງເຕໂຊກະສິນ ฯลฯ
໔. ບຸກຄົນໜຶ່ງຍ່ອມຮູ້ແຈ້ງວາໂຍກະສິນ ฯลฯ
໕. ບຸກຄົນໜຶ່ງຍ່ອມຮູ້ແຈ້ງນິລະກະສິນ ฯลฯ
໖. ບຸກຄົນໜຶ່ງຍ່ອມຮູ້ແຈ້ງປີຕະກະສິນ ฯลฯ
໗. ບຸກຄົນໜຶ່ງຍ່ອມຮູ້ແຈ້ງໂລຫິຕະກະສິນ ฯลฯ

໙. ບຸກຄົນໜຶ່ງຍ່ອມຮູ້ແຈ້ງໂອທາຕະກະສິນ ຯລຯ
໙. ບຸກຄົນໜຶ່ງຍ່ອມຮູ້ແຈ້ງອາກາສະກະສິນ ຯລຯ
໑໐. ບຸກຄົນໜຶ່ງຍ່ອມຮູ້ແຈ້ງວິນຍານກະສິນເບື້ອງເທິງ ເບື້ອງຕ່ຳ ເບື້ອງຂວາງ ບໍ່ມີສອງບໍ່ມີປະມານ

ພິກຂຸທັງຫຼາຍ ບໍ່ເກີດແຫ່ງທຳທີ່ມີກະສິນເປັນອາລົມ ໑໐ ປະການນີ້ແລ

ບັນດາບໍ່ເກີດແຫ່ງທຳທີ່ມີກະສິນເປັນອາລົມ ໑໐ ປະການນີ້ ວິນຍານກະສິນ ເບື້ອງເທິງ ເບື້ອງຕ່ຳ ເບື້ອງຂວາງ ບໍ່ມີສອງ ບໍ່ມີປະມານທີ່ບຸກຄົນໜຶ່ງຮູ້ແຈ້ງນີ້ ເປັນເລີດ ສັດທັງຫຼາຍແມ່ນຜູ້ມີສັນຍາ ແນວນີ້ແລມີຢູ່ ຢ່າງໃດກໍ່ຕາມສັດທັງຫຼາຍຜູ້ມີສັນຍາ ແນວນີ້ກໍຍັງມີຄວາມຜັນປ່ຽນ ມີຄວາມຜັນແປໄປໄດ້ ພິກຂຸທັງຫຼາຍ ອະຣິຍະສາວົກຜູ້ໄດ້ສະດັບ ເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນບໍ່ເກີດແຫ່ງກະສິນນັ້ນ ເມື່ອເບື່ອໜ່າຍໃນບໍ່ເກີດ ແຫ່ງກະສິນນັ້ນ ກໍຄາຍກຳໜັດແມ່ນໃນວິນຍານກະສິນທີ່ເລີດ ບໍ່ຈຳເປັນຕ້ອງເວົ້າເຖິງກະສິນທີ່ຕ່ຳຕ້ອຍກວ່າ (໔)

ອະພິພາຍະຕະນະ ໘ ປະການ[๑]

ພິກຂຸທັງຫຼາຍ ອະພິພາຍະຕະນະ ໘ ປະການນີ້

ອະພິພາຍະຕະນະ ໘ ປະການ ອັນໃດແດ່ ຄື

໑. ບຸກຄົນໜຶ່ງມີຮູບສັນຍາພາຍໃນ[๒] ເຫັນຮູບພາຍນອກຂະໜາດນ້ອຍ ມີສີດີບໍດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະທີ ໑

໒. ບຸກຄົນໜຶ່ງມີຮູບສັນຍາພາຍໃນ ເຫັນຮູບພາຍນອກຂະໜາດໃຫຍ່ ມີສີດີຫຼືບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະທີ ໒

໓. ບຸກຄົນໜຶ່ງມີອະຮູບປະສັນຍາພາຍໃນ[๓] ເຫັນຮູບພາຍນອກຂະໜາດນ້ອຍ ມີສີດີ ຫຼື ບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະທີ ໓

໔. ບຸກຄົນໜຶ່ງມີອະຮູບປະສັນຍາພາຍໃນ ເຫັນຮູບພາຍນອກຂະໜາດໃຫຍ່ ມີສີດີຫຼືບໍ່ດີ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະທີ ໔

໕. ບຸກຄົນໜຶ່ງມີອະຣູບປະສັນຍາພາຍໃນ ເຫັນຣູບພາຍນອກທີ່ຂຽວ ມີສີຂຽວ ປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມ ປຽບຄືດອກຜັກຕົບທີ່ຂຽວ ມີສີຂຽວ ປຽບດ້ວຍຂອງຂຽວ ມີສີຂຽວເຂັ້ມ ສັນໃດ ຫຼືປຽບຄືຜ້າເມືອງພາຣານະສີອັນມີເນື້ອລະອຽດທັງສອງດ້ານທີ່ຂຽວ ມີສີຂຽວ ປຽບດ້ວຍ ຂອງຂຽວ ມີສີຂຽວເຂັ້ມ ສັນໃດ ບຸກຄົນໜຶ່ງມີອະຣູບປະສັນຍາພາຍໃນກໍຄືກັນສັນນັ້ນ ເຫັນຣູບພາຍນອກທີ່ຂຽວ ມີສີຂຽວ ປຽບດ້ວຍຂອງຂຽວ ມີສີ ຂຽວເຂັ້ມ ຄອບງໍາຣູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະທີ ໕

໖. ບຸກຄົນໜຶ່ງມີອະຣູບປະສັນຍາພາຍໃນ ເຫັນຣູບພາຍນອກທີ່ເຫຼືອງ ມີສີເຫຼືອງ ປຽບດ້ວຍຂອງເຫຼືອງ ມີສີເຫຼືອງເຂັ້ມ ປຽບຄືດອກກັນນິກາ ທີ່ເຫຼືອງ ມີສີເຫຼືອງ ປຽບດ້ວຍຂອງເຫຼືອງ ມີສີເຫຼືອງເຂັ້ມ ສັນໃດ ຫຼືປຽບຄືຜ້າເມືອງພາຣານະສີອັນມີເນື້ອລະອຽດທັງສອງດ້ານທີ່ເຫຼືອງ ມີສີເຫຼືອງ ປຽບດ້ວຍຂອງເຫຼືອງ ມີສີເຫຼືອງເຂັ້ມ ສັນໃດ ບຸກຄົນໜຶ່ງມີອະຣູບປະສັນຍາພາຍໃນກໍຄືກັນສັນນັ້ນ ເຫັນຣູບພາຍນອກທີ່ເຫຼືອງ ມີສີເຫຼືອງ ປຽບດ້ວຍຂອງເຫຼືອງ ມີສີເຫຼືອງເຂັ້ມ ຄອບງໍາຣູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະທີ ໖

໗. ບຸກຄົນໜຶ່ງມີອະຣູບປະສັນຍາພາຍໃນ ເຫັນຣູບພາຍນອກທີ່ແດງ ມີສີແດງ ປຽບດ້ວຍຂອງແດງ ມີສີແດງເຂັ້ມ ປຽບຄືດອກຊະບາທີ່ແດງ ມີສີແດງ ປຽບດ້ວຍຂອງແດງ ມີສີແດງເຂັ້ມ ຫຼືປຽບຄືຜ້າເມືອງພາຣານະສີອັນມີເນື້ອລະອຽດທັງສອງດ້ານທີ່ແດງ ມີສີແດງ ປຽບດ້ວຍຂອງແດງ ມີສີແດງເຂັ້ມ ສັນໃດ ບຸກຄົນໜຶ່ງມີອະຣູບປະສັນຍາພາຍໃນກໍຄືກັນສັນນັ້ນ ເຫັນຣູບພາຍນອກ ທີ່ແດງ ມີສີແດງ ປຽບດ້ວຍຂອງແດງ ມີສີແດງເຂັ້ມ ຄອບງໍາຣູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະທີ ໗

໘. ບຸກຄົນໜຶ່ງມີອະຣູບປະສັນຍາພາຍໃນ ເຫັນຣູບພາຍນອກທີ່ຂາວ ມີສີຂາວ ປຽບດ້ວຍຂອງຂາວ ມີສີຂາວເຂັ້ມ ປຽບຄືດາວປະກາຍພຶກທີ່ຂາວ ມີສີຂາວ ປຽບດ້ວຍຂອງຂາວ ມີສີຂາວເຂັ້ມ ຫຼືປຽບຄືຜ້າເມືອງ ພາຣານະສີອັນມີເນື້ອລະອຽດທັງສອງດ້ານທີ່ຂາວ ມີສີຂາວ ປຽບດ້ວຍຂອງຂາວ ມີສີຂາວເຂັ້ມ ສັນໃດ ບຸກຄົນໜຶ່ງມີອະຣູບປະສັນຍາພາຍໃນກໍຄືກັນສັນນັ້ນ ເຫັນຣູບພາຍນອກທີ່ຂາວ ມີສີຂາວ ປຽບດ້ວຍຂອງຂາວ ມີສີຂາວເຂັ້ມ ຄອບງໍາຣູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ "ເຮົາຮູ້ ເຮົາເຫັນ" ນີ້ເປັນອະພິພາຍະຕະນະທີ ໘

ພິກຂຸທັງຫຼາຍ ອະພິພາຍະຕະນະ ໘ ປະການນີ້ແລ

ພິກຂຸທັງຫຼາຍ ບັນດາອະພິພາຍະຕະນະ ໗ ປະການນີ້ ອະພິພາຍະຕະນະທີ ໗ ຄື ບຸກຄົນໜຶ່ງມີອະຮູບປະສັນຍາພາຍໃນ ເຫັນຮູບພາຍນອກທີ່ຂາວ ມີສີຂາວ ປຽບດ້ວຍຂອງຂາວ ມີສີຂາວເຂັ້ມ ຄອບງຳຮູບເຫຼົ່ານັ້ນໄດ້ ມີສັນຍາແນວນີ້ວ່າ “ເຮົາຮູ້ ເຮົາເຫັນ” ນີ້ເປັນເລີດ ສັດທັງຫຼາຍແມ່ນຜູ້ມີສັນຍາແນວນີ້ແລກໍມີຢູ່ ຢ່າງໃດກໍ່ຕາມສັດທັງຫຼາຍຜູ້ມີສັນຍາ ແນວນີ້ກໍຍັງມີຄວາມຜັນປ່ຽນ ມີຄວາມຜັນແປໄປໄດ້ ອະຣິຍະສາວົກຜູ້ໄດ້ສະດັບ ເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍໃນອະພິພາຍະຕະນະນັ້ນ ເມື່ອເບື່ອໜ່າຍແມ່ນໃນອະພິພາຍະຕະນະນັ້ນ ກໍຄາຍກຳໜັດ ໃນອະພິພາຍະຕະນະເຊິ່ງເປັນເລີດ ບໍ່ຈຳເປັນຕ້ອງເວົ້າເຖິງພາວະທີ່ຕ່ຳຕ້ອຍກວ່າ (໕)

ປະຕິປະທາ ໔ ປະການ

ພິກຂຸທັງຫຼາຍ ປະຕິປະທາ ໔ ປະການນີ້

ປະຕິປະທາ ໔ ປະການ ອັນໃດແດ່ ຄື

໑. ທຸກຂາ ປະຕິປະທາ ທັນທາພິນຍາ (ປະຕິບັດລຳບາກທັງຮູ້ໄດ້ຊ້າ)
໒. ທຸກຂາ ປະຕິປະທາ ຂິບປາພິນຍາ (ປະຕິບັດລຳບາກແຕ່ຮູ້ໄດ້ໄວ)
໓. ສຸຂາ ປະຕິປະທາ ທັນທາພິນຍາ (ປະຕິບັດສະດວກແຕ່ຮູ້ໄດ້ຊ້າ)
໔. ສຸຂາ ປະຕິປະທາ ຂິບປາພິນຍາ (ປະຕິບັດສະດວກທັງຮູ້ໄດ້ໄວ)

ພິກຂຸທັງຫຼາຍ ປະຕິປະທາ ໔ ປະການນີ້ແລ

ບັນດາປະຕິປະທາ ໔ ປະການນີ້ ສຸຂາ ປະຕິປະທາ ຂິບປາພິນຍາ ນີ້ເປັນເລີດ ສັດທັງຫຼາຍ ຜູ້ປະຕິບັດແນວນີ້ແລກໍມີຢູ່ ຢ່າງໃດກໍ່ຕາມສັດທັງຫຼາຍ ຜູ້ປະຕິບັດແນວນີ້ກໍຍັງມີຄວາມຜັນປ່ຽນ ມີຄວາມຜັນແປໄປໄດ້ ອະຣິຍະສາວົກຜູ້ໄດ້ສະດັບ ເຫັນຢູ່ແນວນີ້ ຍ່ອມເບື່ອໜ່າຍແມ່ນໃນປະຕິປະທານັ້ນ ເມື່ອເບື່ອໜ່າຍໃນປະຕິປະທານັ້ນ ກໍຄາຍກຳໜັດໃນປະຕິປະທາເຊິ່ງເປັນເລີດ ບໍ່ຈຳເປັນຕ້ອງເວົ້າເຖິງພາວະທີ່ຕ່ຳຕ້ອຍກວ່າ (໖)

ສັນຍາ ໔ ປະການ

ພິກຂຸທັງຫຼາຍ ສັນຍາ ໔ ປະການນີ້

ສັນຍາ ໔ ປະການ ອັນໃດແດ່ ຄື

໑. ບຸກຄົນໜຶ່ງຍ່ອມຮູ້ແຈ້ງປະຣິດຕາຣົມ[໑]
໒. ບຸກຄົນໜຶ່ງຍ່ອມຮູ້ແຈ້ງມະຫັກຄະຕາຣົມ[໒]
໓. ບຸກຄົນໜຶ່ງຍ່ອມຮູ້ແຈ້ງອັບປະມານາຣົມ[໓]

໔. ບຸກຄົນໜຶ່ງຍ່ອມຮູ້ແຈ້ງອາກິນຈັນຍາຍະຕະນະຊານ໌ວ່າ "ບໍ່ມີອັນໃດ"

ພິກຂຸທັງຫຼາຍ ສັນຍາ ໔ ປະການນີ້ແລ

ບັນດາສັນຍາ ໔ ປະການນີ້ ອາກິນຈັນຍາຍະຕະນະຊານທີ່ບຸກຄົນໜຶ່ງຮູ້ແຈ້ງວ່າ "ບໍ່ມີອັນໃດ" ນີ້ເປັນເລີດ ສັດທັງຫຼາຍແມ່ນຜູ້ມີສັນຍາແບບນີ້ແລກໍມີຢູ່ ຢ່າງໃດກໍ່ຕາມ ສັດທັງຫຼາຍຜູ້ມີສັນຍາແບບນີ້ກໍຍັງມີຄວາມຜັນປ່ຽນ ມີຄວາມຜັນແປໄປໄດ້ ອະຣິຍະສາວົກຜູ້ໄດ້ສະດັບ ເຫັນຢູ່ແບບນີ້ ຍ່ອມເບື່ອໜ່າຍແມ່ນໃນສັນຍານັ້ນ ເມື່ອເບື່ອໜ່າຍໃນສັນຍານັ້ນ ກໍຄາຍກຳໜັດແມ່ນໃນສັນຍາເຊິ່ງເປັນເລີດ ບໍ່ຈຳເປັນຕ້ອງເວົ້າເຖິງພາວະທີ່ຕ່ຳຕ້ອຍກວ່າ (໗)

ບັນດາວາທະນອກສາດສະໜາ ວາທະວ່າ "ຖ້າເຮົາຈັກບໍ່ໄດ້ມີແລ້ວ ອັດຕະພາບນີ້ກໍບໍ່ເພິ່ງມີ ແກ່ເຮົາ ຖ້າເຮົາຈັກບໍ່ມີ ຄວາມກັງວົນອັນໃດຈັກບໍ່ມີແກ່ເຮົາ" ນີ້ເປັນເລີດ ບຸກຄົນຜູ້ມີວາທະແບບນີ້ ເພິ່ງຫວັງຂໍ້ນີ້ໄດ້ວ່າ ຄວາມທີ່ໃຈບໍ່ມັກໃນພົບຈັກບໍ່ມີແກ່ເຂົາ ແລະຄວາມທີ່ໃຈມັກໃນຄວາມດັບພົບ ຈັກບໍ່ມີແກ່ເຂົາ ສັດທັງຫຼາຍແມ່ນຜູ້ມີວາທະແບບນີ້ແລກໍມີຢູ່ ຢ່າງໃດກໍ່ຕາມສັດທັງຫຼາຍຜູ້ມີວາທະແບບນີ້ກໍຍັງມີຄວາມຜັນປ່ຽນ ມີຄວາມຜັນແປໄປໄດ້ ອະຣິຍະສາວົກຜູ້ໄດ້ ສະດັບ ເຫັນຢູ່ແບບນີ້ ຍ່ອມເບື່ອໜ່າຍແມ່ນໃນວາທະນັ້ນ ເມື່ອເບື່ອໜ່າຍໃນວາທະນັ້ນ ກໍຄາຍກຳໜັດໃນວາທະເຊິ່ງເປັນເລີດ ບໍ່ຈຳເປັນຕ້ອງເວົ້າເຖິງພາວະທີ່ຕ່ຳຕ້ອຍກວ່າ (໘)

ສະມະນະພາມພວກໜຶ່ງບັນຍັດຄວາມມົດຈົດໃນສັດຊັ້ນສູງສຸດມີຢູ່ ບຸກຄົນຜູ້ທີ່ລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະຊານ ນີ້ເລີດກວ່າສະມະນະພາມຜູ້ບັນຍັດຄວາມມົດຈົດໃນສັດຊັ້ນສູງສຸດ ສະມະນະພາມເຫຼົ່ານັ້ນ ຮູ້ຍິ່ງແລ້ວເຊິ່ງເນວະສັນຍານາສັນຍາຍະຕະນະຊານນັ້ນ ຍ່ອມສະແດງທຳເພື່ອເຮັດໃຫ້ແຈ້ງເຊິ່ງເນວະສັນຍານາສັນຍາຍະຕະນະຊານນັ້ນ ສັດທັງຫຼາຍແມ່ນຜູ້ມີວາທະແບບນີ້ແລກໍມີຢູ່ ຢ່າງໃດກໍ່ຕາມສັດທັງຫຼາຍຜູ້ມີວາທະແບບນີ້ກໍຍັງມີຄວາມຜັນປ່ຽນ ມີຄວາມຜັນແປໄປໄດ້ ອະຣິຍະສາວົກຜູ້ໄດ້ສະດັບ ເຫັນຢູ່ແບບນີ້ ຍ່ອມເບື່ອໜ່າຍແມ່ນໃນເນວະສັນຍານາສັນຍາຍະຕະນະຊານນັ້ນ ເມື່ອເບື່ອໜ່າຍໃນເນວະສັນຍານາສັນຍາຍະຕະນະຊານນັ້ນ ກໍຄາຍກຳໜັດໃນເນວະສັນຍານາສັນຍາຍະຕະນະຊານເຊິ່ງເປັນເລີດ ບໍ່ຈຳເປັນຕ້ອງເວົ້າເຖິງພາວະທີ່ຕ່ຳຕ້ອຍກວ່າ (໙)

ພິກຂຸທັງຫຼາຍ ສະມະນະພາມພວກໜຶ່ງບັນຍັດນິບພານອັນຍອດຍິ່ງໃນປັດຈຸບັນ ມີຢູ່ ຄວາມລຸດພົ້ນແຫ່ງຈິດຍ້ອນບໍ່ຖືໝັ້ນ ຍ້ອນຮູ້ຄວາມເກີດ ຄວາມດັບ ຄຸນ ໂທດ ແລະອຸບາຍເຄື່ອງກຳຈັດຜັດສາຍະຕະນະ ໖ ປະການ ຕາມຄວາມເປັນຈິງ ນີ້ເລີດກວ່າສະມະນະພາມຜູ້ບັນຍັດນິບພານອັນຍອດຍິ່ງໃນປັດຈຸບັນ ສະມະນະພາມພວກໜຶ່ງ ຍ່ອມກ່າວຕູ່ເຮົາຜູ້ມີວາທະແບບນີ້ ຜູ້ກ່າວແບບນີ້ ດ້ວຍຄຳບໍ່ຈິງ ຄຳເປົ່າ ຄຳຕົວະ ຄຳບໍ່ເປັນຈິງວ່າ "ພຣະສະມະນະໂຄດົມບໍ່ບັນຍັດການກຳນົດຮູ້ກາມ ຮູບ ແລະເວທະນາທັງຫຼາຍ" ພິກຂຸທັງຫຼາຍ ເຮົາບັນຍັດການກຳນົດຮູ້ກາມ ຮູບ

ແລະເວທະນາທັງຫຼາຍ ເປັນຜູ້ປາສະຈາກຕັນຫາແລະມິດສາທິດຖິແລ້ວ ດັບແລ້ວ ເຢືອກເຢັນແລ້ວ ຈຶ່ງບັນຍັດອະນຸປາທາປະຣິນິບພານໃນປັດຈຸບັນ (໑໐)

**ປະຖົມໂກສະລະສູດທີ ໗ ຈົບ**

## ໑໐. ທຸຕິຍະໂກສະລະສູດ

## ວ່າດ້ວຍພຣະເຈົ້າປະເສນທິໂກສົນ ສູດທີ ໘

[໗໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນ ພຣະເຈົ້າປະເສນທິໂກສົນສະເດັດກັບຈາກການຮົບ ຊົງຊະນະສົງຄາມມາສົມພຣະຣາດຊະປະສົງແລ້ວ ໄດ້ສະເດັດໄປສູ່ອາຣາມ ໂດຍພຣະຣາດຊະຍານພໍທີ່ຍານຈະໄປໄດ້ ສະເດັດລົງຈາກພຣະຣາດຊະຍານແລ້ວ ສະເດັດໄປດ້ວຍພຣະບາດເຂົ້າໄປສູ່ອາຣາມ

ສະໄໝນັ້ນ ພິກຂຸຫຼາຍອົງຍ່າງຈົງກົມຢູ່ທີ່ກາງແຈ້ງ ພຣະເຈົ້າປະເສນທິໂກສົນສະເດັດເຂົ້າໄປຫາພິກຂຸເຫຼົ່ານັ້ນແລ້ວຕັດຖາມວ່າ "ພຣະຜູ້ເປັນເຈົ້າຜູ້ຈະເລີນ ບັດນີ້ ພຣະຜູ້ມີພຣະພາກອະຣະຫັນຕະສໍາມາສໍາພຸດທະເຈົ້າປະທັບຢູ່ໄສນໍ ຂ້ານ້ອຍປະສົງຈະເຝົ້າພຣະອົງ"

ພິກຂຸເຫຼົ່ານັ້ນຖວາຍພຣະພອນວ່າ "ຂໍມະຫາບໍພິດຈົ່ງງຽບສຽງສະເດັດເຂົ້າໄປສູ່ພຣະວິຫານຫຼັງນີ້ເຊິ່ງມີປະຕູອັດສະນິດດີແລ້ວ ຢ່າຊົງຮີບຮ້ອນ ສະເດັດເຂົ້າໄປສູ່ລະບຽງ ຊົງອະແຮ່ມແລ້ວຊົງໃຊ້ປາຍພຣະນະຂາເຄາະບານປະຕູຈັກໜ້ອຍເທີ້ນ ພຣະຜູ້ມີພຣະພາກເຈົ້າຈັກຊົງໄຂປະຕູ"

ພຣະເຈົ້າປະເສນທິໂກສົນໄດ້ຊົງງຽບສຽງສະເດັດເຂົ້າໄປສູ່ພຣະວິຫານຫຼັງນັ້ນເຊິ່ງມີປະຕູອັດສະນິດດີແລ້ວ ບໍ່ໄດ້ຊົງຮີບຮ້ອນ ສະເດັດເຂົ້າໄປສູ່ລະບຽງ ຊົງອະແຮ່ມແລ້ວໃຊ້ ປາຍພຣະນະຂາເຄາະບານປະຕູຈັກໜ້ອຍ ພຣະຜູ້ມີພຣະພາກເຈົ້າຊົງໄຂປະຕູຮັບ ພຣະເຈົ້າປະເສນທິໂກສົນຈຶ່ງສະເດັດເຂົ້າໄປສູ່ພຣະວິຫານ ຊົບພຣະສຽນລົງທີ່ພຣະບາດທັງສອງຂອງພຣະຜູ້ມີພຣະພາກແລ້ວຈູບພຣະບາດທັງສອງຂອງພຣະຜູ້ມີພຣະພາກເຈົ້າດ້ວຍພຣະໂອດ ຊົງນວດດ້ວຍພຣະຫັດທັງສອງ ແລະຊົງປະກາດພຣະນາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍ ຄື ພຣະເຈົ້າປະເສນທິໂກສົນ ຂ້ານ້ອຍ ຄືພຣະເຈົ້າປະເສນທິໂກສົນ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ມະຫາບໍພິດ ພຣະອົງຊົງເຫັນອໍານາດປະໂຫຍດອັນໃດນໍ ຈຶ່ງຊົງທໍາຄວາມນອບນ້ອມປະກອບດ້ວຍເມດຕາຢ່າງຍິ່ງແນວນີ້ໃນສະຣີຣະນີ້"

ພຣະເຈົ້າປະເສນທິໂກສົນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍເຫັນຄວາມກະຕັນຍູກະຕະເວທີ ຈຶ່ງທຳຄວາມນອບນ້ອມປະກອບດ້ວຍເມດຕາຢ່າງຍິ່ງ ແນວນີ້ໃນພຣະຜູ້ມີພຣະພາກເຈົ້າຍ້ອນ

໑. ພຣະຜູ້ມີພຣະພາກເຈົ້າຊົງປະຕິບັດເພື່ອປະໂຫຍດ ເພື່ອຄວາມສຸກ ເພື່ອເກື້ອກູນແກ່ຄົນທັງຫຼາຍ ຊົງໃຫ້ຄົນທັງຫຼາຍ ດຳລົງຢູ່ໃນອະຣິຍະຍາຍະທັມ ຄື ຄວາມເປັນຜູ້ມີກັນລະຍານະທຳ ຄວາມເປັນຜູ້ມີກຸສົນທຳ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍເຫັນອຳນາດປະໂຫຍດນີ້ ຈຶ່ງທຳຄວາມນອບນ້ອມປະກອບດ້ວຍເມດຕາຢ່າງຍິ່ງແນວນີ້ໃນພຣະຜູ້ມີພຣະພາກເຈົ້າ

໔. ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ມີສິນ ມີສິນອັນຈະເລີນ ມີສິນອັນປະເສີດ ມີສິນອັນເປັນກຸສົນ ຊົງເປັນຜູ້ປະກອບດ້ວຍກຸສົນ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍເຫັນອຳນາດປະໂຫຍດນີ້ ຈຶ່ງທຳຄວາມນອບນ້ອມປະກອບດ້ວຍເມດຕາຢ່າງຍິ່ງ ແນວນີ້ ໃນພຣະຜູ້ມີພຣະພາກເຈົ້າ

໓. ພຣະຜູ້ມີພຣະພາກເຈົ້າຊົງຖືການຢູ່ປ່າເປັນຂໍ້ວັດປະຕິບັດ ຊົງຢູ່ອາໄສເສນາສະນະອັນສະຫງັດເຊິ່ງຕັ້ງຢູ່ໃນແນວປ່າຕະຫຼອດການລະນານ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍເຫັນອຳນາດປະໂຫຍດນີ້ ຈຶ່ງທຳຄວາມນອບນ້ອມປະກອບດ້ວຍເມດຕາຢ່າງຍິ່ງແນວນີ້ໃນພຣະຜູ້ມີພຣະພາກເຈົ້າ

໔. ພຣະຜູ້ມີພຣະພາກເຈົ້າຊົງສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍເຫັນອຳນາດປະໂຫຍດນີ້ ຈຶ່ງທຳຄວາມນອບນ້ອມປະກອບດ້ວຍເມດຕາຢ່າງຍິ່ງແນວນີ້ໃນພຣະຜູ້ມີພຣະພາກເຈົ້າ

໕. ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ການຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ ຂ້າແດ່ພຣະອົງຜູ້ຈະເລີນ ຂ້ານ້ອຍເຫັນອຳນາດປະໂຫຍດນີ້ ຈຶ່ງທຳຄວາມນອບນ້ອມປະກອບດ້ວຍເມດຕາຢ່າງຍິ່ງແນວນີ້ໃນພຣະຜູ້ມີພຣະພາກເຈົ້າ

໖. ພຣະຜູ້ມີພຣະພາກເຈົ້າ ຊົງເປັນຜູ້ໄດ້ກະຖາເປັນເຄື່ອງຂັດເກົາຢ່າງຍິ່ງ ເປັນສັບປາຍະແຫ່ງຄວາມເປັນໄປຂອງຈິດ[๑] ຄື ອັບປິດສະກະຖາ (ເລື້ອງຄວາມມັກໜ້ອຍ) ສັນຕຸດຖິກະຖາ (ເລື້ອງຄວາມສັນໂດດ) ປະວິເວກກະຖາ (ເລື້ອງຄວາມສະຫງັດ) ອະສັງສັກຄະກະຖາ(ເລື້ອງຄວາມບໍ່ຄຸກຄີ) ວິຣິຍາຣຳພະກະຖາ (ເລື້ອງການຜາຣົບຄວາມພຽນ) ສີລະກະຖາ (ເລື້ອງສີນ) ສະມາທິກະຖາ (ເລື້ອງສະມາທິ) ປັນຍາກະຖາ (ເລື້ອງປັນຍາ) ວິມຸດຕິກະຖາ (ເລື້ອງວິມຸດຕິ) ວິ

ມຸດຕິຍານທັດສະນະກະຖາ (ເລື້ອງຄວາມຮູ້ຄວາມເຫັນໃນວິມຸດຕິ) ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລໍາບາກ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍເຫັນອໍານາດປະໂຫຍດນີ້ ຈຶ່ງທໍາຄວາມນອບນ້ອມປະກອບດ້ວຍເມດຕາຢ່າງຍິ່ງແນວນີ້ ໃນພຣະຜູ້ມີພຣະພາກເຈົ້າ

ກ. ພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງ ເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລໍາບາກ ຂ້າແດ່ພຣະອົງຜູ້ຈະເລີນ ຂ້ານ້ອຍເຫັນອໍານາດປະໂຫຍດນີ້ ຈຶ່ງທໍາຄວາມນອບນ້ອມປະກອບດ້ວຍເມດຕາຢ່າງຍິ່ງແນວນີ້ໃນພຣະຜູ້ມີພຣະພາກເຈົ້າ

ຖ. ພຣະຜູ້ມີພຣະພາກເຈົ້າຊົງຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບຫຼວງຫຼາຍແດ່ ຕະຫຼອດວິວັດຕະກັບຫຼວງຫຼາຍແດ່ ຕະຫຼອດສັງວັດຕະກັບແລະວິວັດຕະກັບຫຼວງຫຼາຍ ແດ່ວ່າ "ໃນພົບນັ້ນ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຮົາກໍມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນແລ້ວຈຶ່ງມາເກີດໃນພົບນີ້" ພຣະອົງຊົງຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້ ຂ້າແດ່ພຣະອົງຜູ້ຈະເລີນ ຂ້ານ້ອຍເຫັນອໍານາດປະໂຫຍດນີ້ ຈຶ່ງທໍາຄວາມນອບນ້ອມປະກອບດ້ວຍເມດຕາຢ່າງຍິ່ງປານນີ້ໃນພຣະຜູ້ມີພຣະພາກເຈົ້າ

ຄ. ພຣະຜູ້ມີພຣະພາກເຈົ້າຊົງເຫັນໝູ່ສັດຜູ້ກໍາລັງຈຸຕິ ກໍາລັງເກີດ ທັງຊັ້ນຕໍ່າແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຊົງຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກໍາວ່າ "ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະຊັກຊວນຜູ້ອື່ນໃຫ້ເຮັດຕາມຄວາມເຫັນຜິດ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ແລະຊັກຊວນຜູ້ອື່ນໃຫ້ເຮັດຕາມຄວາມເຫັນຖືກ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ ພຣະອົງຊົງເຫັນໝູ່ສັດຜູ້ກໍາລັງຈຸຕິ ກໍາລັງເກີດ ທັງຊັ້ນຕໍ່າແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຊົງຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກໍາແນວນີ້ ຂ້າແດ່ ພຣະອົງຈະເລີນ ຂ້ານ້ອຍເຫັນອໍານາດປະໂຫຍດນີ້ ຈຶ່ງທໍາຄວາມນອບນ້ອມປະກອບດ້ວຍເມດຕາ ຢ່າງຍິ່ງແນວນີ້ໃນພຣະຜູ້ມີພຣະພາກເຈົ້າ

໑໐. ພຣະຜູ້ມີພຣະພາກເຈົ້າຊົງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍເຫັນອຳນາດປະໂຫຍດນີ້ ຈຶ່ງທຳຄວາມນອບນ້ອມປະກອບດ້ວຍເມດຕາຢ່າງຍິ່ງແນວນີ້ ໃນພຣະຜູ້ມີພຣະພາກເຈົ້າ

ຖ້າເປັນແນວນັ້ນ ບັດນີ້ ຂ້ານ້ອຍຂໍທູນລາກັບຍ້ອນມີກິດ ມີໜ້າທີ່ທີ່ຈະຕ້ອງເຮັດ ອີກຫຼາຍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຂໍພຣະອົງຈົ່ງຊົງກຳນົດເວລາທີ່ສົມຄວນ ໃນບັດນີ້ເທີ້ນ ມະຫາບໍພິດ"

ຄັ້ງນັ້ນແລ ພຣະເຈົ້າປະເສນທິໂກສົນ ສະເດັດລຸກຂຶ້ນຈາກພຣະຣາດຊະອາດ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ຊົງກະທຳປະທັກຂິນແລ້ວສະເດັດກັບໄປ

**ທຸຕິຍະໂກສະລະສູດທີ ໑໐ ຈົບ**

**ມະຫາວັກທີ ໓ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

# ໔. ອຸປາລິວັກ

## ໝວດວ່າດ້ວຍພຣະອຸປາລີ

## ໑. ອຸປາລິສູດ

### ວ່າດ້ວຍພຣະອຸປາລີທູນຖາມປະໂຫຍດແຫ່ງການບັນຍັດສິກຂາບົດ

[໓໑] ຄັ້ງນັ້ນ ທ່ານພຣະອຸປາລີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພຣະຕະຖາຄົດເຈົ້າຊົງບັນຍັດສິກຂາບົດ ຊົງສະແດງປາຕິໂມກແກ່ເຫຼົ່າສາວົກໂດຍອາໄສອຳນາດປະໂຫຍດທີ່ໃດນໍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປາລີ ຕະຖາຄົດບັນຍັດສິກຂາບົດ ສະແດງປາຕິໂມກແກ່ເຫຼົ່າສາວົກໂດຍອາໄສອຳນາດປະໂຫຍດ ໑໐ ປະການ

ອຳນາດປະໂຫຍດ ໑໐ ປະການ ອັນໃດແດ່ ຄື

໑. ເພື່ອຄວາມຮັບວ່າດີແຫ່ງສົງ
໒. ເພື່ອຄວາມຜາສຸກແຫ່ງສົງ
໓. ເພື່ອຂົ່ມບຸກຄົນຜູ້ດື້ດ້ານ[໑]
໔. ເພື່ອຄວາມຢູ່ຜາສຸກແຫ່ງເຫຼົ່າພິກຂຸຜູ້ມີສິນດີງາມ
໕. ເພື່ອອັດກັ້ນອາສະວະທັງຫຼາຍອັນຈະບັງເກີດໃນປັດຈຸບັນ
໖. ເພື່ອກຳຈັດອາສະວະທັງຫຼາຍອັນຈະບັງເກີດໃນອະນາຄົດ
໗. ເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ
໘. ເພື່ອຄວາມເຫຼື້ອມໃສຍິ່ງຂຶ້ນໄປຂອງຄົນທີ່ເຫຼື້ອມໃສແລ້ວ
໙. ເພື່ອຄວາມຕັ້ງໝັ້ນແຫ່ງສັດທຳ
໑໐. ເພື່ອເອື້ອເຟື້ອວິໄນ[໒]

ອຸປາລີ ຕະຖາຄົດບັນຍັດສິກຂາບົດ ສະແດງປາຕິໂມກແກ່ເຫຼົ່າສາວົກໂດຍອາໄສອຳນາດປະໂຫຍດ ໑໐ ປະການນີ້ແລ

**ອຸປາລິສູດທີ ໑ ຈົບ**

# ໘. ປາຕິໂມກຂັດຖະປະນາສູດ

## ວ່າດ້ວຍເຫດງົດສູດປາຕິໂມກ

[໙໘] ທ່ານພຣະອຸປາລີທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ເຫດງົດສູດປາຕິໂມກ ມີເທົ່າໃດນໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອຸປາລີ ເຫດງົດສູດປາຕິໂມກ ໑໐ ປະການ

ເຫດງົດສູດປາຕິໂມກ ໑໐ ປະການ ອັນໃດແດ່ ຄື

໑. ພິກຂຸຜູ້ຕ້ອງອາບັດປາຣາຊິກນັ່ງຢູ່ໃນບໍລິສັດນັ້ນ
໒. ກະຖາວ່າດ້ວຍປາຣາຊິກຍັງເຮັດຄ້າງຢູ່
໓. ອະນຸປະສຳບັນນັ່ງຢູ່ໃນບໍລິສັດນັ້ນ
໔. ກະຖາວ່າດ້ວຍອະນຸປະສຳບັນຍັງເຮັດຄ້າງຢູ່
໕. ຜູ້ບອກລາສິກຂານັ່ງຢູ່ໃນບໍລິສັດນັ້ນ
໖. ກະຖາວ່າດ້ວຍຜູ້ບອກລາສິກຂາຍັງເຮັດຄ້າງຢູ່
໗. ບັນເດາະນັ່ງຢູ່ໃນບໍລິສັດນັ້ນ
໘. ກະຖາວ່າດ້ວຍບັນເດາະຍັງເຮັດຄ້າງຢູ່
໙. ຜູ້ປະທຸດສະຮ້າຍພິກຂຸນີນັ່ງຢູ່ໃນບໍລິສັດນັ້ນ
໑໐. ກະຖາວ່າດ້ວຍຜູ້ປະທຸດສະຮ້າຍພິກຂຸນີຍັງເຮັດຄ້າງຢູ່

ອຸປາລີ ເຫດງົດສູດປາຕິໂມກ ໑໐ ປະການນີ້ແລ"

**ປາຕິໂມກຂັດຖະປະນາສູດທີ ໘ ຈົບ**

# ໙. ອຸບພາຫິກາສູດ

## ວ່າດ້ວຍຄຸນສົມບັດຂອງພິກຂຸຜູ້ຮີ້ຟື້ນອະທິກອນ

[໙໙] ທ່ານພຣະອຸປາລີທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸຜູ້ປະກອບດ້ວຍທຳເທົ່າໃດນໍ ສົງເພິ່ງສົມມຸດ໑ໃຫ້ເປັນຜູ້ຮື້ຟື້ນອະທິກອນໄດ້"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອຸປາລີ ພິກຂຸຜູ້ປະກອບດ້ວຍທຳ ໑໐ ປະການ ສົງເພິ່ງສົມມຸດໃຫ້ເປັນຜູ້ຮື້ຟື້ນອະທິກອນ໒ໄດ້

ທຳ ໑໐ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ
໒. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທີ່ມີຄວາມງາມ ໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນ ພ້ອມທັງອັດຖະ ແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈແທງຕະຫຼອດດີດ້ວຍທິດຖິ
໓. ຊົງຈຳປາຕິໂມກທັງສອງ໋ ໄດ້ດີ ຈຳແນກໄດ້ດີ ໃຫ້ເປັນໄປໄດ້ດີໂດຍພິດສະດານ ວິນິດໄສໄດ້ດີໂດຍສູດ ໂດຍອະນຸພະຍັນຊະນະ
໔. ເປັນຜູ້ຕັ້ງໝັ້ນ ບໍ່ງ່ອນແງ່ນໃນວິໄນ
໕. ເປັນຜູ້ສາມາດປັບຄູ່ຄວາມທັງ ໒ ຝ່າຍໃຫ້ຍິນຍອມກັນໄດ້ ໃຫ້ສຳນຶກໂຕໃຫ້ເພ່ງພິນິດເບິ່ງ ໃຫ້ເຫັນຜົນ ໃຫ້ເຫຼື້ອມໃສ
໖. ເປັນຜູ້ສະຫຼາດໃນການລະງັບອະທິກອນທີ່ເກີດຂຶ້ນ
໗. ຮູ້ອະທິກອນ
໘. ຮູ້ເຫດເກີດອະທິກອນ
໙. ຮູ້ຄວາມດັບອະທິກອນ
໑໐. ຮູ້ວິທີປະຕິບັດເພື່ອລະງັບອະທິກອນ

ອຸປາລີ ພິກຂຸຜູ້ປະກອບດ້ວຍທຳ ໑໐ ປະການນີ້ແລ ສົງເພິ່ງສົມມຸດໃຫ້ເປັນຜູ້ຮື້ຟື້ນອະທິກອນໄດ້”

**ອຸບພາຫິກາສູດທີ ໓ ຈົບ**

## ໔. ອຸປະສຳປະທາສູດ
## ວ່າດ້ວຍຄຸນສົມບັດຂອງພິກຂຸຜູ້ໃຫ້ອຸປະສົມບົດ

[໓໔] ພຣະອຸປາລີທູນຖາມວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸຜູ້ປະກອບດ້ວຍທຳທີ່ໃດນໍ ເພິ່ງໃຫ້ກຸນລະບຸດອຸປະສົມບົດໄດ້”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ອຸປາລີ ພິກຂຸຜູ້ປະກອບດ້ວຍທຳ ໑໐ ປະການ ເພິ່ງໃຫ້ກຸນລະບຸດອຸປະສົມບົດໄດ້

ທຳ ໑໐ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ
໒. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນແລ້ວ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ
໓. ຊົງຈຳປາຕິໂມກໄດ້ດີ ຈຳແນກໄດ້ດີ ໃຫ້ເປັນໄປໄດ້ດີໂດຍພິດສະດານ ວິນິດໄສໄດ້ດີໂດຍສູດ ໂດຍອະນຸພະຍັນຊະນະ
໔. ເປັນຜູ້ສາມາດປິ່ນປົວໄດ້ເອງ ຫຼື ໃຫ້ຜູ້ອື່ນຊ່ອຍປິ່ນປົວສັດທິວິຫາຣິກຜູ້ເຈັບໄຂ້
໕. ເປັນຜູ້ສາມາດລະງັບໄດ້ເອງ ຫຼື ໃຊ້ໃຫ້ຜູ້ອື່ນຊ່ອຍລະງັບຄວາມບໍ່ຍິນດີ໑
໖. ເປັນຜູ້ສາມາດບັນເທົາຄວາມລຳຄານທີ່ເກີດຂຶ້ນໄດ້ເອງໂດຍທຳ
໗. ເປັນຜູ້ສາມາດປົດເປື້ອງຄວາມເຫັນຜິດທີ່ເກີດຂຶ້ນໄດ້ໂດຍທຳ
໘. ເປັນຜູ້ສາມາດໃຫ້ສະມາທານອະທິສີນ
໙. ເປັນຜູ້ສາມາດໃຫ້ສະມາທານອະທິຈິດ
໑໐. ເປັນຜູ້ສາມາດໃຫ້ສະມາທານອະທິປັນຍາ

ອຸປາລິ ພິກຂຸຜູ້ປະກອບດ້ວຍທຳ ໑໐ ປະການນີ້ແລ ເພິ່ງໃຫ້ກຸນລະບຸດອຸປະສົມບົດໄດ້”

**ອຸປະສຳປະທາສູດທີ ໔ ຈົບ**

## ໕. ນິດສະຍະສູດ

## ວ່າດ້ວຍຄຸນສົມບັດຂອງພິກຂຸຜູ້ໃຫ້ນິດໄສ

[໓໕] ພຣະອຸປາລິທູນຖາມວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸຜູ້ປະກອບດ້ວຍທຳທໍ່ໃດນໍ ເພິ່ງໃຫ້ນິດໄສໄດ້”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ອຸປາລິ ພິກຂຸຜູ້ປະກອບດ້ວຍທຳ ໑໐ ປະການ ເພິ່ງໃຫ້ນິດໄສໄດ້

ທຳ ໑໐ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສີນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ
໒. ເປັນພະຫູສູດ ຯລຯ ແທງຕະຫຼອດດີດ້ວຍທິດຖິ
໓. ຊົງຈຳປາຕິໂມກໄດ້ດີ ຈຳແນກໄດ້ດີ ໃຫ້ເປັນໄປໄດ້ດີໂດຍພິດສະດານ ວິນິດໄສໄດ້ດີໂດຍສູດ ໂດຍອະນຸພະຍັນຊະນະ
໔. ເປັນຜູ້ສາມາດປິ່ນປົວເອງ ຫຼື ໃຊ້ໃຫ້ຜູ້ອື່ນຊ່ອຍປິ່ນປົວອັນເຕວາສິກຜູ້ເຈັບໄຂ້
໕. ເປັນຜູ້ສາມາດລະງັບໄດ້ເອງ ຫຼື ໃຊ້ໃຫ້ຜູ້ອື່ນຊ່ອຍລະງັບຄວາມບໍ່ຍິນດີ
໖. ເປັນຜູ້ສາມາດບັນເທົາຄວາມລຳຄານທີ່ເກີດຂື້ນໄດ້ເອງໂດຍທຳ
໗. ເປັນຜູ້ສາມາດປົດເປື້ອງຄວາມເຫັນຜິດທີ່ເກີດຂື້ນໄດ້ໂດຍທຳ
໘. ເປັນຜູ້ສາມາດໃຫ້ສະມາທານອະທິສີນ
໙. ຯລຯ ອະທິຈິດ
໑໐. ຯລຯ ອະທິປັນຍາ

ອຸປາລີ ພິກຂຸຜູ້ປະກອບດ້ວຍທຳ ໑໐ ປະການນີ້ແລ ເພິ່ງໃຫ້ນິດໄສໄດ້”

**ນິດສະຍະສູດທີ ໕ ຈົບ**

## ໖. ສາມະເນຣະສູດ

## ວ່າດ້ວຍຄຸນສົມບັດຂອງພິກຂຸຜູ້ໃຫ້ສາມະເນນອຸປັດຖາກ

[໓໖] ພຣະອຸປາລີທູນຖາມວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸຜູ້ປະກອບດ້ວຍທຳທີ່ໃດນໍ? ເພິ່ງໃຫ້ສາມະເນນອຸປັດຖາກໄດ້”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ອຸປາລີ ພິກຂຸຜູ້ປະກອບດ້ວຍທຳ ໑໐ ປະການ ເພິ່ງໃຫ້ສາມະເນນອຸປັດຖາກໄດ້

ທຳ ໑໐ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສີນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ
໒. ເປັນພະຫູສູດ ຯລຯ ແທງຕະຫຼອດດີດ້ວຍທິດຖິ

໓. ຊົງຈຳປາຕິໂມກໄດ້ດີ ຈຳແນກໄດ້ດີ ໃຫ້ເປັນໄປໄດ້ດີໂດຍພິດສະດານ ວິນິດໄສໄດ້ດີໂດຍສູດ ໂດຍອະນຸພະຍັນຊະນະ
໔. ເປັນຜູ້ສາມາດປິ່ນປົວໄດ້ເອງຫຼືໃຊ້ໃຫ້ຜູ້ອື່ນປິ່ນປົວສັດທິວິຫາຣິກຜູ້ເຈັບໄຂ້
໕. ເປັນຜູ້ສາມາດລະງັບໄດ້ເອງຫຼືໃຊ້ໃຫ້ຜູ້ອື່ນຊ່ອຍລະງັບຄວາມບໍ່ຍິນດີ
໖. ເປັນຜູ້ສາມາດບັນເທົາຄວາມລຳຄານທີ່ເກີດຂຶ້ນໄດ້ເອງໂດຍທຳ
໗. ເປັນຜູ້ສາມາດປົດເປື້ອງຄວາມເຫັນຜິດທີ່ເກີດຂຶ້ນໄດ້ໂດຍທຳ
໘. ເປັນຜູ້ສາມາດໃຫ້ສະມາທານອະທິສີນ
໙. ເປັນຜູ້ສາມາດໃຫ້ສະມາທານອະທິຈິດ
໑໐. ເປັນຜູ້ສາມາດໃຫ້ສະມາທານອະທິປັນຍາ

ອຸປາລີ ພິກຂຸຜູ້ປະກອບດ້ວຍທຳ ໑໐ ປະການນີ້ແລ ເພິ່ງໃຫ້ສາມະເນນອຸປັດຖາກໄດ້"

**ສາມະເນຣະສູດທີ ໖ ຈົບ**

## ໗. ສັງຄະເພທະສູດ

## ວ່າດ້ວຍເຫດໃຫ້ສົງແຕກກັນ

[໓໗] ພຣະອຸປາລີທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ "ສັງຄະເພດ ສັງຄະເພດ" ສົງຈະເປັນຜູ້ແຕກກັນດ້ວຍເຫດທໍ່ໃດນໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອຸປາລີ ພິກຂຸທັງຫຼາຍໃນທຳວິໄນນີ້

໑. ສະແດງອະທຳວ່າ "ເປັນທຳ"
໒. ສະແດງທຳວ່າ "ເປັນອະທຳ"
໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າ "ເປັນວິໄນ"
໔. ສະແດງວິໄນວ່າ "ບໍ່ແມ່ນວິໄນ"
໕. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້ວ່າ "ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້"
໖. ສະແດງສິ່ງທີ່ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້ວ່າ "ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້"
໗. ສະແດງກຳທີ່ຕະຖາຄົດບໍ່ໄດ້ປະພຶດມາວ່າ "ຕະຖາຄົດໄດ້ປະພຶດມາ"
໘. ສະແດງກຳທີ່ຕະຖາຄົດໄດ້ປະພຶດມາວ່າ "ຕະຖາຄົດບໍ່ໄດ້ປະພຶດມາ"
໙. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ບັນຍັດໄວ້ວ່າ "ຕະຖາຄົດໄດ້ບັນຍັດໄວ້"

໑໐. ສະແດງສິ່ງທີ່ຕະຖາຄົດໄດ້ບັນຍັດໄວ້ວ່າ "ຕະຖາຄົດບໍ່ໄດ້ບັນຍັດໄວ້[១]"

ພິກຂຸເຫຼົ່ານັ້ນແຕກກັນ ແຍກກັນ ເຮັດສັງຄະກຳແຍກກັນ ສູດປາຕິໂມກແຍກກັນ ດ້ວຍເຫດ໑໐ ປະການນີ້ ອຸປາລີ ສົງຈະເປັນຜູ້ແຕກກັນດ້ວຍເຫດທີ່ນີ້ແລ"

**ສັງຄະເພທະສູດທີ ໗ ຈົບ**

# ໘. ສັງຄະສາມັກຄີສູດ

## ວ່າດ້ວຍເຫດໃຫ້ສົງສາມັກຄີກັນ

[໓໘] ພຣະອຸປາລີທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ "ສັງຄະສາມັກຄີ ສັງຄະສາມັກຄີ" ສົງຈະເປັນຜູ້ສາມັກຄີກັນດ້ວຍເຫດທີ່ໃດບໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປາລີ ພິກຂຸທັງຫຼາຍໃນທຳວິໄນນີ້

໑. ສະແດງອະທຳວ່າ "ເປັນອະທຳ"
໒. ສະແດງທຳວ່າ "ເປັນທຳ"
໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າ "ບໍ່ແມ່ນວິໄນ"
໔. ສະແດງວິໄນວ່າ "ເປັນວິໄນ"
໕. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້ວ່າ "ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້"
໖. ສະແດງສິ່ງທີ່ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້ວ່າ "ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້"
໗. ສະແດງກຳທີ່ຕະຖາຄົດບໍ່ໄດ້ປະພຶດມາວ່າ "ຕະຖາຄົດບໍ່ໄດ້ປະພຶດມາ"
໘. ສະແດງກຳທີ່ຕະຖາຄົດໄດ້ປະພຶດມາວ່າ "ຕະຖາຄົດໄດ້ປະພຶດມາ"
໙. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ບັນຍັດໄວ້ວ່າ "ຕະຖາຄົດບໍ່ໄດ້ບັນຍັດໄວ້"
໑໐. ສະແດງສິ່ງທີ່ຕະຖາຄົດໄດ້ບັນຍັດໄວ້ວ່າ "ຕະຖາຄົດໄດ້ບັນຍັດໄວ້"[໑]

ພິກຂຸເຫຼົ່ານັ້ນບໍ່ແຕກກັນ ບໍ່ແຍກກັນ ບໍ່ເຮັດສັງຄະກຳແຍກກັນ ບໍ່ສູດປາຕິໂມກແຍກກັນ ດ້ວຍເຫດ ໑໐ ປະການນີ້ ອຸປາລີ ສົງຈະເປັນຜູ້ສາມັກຄີກັນດ້ວຍເຫດທີ່ນີ້ແລ

**ສັງຄະສາມັກຄີສູດທີ ໘ ຈົບ**

# ໙. ປະຖົມອານັນທະສູດ

## ວ່າດ້ວຍພຣະອານົນທູນຖາມບັນຫາ ສູດທີ ໑

[໓໙] ຄັ້ງນັ້ນແລ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ "ສັງຄະເພດ ສັງຄະເພດ" ສົງຈະເປັນຜູ້ແຕກກັນດ້ວຍເຫດທໍ່ໃດນໍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອານົນ ພິກຂຸທັງຫຼາຍໃນທໍາວິໄນນີ້

໑. ສະແດງອະທໍາວ່າ "ເປັນທໍາ"
໒. ສະແດງທໍາວ່າ "ເປັນອະທໍາ"
໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າ "ເປັນວິໄນ"
໔. ສະແດງວິໄນວ່າ "ບໍ່ແມ່ນວິໄນ"
໕. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້ວ່າ "ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້"
໖. ສະແດງສິ່ງທີ່ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້ວ່າ "ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ ກ່າວໄວ້"
໗. ສະແດງກໍາທີ່ຕະຖາຄົດບໍ່ໄດ້ປະພຶດມາວ່າ "ຕະຖາຄົດໄດ້ປະພຶດມາ"
໘. ສະແດງກໍາທີ່ຕະຖາຄົດໄດ້ປະພຶດມາວ່າ "ຕະຖາຄົດບໍ່ໄດ້ປະພຶດມາ"
໙. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ບັນຍັດໄວ້ວ່າ "ຕະຖາຄົດໄດ້ບັນຍັດໄວ້"
໑໐. ສະແດງສິ່ງທີ່ຕະຖາຄົດໄດ້ບັນຍັດໄວ້ວ່າ "ຕະຖາຄົດບໍ່ໄດ້ບັນຍັດໄວ້"

ພິກຂຸເຫຼົ່ານັ້ນແຕກກັນ ແຍກກັນ ເຮັດສັງຄະກໍາແຍກກັນ ສູດປາຕິໂມກແຍກກັນ ດ້ວຍເຫດ ໑໐ ປະການນີ້ ອານົນ ສົງຈະເປັນຜູ້ແຕກກັນດ້ວຍເຫດທໍ່ນີ້ແລ"

ທ່ານພຣະອານົນທູນຖາມວ່າ "ບຸກຄົນຜູ້ທໍາລາຍສົງເຊິ່ງສາມັກຄີກັນ ຈະປະສົບຜົນ ອັນໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ບຸກຄົນຜູ້ທໍາລາຍສົງເຊິ່ງສາມັກຄີກັນນັ້ນຈະປະສົບຜົນອັນເຜັດຮ້ອນຢູ່ຕະຫຼອດກັບ"

ທ່ານພຣະອານົນທູນຖາມວ່າ "ຜົນອັນເຜັດຮ້ອນຢູ່ຕະຫຼອດກັບ ຄືອັນໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ບຸກຄົນຜູ້ທຳລາຍສົງ ເຊິ່ງສາມັກຄີກັນນັ້ນ ຈະສະເຫວີຍຜົນກຳຢູ່ໃນນະຮົກຕະຫຼອດກັບໜຶ່ງ"

ບຸກຄົນຜູ້ທຳລາຍສົງໃຫ້ແຕກກັນ ຍິນດີໃນການແຕກກັນ
ຢູ່ໃນອະທຳ ເປັນຜູ້ເຂົ້າເຖິງອະບາຍ ຢູ່ໃນນະຮົກຕະຫຼອດກັບ
ພາດຈາກນິບພານອັນເປັນແດນກະເສມຈາກໂຍຄະ໑
ສະເຫວີຍຜົນກຳຢູ່ໃນນະຮົກຕະຫຼອດກັບ
ຍ້ອນທຳລາຍສົງທີ່ສາມັກຄີກັນໃຫ້ແຕກແຍກກັນ

**ປະຖົມອານັນທະສູດທີ ໙ ຈົບ**

## ໑໐. ທຸຕິຍະອານັນທະສູດ

## ວ່າດ້ວຍພຣະອານົນທູນຖາມບັນຫາ ສູດທີ ໔

[໔໐] ທ່ານພຣະອານົນທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະອົງຕັດວ່າ "ສັງຄະສາມັກຄີ ສັງຄະສາມັກຄີ" ສົງຈະເປັນຜູ້ສາມັກຄີກັນດ້ວຍເຫດທໍ່ໃດນໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອານົນ ພິກຂຸທັງຫຼາຍໃນທຳວິໄນນີ້

໑. ສະແດງອະທຳວ່າ "ເປັນອະທຳ"
໒. ສະແດງທຳວ່າ "ເປັນທຳ"
໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າ "ບໍ່ແມ່ນວິໄນ"
໔. ສະແດງວິໄນວ່າ "ເປັນວິໄນ"
໕. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້ວ່າ "ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້"
໖. ສະແດງສິ່ງທີ່ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້ວ່າ "ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້"
໗. ສະແດງກຳທີ່ຕະຖາຄົດບໍ່ໄດ້ປະພຶດມາວ່າ "ຕະຖາຄົດບໍ່ໄດ້ປະພຶດມາ"
໘. ສະແດງກຳທີ່ຕະຖາຄົດໄດ້ປະພຶດມາວ່າ "ຕະຖາຄົດໄດ້ປະພຶດມາ"
໙. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ບັນຍັດໄວ້ວ່າ "ຕະຖາຄົດບໍ່ໄດ້ບັນຍັດໄວ້"
໑໐. ສະແດງສິ່ງທີ່ຕະຖາຄົດໄດ້ບັນຍັດໄວ້ວ່າ "ຕະຖາຄົດໄດ້ບັນຍັດໄວ້"

ພິກຂຸເຫຼົ່ານັ້ນ ບໍ່ແຕກກັນ ບໍ່ແຍກກັນ ບໍ່ເຮັດສັງຄະກຳແຍກກັນ ບໍ່ສູດປາຕິໂມກແຍກກັນ ດ້ວຍເຫດ ໑໐ ປະການນີ້ ອານົນ ສົງຈະເປັນຜູ້ສາມັກຄີກັນດ້ວຍເຫດທີ່ນີ້ແລ

ທ່ານພຣະອານົນທູນຖາມວ່າ “ບຸກຄົນຜູ້ສະໝານສົງ ເຊິ່ງແຕກກັນແລ້ວໃຫ້ສາມັກຄີກັນ ຈະປະສົບຜົນອັນໃດ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ“ອານົນ ບຸກຄົນຜູ້ສະໝານສົງເຊິ່ງແຕກກັນແລ້ວໃຫ້ສາມັກຄີກັນນັ້ນ ຈະປະສົບບຸນອັນປະເສີດ”

ທ່ານພຣະອານົນທູນຖາມວ່າ “ບຸນອັນປະເສີດຄືອັນໃດ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ“ອານົນ ບຸກຄົນຜູ້ສະໝານສົງເຊິ່ງແຕກກັນແລ້ວໃຫ້ສາມັກຄີກັນ ຈະບັນເທີງໃນສະຫວັນຕະຫຼອດກັບ”

ຄວາມພ້ອມພຽງແຫ່ງສົງ ເປັນເຫດໃຫ້ເກີດສຸກ
ແລະບຸກຄົນຜູ້ອະນຸເຄາະສົງຜູ້ພ້ອມພຽງກັນແລ້ວ
ຜູ້ຍິນດີແລ້ວໃນຄວາມພ້ອມພຽງກັນ ຢູ່ໃນທຳ
ຍ່ອມບໍ່ພາດຈາກທຳອັນເປັນແດນກະເສມຈາກໂຍຄະ
ຍ່ອມບັນເທີງໃນສະຫວັນຕະຫຼອດກັບ
ຍ້ອນສະໝານສົງໃຫ້ສາມັກຄີກັນ

**ທຸຕິຍະອານັນທະສູດທີ ໑໐ ຈົບ**

**ອຸປາລິວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອຸປາລິສູດ
໒. ປາຕິໂມກຂັດຖະປະນາສູດ
໓. ອຸບພາຫິກາສູດ
໔. ອຸປະສຳປະທາສູດ
໕. ນິດສະຍະສູດ
໖. ສາມະເນຣະສູດ
໗. ສັງຄະເພທະສູດ
໘. ສັງຄະສາມັກຄີສູດ
໙. ປະຖົມອານັນທະສູດ
໑໐. ທຸຕິຍະອານັນທະສູດ

# ໕. ອັກໂກສະວັກ

## ໝວດວ່າດ້ວຍການດ່າ

## ໑. ວິວາທະສູດ

### ວ່າດ້ວຍເຫດໃຫ້ເກີດຜິດຖຽງຂຶ້ນໃນສົງ

[໔໑] ຄັ້ງນັ້ນແລ ທ່ານພຣະອຸປາລີ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດ ເປັນປັດໄຈໃຫ້ເກີດຄວາມໝາງໃຈກັນ ຜິດກັນ ແກ່ງແຍ່ງ ແລະ ຖຽງກັນຂຶ້ນໃນສົງ ເຊິ່ງເປັນເຫດໃຫ້ພິກຂຸທັງຫຼາຍຢູ່ບໍ່ສຸກສະບາຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອຸປາລີ ພິກຂຸທັງຫຼາຍໃນທຳວິໄນນີ້

໑. ສະແດງອະທຳວ່າ "ເປັນທຳ"
໒. ສະແດງທຳວ່າ "ເປັນອະທຳ"
໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າ "ເປັນວິໄນ"
໔. ສະແດງວິໄນວ່າ "ບໍ່ແມ່ນວິໄນ"
໕. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້ວ່າ "ຕະຖາຄົດໄດ້ພາສິດໄວ້ ໄດ້ ກ່າວໄວ້"
໖. ສະແດງສິ່ງທີ່ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້ວ່າ "ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້"
໗. ສະແດງກຳທີ່ຕະຖາຄົດບໍ່ໄດ້ປະພຶດມາວ່າ "ຕະຖາຄົດໄດ້ປະພຶດມາ"
໘. ສະແດງກຳທີ່ຕະຖາຄົດໄດ້ປະພຶດມາວ່າ "ຕະຖາຄົດບໍ່ໄດ້ປະພຶດມາ"
໙. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ບັນຍັດໄວ້ວ່າ "ຕະຖາຄົດໄດ້ບັນຍັດໄວ້"
໑໐. ສະແດງສິ່ງທີ່ຕະຖາຄົດໄດ້ບັນຍັດໄວ້ວ່າ "ຕະຖາຄົດບໍ່ໄດ້ບັນຍັດໄວ້"

ອຸປາລີ ນີ້ເປັນເຫດ ນີ້ເປັນປັດໄຈໃຫ້ເກີດຄວາມໝາງໃຈກັນ ຜິດກັນ ແກ່ງແຍ່ງ ແລະ ຖຽງກັນຂຶ້ນໃນສົງ ເຊິ່ງເປັນເຫດໃຫ້ພິກຂຸທັງຫຼາຍຢູ່ບໍ່ສຸກສະບາຍ

**ວິວາທະສູດທີ ໑ ຈົບ**

# ໒. ປະຖົມວິວາທະມູລະສູດ

## ວ່າດ້ວຍມູນເຫດແຫ່ງການຜິດຖຽງ ສູດທີ ໑

[໔໒] ພຣະອຸປາລີທູນຖາມວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ມູນເຫດແຫ່ງການຜິດຖຽງມີທີ່ໃດນໍ? ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປາລີ ມູນເຫດແຫ່ງການຜິດຖຽງ ໑໐ ປະການ

ມູນເຫດແຫ່ງການຜິດຖຽງ ໑໐ ປະການ ອັນໃດແດ່ ຄື

ພິກຂຸທັງຫຼາຍໃນທຳວິໄນນີ້

໑. ສະແດງອະທຳວ່າ "ເປັນທຳ"
໒. ສະແດງທຳວ່າ "ເປັນອະທຳ"
໓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າ "ເປັນວິໄນ"
໔. ສະແດງວິໄນວ່າ "ບໍ່ແມ່ນວິໄນ"
໕. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້ວ່າ "ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້"
໖. ສະແດງສິ່ງທີ່ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້ວ່າ "ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້"
໗. ສະແດງກຳທີ່ຕະຖາຄົດບໍ່ໄດ້ປະພຶດມາວ່າ "ຕະຖາຄົດໄດ້ປະພຶດມາ"
໘. ສະແດງກຳທີ່ຕະຖາຄົດໄດ້ປະພຶດມາວ່າ "ຕະຖາຄົດບໍ່ໄດ້ປະພຶດມາ"
໙. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ບັນຍັດໄວ້ວ່າ "ຕະຖາຄົດໄດ້ບັນຍັດໄວ້"
໑໐. ສະແດງສິ່ງທີ່ຕະຖາຄົດໄດ້ບັນຍັດໄວ້ວ່າ "ຕະຖາຄົດບໍ່ໄດ້ບັນຍັດໄວ້"

ອຸປາລີ ມູນເຫດແຫ່ງການຜິດຖຽງ ໑໐ ປະການນີ້ແລ

**ປະຖົມວິວາທະມູລະສູດທີ ໒ ຈົບ**

# ໓. ທຸຕິຍະວິວາທະມູລະສູດ

## ວ່າດ້ວຍມູນເຫດແຫ່ງການຜິດຖຽງ ສູດທີ ໒

[໔໓] ພຣະອຸປາລີທູນຖາມວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ມູນເຫດແຫ່ງການຜິດຖຽງມີ ທີ່ໃດນໍ? ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ອຸປາລີ ມູນເຫດແຫ່ງການຜິດຖຽງ ໑໐ ປະການ

ມູນເຫດແຫ່ງການຜິດຖຽງ ໑໐ ປະການ ອັນໃດແດ່ ຄື

ພິກຂຸທັງຫຼາຍໃນທຳວິໄນນີ້

໑. ສະແດງອະນາບັດວ່າ "ເປັນອາບັດ"
໒. ສະແດງອາບັດວ່າ "ເປັນອະນາບັດ"
໓. ສະແດງອາບັດເບົາວ່າ "ເປັນອາບັດໜັກ"
໔. ສະແດງອາບັດໜັກວ່າ "ເປັນອາບັດເບົາ"
໕. ສະແດງອາບັດຊົ່ວຫຍາບ[໑]ວ່າ "ບໍ່ເປັນອາບັດຊົ່ວຫຍາບ"
໖. ສະແດງອາບັດບໍ່ຊົ່ວຫຍາບວ່າ "ເປັນອາບັດຊົ່ວຫຍາບ"
໗. ສະແດງອາບັດມີສ່ວນເຫຼືອວ່າ "ເປັນອາບັດບໍ່ມີສ່ວນເຫຼືອ[໒]"
໘. ສະແດງອາບັດບໍ່ມີສ່ວນເຫຼືອວ່າ "ເປັນອາບັດມີສ່ວນເຫຼືອ"
໙. ສະແດງອາບັດທີ່ເຮັດຄືນໄດ້ວ່າ "ເປັນອາບັດທີ່ເຮັດຄືນບໍ່ໄດ້"
໑໐. ສະແດງອາບັດທີ່ເຮັດຄືນບໍ່ໄດ້ວ່າ "ເປັນອາບັດທີ່ເຮັດຄືນໄດ້[໓]"

ອຸປາລີ ມູນເຫດແຫ່ງການຜິດຖຽງ ໑໐ ປະການນີ້ແລ

**ທຸຕິຍະວິວາທະມູລະສູດທີ ໓ ຈົບ**

## ໔. ກຸສິນາຣະສູດ

## ວ່າດ້ວຍພຣະທຳມະເທດສະໜາທີ່ນະຄອນກຸສິນາຣາ

[໔໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ເຂດປ່າເປັນທີ່ປະກອບ ການບູຊາເຂດນະຄອນກຸສິນາຣາ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ພິກຂຸຜູ້ເປັນໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາທຳ ໕ ປະການໃນຕົນ ເພິ່ງຕັ້ງໝັ້ນທຳ ໕ ປະການໄວ້ໃນຕົນແລ້ວຈຶ່ງໂຈດຜູ້ອື່ນ

ທຳທີ່ພິກຂຸຜູ້ເປັນໂຈດເພິ່ງພິຈາລະນາໄວ້ໃນຕົນ ໕ ປະການ ອັນໃດແດ່ ຄື

໑. ພິກຂຸຜູ້ເປັນໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາແນວນີ້ວ່າ "ເຮົາເປັນຜູ້ມີກາຍສະມາຈານບໍລິສຸດ ເຮົາເປັນຜູ້ປະກອບກາຍສະມາຈານບໍລິສຸດ ບໍ່ຂາດ ບໍ່

ບົກພ່ອງບໍ ທຳນີ້ມີພ້ອມຢູ່ແກ່ເຮົາບໍ?" ຫາກພິກຂຸບໍ່ເປັນຜູ້ມີກາຍສະມາຈານ ບໍລິສຸດ ບໍ່ໄດ້ເປັນຜູ້ປະກອບກາຍສະມາຈານບໍລິສຸດ ບໍ່ຂາດ ບໍ່ບົກພ່ອງ ກໍຈະມີຜູ້ວ່າກ່າວພິກຂຸນັ້ນໄດ້ວ່າ "ເຊີນທ່ານຕັ້ງໃຈຮູ້ຄວາມປະພຶດທາງກາຍກ່ອນເທີ້ນ" ຈະມີຜູ້ວ່າກ່າວພິກຂຸນັ້ນໄດ້ດັ່ງນີ້

໔. ພິກຂຸຜູ້ເປັນໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາແນວນີ້ວ່າ "ເຮົາເປັນຜູ້ມີວະຈີສະມາຈານບໍລິສຸດ ເຮົາເປັນຜູ້ປະກອບວະຈີສະມາຈານບໍລິສຸດ ບໍ່ຂາດ ບໍ່ບົກພ່ອງບໍ ທຳນີ້ມີພ້ອມຢູ່ແກ່ເຮົາບໍ" ຫາກພິກຂຸບໍ່ເປັນຜູ້ມີວະຈີສະມາຈານ ບໍລິສຸດ ບໍ່ເປັນຜູ້ປະກອບວະຈີສະມາຈານບໍລິສຸດ ບໍ່ຂາດ ບໍ່ບົກພ່ອງ ກໍຈະມີຜູ້ວ່າກ່າວພິກຂຸນັ້ນໄດ້ວ່າ "ເຊີນທ່ານຕັ້ງໃຈຮູ້ຄວາມປະພຶດທາງວາຈາກ່ອນເທີ້ນ" ຈະມີຜູ້ວ່າກ່າວພິກຂຸນັ້ນໄດ້ດັ່ງນີ້

໓. ພິກຂຸຜູ້ເປັນໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາແນວນີ້ວ່າ "ເຮົາເຂົ້າໄປຕັ້ງເມດຕາຈິດບໍ່ອາຄາດໃນເພື່ອນພົມມະຈາຣີທັງຫຼາຍແລ້ວບໍ ທຳນີ້ມີພ້ອມຢູ່ແກ່ເຮົາບໍ" ຫາກພິກຂຸຍັງບໍ່ເຂົ້າໄປຕັ້ງເມດຕາຈິດບໍ່ອາຄາດໃນເພື່ອນພົມມະຈາຣີທັງຫຼາຍແລ້ວ ກໍຈະມີຜູ້ວ່າກ່າວພິກຂຸນັ້ນໄດ້ວ່າ "ເຊີນທ່ານເຂົ້າໄປຕັ້ງເມດຕາຈິດໃນເພື່ອນພົມມະຈາຣີທັງຫຼາຍສາກ່ອນເທີ້ນ" ຈະມີຜູ້ວ່າກ່າວພິກຂຸນັ້ນໄດ້ດັ່ງນີ້

໔. ພິກຂຸຜູ້ເປັນໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາແນວນີ້ວ່າ "ເຮົາເປັນ ພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນແລ້ວ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິບໍ ທຳນີ້ມີພ້ອມຢູ່ແກ່ເຮົາບໍ" ຫາກພິກຂຸບໍ່ເປັນພະຫູສູດ ບໍ່ຊົງສຸຕະ ບໍ່ສັ່ງສົມສຸຕະ ບໍ່ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະ ບໍລິສຸດ ບໍລິບູນ ຄົບຖ້ວນ ຊົງຈຳໄວ້ບໍ່ໄດ້ ບໍ່ຄ່ອງປາກ ບໍ່ຂຶ້ນໃຈ ບໍ່ແທງຕະຫຼອດດີດ້ວຍທິດຖິ ກໍຈະມີຜູ້ວ່າກ່າວພິກຂຸນັ້ນໄດ້ວ່າ "ເຊີນທ່ານຮ່ຳຮຽນຄຳພີສາກ່ອນເທີ້ນ" ຈະມີຜູ້ວ່າກ່າວພິກຂຸນັ້ນໄດ້ດັ່ງນີ້

໕. ພິກຂຸຜູ້ເປັນໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາແນວນີ້ວ່າ "ເຮົາຊົງຈຳປາຕິໂມກທັງສອງໄດ້ດີ ຈຳແນກໄດ້ດີ ໃຫ້ເປັນໄປໄດ້ດີໂດຍພິດສະດານ ວິນິດໄສໄດ້ດີໂດຍສູດ ໂດຍອະນຸພະຍັນຊະນະບໍ ທຳນີ້ມີພ້ອມຢູ່ແກ່ເຮົາບໍ" ຫາກ

ພິກຂຸບໍ່ຊົງຈຳ ປາຕິໂມກທັງສອງໄດ້ດີ ບໍ່ຈຳແນກໄດ້ດີ ບໍ່ໃຫ້ເປັນໄປໄດ້ດີໂດຍພິດສະດານ ບໍ່ວິນິດໄສໄດ້ດີໂດຍສູດ ໂດຍອະນຸພະຍັນຊະນະ ພິກຂຸນັ້ນຫາກຖືກຖາມວ່າ "ທ່ານຜູ້ມີອາຍຸ ສິກຂາບົດນີ້ ພຣະຜູ້ມີພຣະພາກເຈົ້າຕັດໄວ້ຢູ່ໃສ" ແກ້ບໍ່ໄດ້ກໍຈະມີຜູ້ວ່າກ່າວພິກຂຸນັ້ນໄດ້ວ່າ "ເຊີນທ່ານໄປສຶກສາວິໄນສາກ່ອນເທີ້ນ" ຈະມີຜູ້ວ່າກ່າວພິກຂຸນັ້ນໄດ້ດັ່ງນີ້

ທຳທີ່ພິກຂຸຜູ້ເປັນໂຈດເພິ່ງພິຈາລະນາໄວ້ໃນຕົນ ໕ ປະການນີ້

ທຳທີ່ພິກຂຸຜູ້ເປັນໂຈດເພິ່ງຕັ້ງໝັ້ນໄວ້ໃນຕົນ ໕ ປະການ ອັນໃດແດ່ ຄື

໑. ເຮົາຈັກກ່າວໃນເວລາອັນຄວນ ຈັກບໍ່ກ່າວໃນເວລາອັນບໍ່ຄວນ
໒. ເຮົາຈັກກ່າວຄຳເວົ້າຈິງ ຈັກບໍ່ກ່າວຄຳເວົ້າບໍ່ຈິງ
໓. ເຮົາຈັກກ່າວຄຳເວົ້າອ່ອນຫວານ ຈັກບໍ່ກ່າວຖ້ອຍຄຳຫຍາບ
໔. ເຮົາຈັກກ່າວຄຳເວົ້າອັນປະກອບດ້ວຍປະໂຫຍດ ຈັກບໍ່ກ່າວຄຳເວົ້າອັນບໍ່ປະກອບດ້ວຍປະໂຫຍດ
໕. ເຮົາຈັກມີເມດຕາຈິດກ່າວ ເຮົາຈັກບໍ່ເພ່ງໂທດກ່າວ

ທຳທີ່ພິກຂຸຜູ້ເປັນໂຈດເພິ່ງຕັ້ງໝັ້ນໄວ້ໃນຕົນ ໕ ປະການນີ້

ພິກຂຸທັງຫຼາຍ ພິກຂຸຜູ້ເປັນໂຈດປະສົງຈະໂຈດຜູ້ອື່ນ ເພິ່ງພິຈາລະນາທຳ ໕ ປະການນີ້ໄວ້ໃນຕົນ ເພິ່ງຕັ້ງໝັ້ນທຳ ໕ ປະການນີ້ໄວ້ໃນຕົນແລ້ວຈຶ່ງໂຈດຜູ້ອື່ນ

**ກຸສິນາຣະສູດທີ່ ໔ ຈົບ**

## ໕. ຣາຊັນເຕປຸຣັບປະເວສະນະສູດ

## ວ່າດ້ວຍໂທດໃນການເຂົ້າໄປໃນພະຣາດຊະວັງຊັ້ນໃນ

[໔໕] ພິກຂຸທັງຫຼາຍ ໂທດໃນການເຂົ້າໄປໃນພະຣາດຊະວັງຊັ້ນໃນ ໑໐ ປະການ ໂທດໃນການເຂົ້າໄປໃນພະຣາດຊະວັງຊັ້ນໃນ ໑໐ ປະການ ອັນໃດແດ່ ຄື

໑. ພຣະຣາຊາໃນໂລກນີ້ປະທັບຢູ່ກັບພຣະມະເຫສີ ພິກຂຸເຂົ້າໄປໃນບ່ອນນັ້ນ ພຣະມະເຫສີຊົງເຫັນພິກຂຸນັ້ນແລ້ວຊົງຍິ້ມແຍ້ມ ຫຼືພິກຂຸເຫັນພຣະມະເຫສີແລ້ວຍິ້ມແຍ້ມ ພຣະຣາຊາຈະຊົງສົງໄສໃນອາການນັ້ນແນວນີ້ວ່າ "ຄົນທັງ ໒ ນີ້ຄົງໄດ້

ເຮັດ ຫຼື ຈັກເຮັດກຳແນວໃດແນວໜຶ່ງເປັນແນ່" ນີ້ເປັນໂທດໃນການເຂົ້າໄປໃນພະຣາດຊະວັງຊັ້ນໃນປະການທີ ໑

໔. ພຣະຣາຊາຊົງມີພຣະຣາດຊະກິດຫຼາຍ ສະເດັດໄປຫາຍິງຄົນໃດຄົນໜຶ່ງແລ້ວຊົງຣະນຶກບໍ່ໄດ້ ຍິງນັ້ນຖືພາກັບພຣະອົງ ພຣະຣາຊາກໍຈະຊົງສົງໄສໃນການຖືພານັ້ນແນວນີ້ວ່າ "ເວັ້ນບັນພະຊິດສາແລ້ວ ໃຜອື່ນຈະເຂົ້າມາໃນ ພະຣາດຊະວັງຊັ້ນໃນນີ້ບໍ່ໄດ້ ກຳນີ້ມັກຈະເປັນການກະທຳຂອງບັນພະຊິດ" ນີ້ເປັນໂທດໃນການເຂົ້າໄປໃນພະຣາດຊະວັງຊັ້ນໃນປະການທີ ໔

໓. ຣັດຕະນະແນວໃດແນວໜຶ່ງໃນພະຣາດຊະວັງຊັ້ນໃນຫາຍໄປ ພຣະຣາຊາກໍຈະຊົງສົງໄສໃນການທີ່ຣັດຕະນະນັ້ນຫາຍໄປນັ້ນວ່າ "ເວັ້ນບັນພະຊິດສາແລ້ວ ໃຜອື່ນຈະເຂົ້າມາໃນພະຣາດຊະວັງຊັ້ນໃນນີ້ບໍ່ໄດ້ ກຳນີ້ມັກຈະເປັນການກະທຳຂອງບັນພະຊິດ" ນີ້ເປັນໂທດໃນການເຂົ້າໄປໃນພະຣາດຊະວັງຊັ້ນໃນປະການທີ ໓

໔. ເລື້ອງລັບພາຍໃນພະຣາດຊະວັງຊັ້ນໃນກະຈາຍໄປອອກມາພາຍນອກ ພຣະຣາຊາກໍຈະຊົງສົງໄສໃນເລື້ອງລັບທີ່ກະຈາຍໄປອອກມາພາຍນອກນັ້ນແນວນີ້ວ່າ "ເວັ້ນບັນພະຊິດສາແລ້ວ ໃຜອື່ນຈະເຂົ້າມາໃນພະຣາດຊະວັງຊັ້ນໃນນີ້ບໍ່ໄດ້ ກຳນີ້ມັກຈະເປັນການກະທຳຂອງບັນພະຊິດ" ນີ້ເປັນໂທດໃນການເຂົ້າໄປໃນພະຣາດຊະວັງ ຊັ້ນໃນປະການທີ ໔

໕. ໃນພະຣາດຊະວັງຊັ້ນໃນ ບິດາປາຖະໜາຈະຂ້າບຸດ ຫຼືບຸດປາຖະໜາຈະຂ້າບິດາ ຄົນທັງ ໔ ນັ້ນ ຕ່າງກໍຈະສົງໄສແນວນີ້ວ່າ "ເວັ້ນບັນພະຊິດສາແລ້ວ ໃຜອື່ນ ຈະເຂົ້າມາໃນພະຣາດຊະວັງຊັ້ນໃນນີ້ບໍ່ໄດ້ ກຳນີ້ມັກຈະເປັນການກະທຳຂອງບັນພະຊິດ" ນີ້ເປັນໂທດໃນການເຂົ້າໄປໃນພະຣາດຊະວັງຊັ້ນໃນປະການທີ ໕

໖. ພຣະຣາຊາຊົງຕັ້ງບຸກຄົນຜູ້ຄວນແກ່ຕຳແໜ່ງຕ່ຳໄວ້ໃນຕຳແໜ່ງສູງ ຄົນທັງຫຼາຍທີ່ບໍ່ພໍໃຈການແຕ່ງຕັ້ງນັ້ນ ຈະມີຄວາມສົງໄສແນວນີ້ວ່າ "ພຣະຣາຊາຊົງຄຸກຄີກັບບັນພະຊິດ ກຳນີ້ມັກຈະເປັນການກະທຳຂອງບັນພະຊິດ" ນີ້ເປັນໂທດໃນການເຂົ້າໄປໃນພະຣາດຊະວັງຊັ້ນໃນປະການທີ ໖

໗. ພຣະຣາຊາຊົງຕັ້ງບຸກຄົນຜູ້ຄວນແກ່ຕຳແໜ່ງສູງໄວ້ໃນຕຳແໜ່ງຕ່ຳ ຄົນທັງຫຼາຍທີ່ບໍ່ພໍໃຈການແຕ່ງຕັ້ງນັ້ນ ຈະມີຄວາມສົງໄສແນວນີ້ວ່າ "ພຣະຣາຊາຊົງຄຸກຄີກັບບັນພະຊິດ ກຳນີ້ມັກຈະເປັນການກະທຳຂອງບັນພະຊິດ" ນີ້ເປັນໂທດໃນການເຂົ້າໄປໃນພະຣາດຊະວັງຊັ້ນໃນປະການທີ ໗

໗. ພຣະຣາຊາຊົງສົ່ງກອງທັບໄປໃນການບໍ່ສົມຄວນ ຄົນທັງຫຼາຍທີ່ບໍ່ພໍໃຈໃນການສົ່ງກອງທັບໄປນັ້ນ ຈະມີຄວາມສົງໄສແນວນີ້ວ່າ "ພຣະຣາຊາຊົງຄຸກຄາມບັນພະຊິດ ກໍານີ້ມັກຈະເປັນການກະທໍາຂອງບັນພະຊິດ" ນີ້ເປັນໂທດໃນການເຂົ້າໄປໃນພະຣາດຊະວັງຊັ້ນໃນປະການທີ ໗

໙. ພຣະຣາຊາຊົງສົ່ງກອງທັບໄປໃນການສົມຄວນ ຮັບສັ່ງໃຫ້ກັບສາໃນລະຫວ່າງທາງ ຄົນທັງຫຼາຍທີ່ບໍ່ພໍໃຈໃນການໃຫ້ກອງທັບກັບສາໃນລະຫວ່າງທາງນັ້ນ ຈະມີຄວາມສົງໄສແນວນີ້ວ່າ "ພຣະຣາຊາຊົງຄຸກຄາມບັນພະຊິດ ກໍານີ້ມັກຈະເປັນການກະທໍາຂອງບັນພະຊິດ" ນີ້ເປັນໂທດໃນການເຂົ້າໄປໃນພະຣາດຊະວັງຊັ້ນໃນປະການທີ ໙

໑໐. ພະຣາດຊະວັງຊັ້ນໃນເປັນທີ່ຄັບຄັ່ງໄປນໍາຊ້າງ ຄັບຄັ່ງໄປນໍາມ້າ ຄັບຄັ່ງໄປນໍາລົດ ມີຮູບ ສຽງ ກິ່ນ ຣົດ ແລະໂຜດຖັບພະເປັນບ່ອນຕັ້ງແຫ່ງຄວາມກໍາໜັດ ເຊິ່ງເປັນສິ່ງທີ່ບໍ່ສົມຄວນແກ່ບັນພະຊິດ ນີ້ເປັນໂທດໃນການເຂົ້າໄປໃນພະຣາດຊະວັງຊັ້ນໃນປະການທີ ໑໐

ພິກຂຸທັງຫຼາຍ ໂທດໃນການເຂົ້າໄປໃນພະຣາດຊະວັງຊັ້ນໃນ ໑໐ ປະການນີ້ແລ

**ຣາຊັນເຕປຸຣັບປະເວສະນະສູດທີ ໕ ຈົບ**

# ໖. ສັກກະສູດ

## ວ່າດ້ວຍອຸປາສົກອຸປາສິກາຊາວແຄວັ້ນສັກກະ

[໔໖] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ນິໂຄທາຣາມ ເຂດເມືອງກະບິນລະພັດ ໃນແຄວັ້ນສັກກະ ຄັ້ງນັ້ນແລ ອຸປາສົກອຸປາສິກາຊາວແຄວັ້ນສັກກະເປັນຈໍານວນຫຼາຍໄດ້ພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ໃນມື້ອຸໂປສົດ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດຖາມອຸປາສົກອຸປາສິກາຊາວແຄວັ້ນສັກກະດັ່ງນີ້ວ່າ

"ອຸປາສົກອຸປາສິກາຊາວແຄວັ້ນສັກກະທັງຫຼາຍ ທ່ານທັງຫຼາຍພາກັນຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ແດ່ບໍນໍ"

ອຸປາສົກອຸປາສິກາຊາວແຄວັ້ນສັກກະເຫຼົ່ານັ້ນຂາບທູນວ່າ "ບາງເວລາຂ້າພຣະອົງທັງຫຼາຍພາກັນຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ແຕ່ບາງເວລາກໍບໍ່ໄດ້ພາກັນຮັກສາຂ້ານ້ອຍ"

“ອຸປາສົກອຸປາສິກາຊາວແຄວ້ນສັກກະທັງຫຼາຍ ບໍ່ແມ່ນລາບຂອງທ່ານທັງຫຼາຍ ທ່ານທັງຫຼາຍໄດ້ຊົ່ວແລ້ວ ທີ່ເມື່ອຊີວິດມີໄພຍ້ອນຄວາມໂສກ ມີໄພຍ້ອນຄວາມຕາຍແນວນີ້ ບາງເວລາທ່ານທັງຫຼາຍພາກັນຮັກສາອຸໂປສົດທີ່ປະກອບດ້ວຍອົງ ໘ ແຕ່ບາງເວລາກໍບໍ່ໄດ້ພາກັນຮັກສາ

ທ່ານທັງຫຼາຍເຂົ້າໃຈເລື່ອງນັ້ນແນວໃດ ບຸກຄົນລາງຄົນໃນໂລກນີ້ເພິ່ງຫາຊັບໄດ້ມື້ລະເຄິ່ງກະຫາປະນະດ້ວຍວຽກງານຊອບທຳ ໂດຍບໍ່ແຕະຕ້ອງອະກຸສົນກຳເລີຍ ສົມຄວນຈະກ່າວໄດ້ບໍວ່າ “ເປັນຄົນສະຫຼາດ ມີຄວາມດຸໝັ່ນຂະຫຍັນພຽນ”

“ສົມຄວນກ່າວໄດ້ຢ່າງນັ້ນ ຂ້ານ້ອຍ”

“ອຸປາສົກອຸປາສິກາຊາວແຄວ້ນສັກກະທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື່ອງນັ້ນແນວໃດ ບຸກຄົນລາງຄົນໃນໂລກນີ້ເພິ່ງຫາຊັບໄດ້ມື້ລະ ໑ ກະຫາປະນະ ຯລຯ ໒ ກະຫາປະນະ ຯລຯ ໓ ກະຫາປະນະ ຯລຯ ໔ ກະຫາປະນະ ຯລຯ ໕ ກະຫາປະນະ ຯລຯ ໖ ກະຫາປະນະ ຯລຯ ໗ ກະຫາປະນະ ຯລຯ ໘ ກະຫາປະນະ ຯລຯ ໙ ກະຫາປະນະ ຯລຯ ໑໐ ກະຫາປະນະ ຯລຯ ໒໐ ກະຫາປະນະ ຯລຯ ໓໐ ກະຫາປະນະ ຯລຯ ໔໐ ກະຫາປະນະ ຯລຯ ໕໐ ກະຫາປະນະ ຯລຯ ໑໐໐ ກະຫາປະນະ ດ້ວຍວຽກງານຊອບທຳ ໂດຍບໍ່ແຕະຕ້ອງອະກຸສົນກຳເລີຍ ສົມຄວນຈະກ່າວໄດ້ບໍວ່າ “ເປັນຄົນສະຫຼາດ ມີຄວາມດຸໝັ່ນຂະຫຍັນພຽນ”

“ສົມຄວນກ່າວໄດ້ຢ່າງນັ້ນ ຂ້ານ້ອຍ”

“ອຸປາສົກອຸປາສິກາຊາວແຄວ້ນສັກກະທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື່ອງນັ້ນແນວໃດ ບຸກຄົນນັ້ນ ເມື່ອຫາຊັບໄດ້ມື້ລະ ໑໐໐ ກະຫາປະນະ ໑,໐໐໐ ກະຫາປະນະ ກໍເກັບຊັບທີ່ຕົນໄດ້ໄວ້ ເປັນຜູ້ມີຊີວິດ ໑໐໐ ປີ ຈະເພິ່ງໄດ້ໂພຄະສົມບັດກອງໃຫຍ່ແດ່ບໍນໍ”

“ໄດ້ ຂ້ານ້ອຍ”

“ອຸປາສົກອຸປາສິກາຊາວແຄວ້ນສັກກະທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື່ອງນັ້ນແນວໃດ ບຸກຄົນນັ້ນຈະເພິ່ງສະເຫວີຍສຸກແນວດຽວຢູ່ຕະຫຼອດຄືນໜຶ່ງ ມື້ໜຶ່ງ ເຄິ່ງຄືນຫຼືເຄິ່ງມື້ອັນມີໂພຄະສົມບັດນັ້ນເປັນເຫດ ມີໂພຄະສົມບັດນັ້ນເປັນປັດໄຈ ມີໂພຄະສົມບັດນັ້ນເປັນບ່ອນຕັ້ງໄດ້ແດ່ບໍນໍ”

“ບໍ່ໄດ້ ຂ້ານ້ອຍ”

“ຂໍ້ນັ້ນຍ້ອນເຫດໃດ”

“ຍ້ອນກາມທັງຫຼາຍເປັນຂອງບໍ່ທ່ຽງ ວ່າງເປົ່າ ຫຼອກລວງ[១] ມີຄວາມສູນຫາຍໄປເປັນທຳມະດາ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸປາສົກອຸປາສິກາຊາວແຄວ້ນສັກກະທັງຫຼາຍ ສ່ວນສາວົກຂອງເຮົາໃນທຳວິໄນນີ້ ເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈປະຕິບັດຕາມທີ່ເຮົາພ່ຳສອນຢູ່ຕະຫຼອດ ໑໐ ປີ ເພິ່ງເປັນຜູ້ສະເຫວີຍຄວາມສຸກຢ່າງແນ່ນອນຢູ່ຕະຫຼອດ ໑໐໐ ປີກໍມີ ໑໐,໐໐໐ ປີກໍມີ ໑໐໐,໐໐໐ ປີກໍມີ ແລະສາວົກຂອງເຮົານັ້ນແລ ເປັນສະກະທາຄາມີກໍມີ ເປັນອະນາຄາມີກໍມີ ເປັນໂສດາບັນບໍ່ປະຕິບັດຜິດພາດກໍມີ ບໍ່ຈຳເປັນຕ້ອງເວົ້າເຖິງ ໑໐ ປີ

ສາວົກຂອງເຮົາໃນທຳວິໄນນີ້ ເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈປະຕິບັດຕາມທີ່ເຮົາພ່ຳສອນຢູ່ຕະຫຼອດ ໙ ປີ ຯລຯ ໘ ປີ ຯລຯ ໗ ປີ ຯລຯ ໖ ປີ ຯລຯ ໕ ປີ ຯລຯ ໔ ປີ ຯລຯ ໓ ປີ ຯລຯ ໒ ປີ ຯລຯ ໑ ປີ ເພິ່ງເປັນຜູ້ສະເຫວີຍຄວາມສຸກຢ່າງແນ່ນອນຢູ່ຕະຫຼອດ ໑໐໐ ປີກໍມີ ໑໐,໐໐໐ ປີກໍມີ ໑໐໐,໐໐໐ ປີກໍມີ ແລະສາວົກຂອງເຮົານັ້ນແລ ເປັນສະກະທາຄາມີກໍມີ ເປັນອະນາຄາມີກໍມີ ເປັນໂສດາບັນບໍ່ປະຕິບັດຜິດພາດກໍມີ ບໍ່ຈຳເປັນຕ້ອງເວົ້າເຖິງ ໑ ປີ

ສາວົກຂອງເຮົາໃນທຳວິໄນນີ້ ເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈປະຕິບັດຕາມທີ່ເຮົາພ່ຳສອນຢູ່ຕະຫຼອດ ໑໐ ເດືອນ ເພິ່ງເປັນຜູ້ສະເຫວີຍຄວາມສຸກຢ່າງແນ່ນອນຢູ່ຕະຫຼອດ ໑໐໐ ປີກໍມີ ໑໐,໐໐໐ ປີກໍມີ ໑໐໐,໐໐໐ ປີກໍມີ ແລະສາວົກຂອງເຮົານັ້ນແລ ເປັນສະກະທາຄາມີກໍມີ ເປັນອະນາຄາມີກໍມີ ເປັນໂສດາບັນບໍ່ປະຕິບັດຜິດພາດກໍມີ ບໍ່ຈຳເປັນຕ້ອງເວົ້າເຖິງ ໑໐ ເດືອນ

ສາວົກຂອງເຮົາໃນທຳວິໄນນີ້ ເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈປະຕິບັດຕາມທີ່ເຮົາພ່ຳສອນຢູ່ຕະຫຼອດ ໙ ເດືອນ ຯລຯ ໘ ເດືອນ ຯລຯ ໗ ເດືອນ ຯລຯ ໖ ເດືອນ ຯລຯ ໕ ເດືອນ ຯລຯ ໔ ເດືອນ ຯລຯ ໓ ເດືອນ ຯລຯ ໒ ເດືອນ ຯລຯ ໑ ເດືອນ ຯລຯ ເຄິ່ງເດືອນ ເພິ່ງເປັນຜູ້ສະເຫວີຍຄວາມສຸກຢ່າງແນ່ນອນຢູ່ຕະຫຼອດ ໑໐໐ ປີກໍມີ ໑໐,໐໐໐ ປີກໍມີ ໑໐໐,໐໐໐ ປີກໍມີ ແລະສາວົກຂອງເຮົານັ້ນແລ ເປັນສະກະທາຄາມີກໍມີ ເປັນອະນາຄາມີກໍມີ ເປັນໂສດາບັນບໍ່ປະຕິບັດຜິດພາດກໍມີ ບໍ່ຈຳເປັນຕ້ອງເວົ້າເຖິງເຄິ່ງເດືອນ

ສາວົກຂອງເຮົາໃນທຳວິໄນນີ້ ເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈປະຕິບັດຕາມທີ່ເຮົາພ່ຳສອນຢູ່ຕະຫຼອດ ໑໐ ຄືນ ໑໐ ມື້ ເພິ່ງເປັນຜູ້ສະເຫວີຍຄວາມສຸກຢ່າງແນ່ນອນຢູ່ຕະຫຼອດ ໑໐໐ ປີກໍມີ ໑໐,໐໐໐ ປີກໍມີ ໑໐໐,໐໐໐ ປີກໍມີ ແລະສາວົກຂອງເຮົານັ້ນແລ ເປັນສະກະທາຄາມີກໍມີ ເປັນອະນາຄາມີກໍມີ ເປັນໂສດາບັນບໍ່ປະຕິບັດຜິດພາດກໍມີ ບໍ່ຈຳເປັນຕ້ອງເວົ້າເຖິງ ໑໐ ຄືນ ໑໐ ມື້

ສາວົກຂອງເຮົາໃນທຳວິໄນນີ້ ເປັນຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈປະຕິບັດຕາມທີ່ເຮົາພ່ຳສອນຢູ່ຕະຫຼອດ ໙ ຄືນ ໙ ມື້ ຯລຯ ໘ ຄືນ ໘ ມື້ ຯລຯ ໗ ຄືນ ໗ ມື້

ໆລໆ ໖ ຄືນ ໖ ມື້ ໆລໆ ໕ ຄືນ ໕ ມື້ ໆລໆ ໔ ຄືນ ໔ ມື້ ໆລໆ ໓ ຄືນ ໓ ມື້ ໆລໆ ໒ ຄືນ ໒ ມື້ ໆລໆ ໑ ຄືນ ໑ ມື້ ເພິ່ງເປັນຜູ້ສະເຫວີຍຄວາມສຸກຢ່າງແນ່ນອນຢູ່ຕະຫຼອດ ໑໐໐ ປີກໍມີ ໑໐,໐໐໐ ປີກໍມີ ໑໐໐,໐໐໐ ປີກໍມີ ແລະສາວົກຂອງເຮົານັ້ນແລ ເປັນສະກະທາຄາມີກໍມີ ເປັນອະນາຄາມີກໍມີ ເປັນໂສດາບັນບໍ່ປະຕິບັດຜິດພາດກໍມີ ອຸປາສົກອຸປາສິກາຊາວແຄວ້ນສັກກະທັງຫຼາຍ ບໍ່ແມ່ນລາບຂອງທ່ານທັງຫຼາຍ ທ່ານທັງຫຼາຍໄດ້ຊົ່ວແລ້ວ ທີ່ເມື່ອຊີວິດມີໄພຍ້ອນຄວາມໂສກ ມີໄພຍ້ອນຄວາມຕາຍແບບນີ້ ບາງເວລາທ່ານທັງຫຼາຍພາກັນຮັກສາອຸໂປສົດທີ່ປະກອບດ້ວຍອົງ ໗ ແຕ່ບາງເວລາກໍບໍ່ໄດ້ພາກັນຮັກສາ

ອຸປາສົກອຸປາສິກາຊາວແຄວ້ນສັກກະທັງຫຼາຍຂາບທູນວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງເຫຼົ່ານີ້ຈັກພາກັນຮັກສາອຸໂປສົດທີ່ປະກອບດ້ວຍອົງ ໗ ຕັ້ງແຕ່ບັດນີ້ເປັນຕົ້ນໄປ”

**ສັກກະສູດທີ ໖ ຈົບ**

## ໗. ມະຫາລິສູດ
## ວ່າດ້ວຍເຈົ້າລິດສະຫວີພຣະນາມວ່າມະຫາລີ

[໔໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ກູຕາຄານສາລາ ປ່າມະຫາວັນ ເຂດນະຄອນເວສາລີ ຄັ້ງນັ້ນແລ ເຈົ້າລິດສະຫວີພຣະນາມວ່າມະຫາລີສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ເຮັດກໍາຊົ່ວ ແລະໃຫ້ກໍາຊົ່ວເປັນໄປ”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ມະຫາລີ ໂລພະເປັນເຫດເປັນປັດໄຈໃຫ້ເຮັດກໍາຊົ່ວ ແລະໃຫ້ກໍາຊົ່ວເປັນໄປ ໂທສະເປັນເຫດເປັນປັດໄຈໃຫ້ເຮັດກໍາຊົ່ວ ແລະໃຫ້ກໍາຊົ່ວເປັນໄປ ໂມຫະເປັນເຫດເປັນປັດໄຈໃຫ້ເຮັດກໍາຊົ່ວ ແລະໃຫ້ກໍາຊົ່ວເປັນໄປ ອະໂຍນິໂສມະນະສິການ (ການມະນະສິການໂດຍບໍ່ແຍບຄາຍ) ເປັນເຫດເປັນປັດໄຈໃຫ້ເຮັດກໍາຊົ່ວ ແລະໃຫ້ກໍາຊົ່ວເປັນໄປ ມິດສາປະນິຫິຕະຈິດ(ຈິດທີ່ຕັ້ງໄວ້ຜິດ)ແລ ເປັນເຫດເປັນປັດໄຈໃຫ້ເຮັດກໍາຊົ່ວ ແລະໃຫ້ກໍາຊົ່ວເປັນໄປ ມະຫາລີ ກິເລດມີໂລພະເປັນຕົ້ນນີ້ແລ ເປັນເຫດເປັນປັດໄຈໃຫ້ເຮັດກໍາຊົ່ວ ແລະໃຫ້ກໍາຊົ່ວເປັນໄປ”

ເຈົ້າລິດສະຫວີພຣະນາມວ່າມະຫາລີທູນຖາມວ່າ “ອັນໃດ ເປັນເຫດເປັນປັດໄຈໃຫ້ເຮັດກໍາດີແລະໃຫ້ກໍາດີເປັນໄປ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ມະຫາລິ ອະໂລພະເປັນເຫດເປັນປັດໄຈໃຫ້ເຮັດກໍາດີ ແລະໃຫ້ກໍາດີເປັນໄປ ອະໂທສະເປັນເຫດເປັນປັດໄຈໃຫ້ເຮັດກໍາດີ ແລະໃຫ້ກໍາດີເປັນໄປ ອະໂມຫະເປັນເຫດເປັນປັດໄຈໃຫ້ເຮັດກໍາດີແລະໃຫ້ກໍາດີເປັນໄປໂຍນິໂສມະນະສິການ(ການມະນະສິການໂດຍແຍບຄາຍ) ເປັນເຫດເປັນປັດໄຈໃຫ້ເຮັດກໍາດີ ແລະໃຫ້ກໍາດີເປັນໄປ ສໍາມາປະນິຫິຕະຈິດ(ຈິດທີ່ຕັ້ງໄວ້ຖືກ)ແລ ເປັນເຫດເປັນປັດໄຈໃຫ້ເຮັດກໍາດີ ແລະໃຫ້ກໍາດີເປັນໄປ

ຫາກທໍາ ໑໐ ປະການນີ້ ບໍ່ເພິ່ງມີຜາກົດຢູ່ໃນໂລກ ຄວາມປະພຶດບໍ່ສະໝໍ່າສະເໝີຄືຄວາມປະພຶດອະທໍາ[๑] ຫຼື ຄວາມປະພຶດສະໝໍ່າສະເໝີ ຄື ຄວາມປະພຶດທໍາ[๒] ກໍຈຶ່ງຈະບໍ່ມີຜາກົດຢູ່ໃນໂລກນີ້

ມະຫາລິ ຍ້ອນທໍາ ໑໐ ປະການນີ້ ມີຜາກົດຢູ່ໃນໂລກ ດັ່ງນັ້ນ ຄວາມປະພຶດບໍ່ສະໝໍ່າສະເໝີຄືຄວາມປະພຶດອະທໍາ ຫຼື ຄວາມປະພຶດສະໝໍ່າສະເໝີຄືຄວາມປະພຶດທໍາ ຈຶ່ງມີຜາກົດຢູ່ໃນໂລກນີ້

**ມະຫາລິສູດທີ ໗ ຈົບ**

# ໘. ປັບພະຊິຕະອະພິນຫະສູດ

## ວ່າດ້ວຍທໍາທີ່ບັນພະຊິດຄວນພິຈາລະນາເນືອງ ໆ

[໔໘] ພິກຂຸທັງຫຼາຍ ທໍາ ໑໐ ປະການນີ້ ບັນພະຊິດຄວນພິຈາລະນາເນືອງ ໆ

ທໍາ ໑໐ ປະການ ອັນໃດແດ່ ຄື

ບັນພະຊິດຄວນພິຈາລະນາເນືອງ ໆ ວ່າ

໑. ເຮົາເຖິງຄວາມມີເພດຕ່າງຈາກຄະລຶຫັດ
໒. ການລ້ຽງຊີບຂອງເຮົາເນື່ອງດ້ວຍຜູ້ອື່ນ
໓. ເຮົາມີອາກັບກິຣິຍາແນວອື່ນທີ່ຈະເພິ່ງເຮັດ
໔. ເຮົາຕິຕຽນຕົນເອງໂດຍສີນໄດ້ບໍ
໕. ເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍພິຈາລະນາແລ້ວຕິຕຽນເຮົາໂດຍສີນໄດ້ບໍ
໖. ເຮົາຈັກຕ້ອງມີຄວາມພັດພາກຈາກຂອງຮັກຂອງພໍໃຈທັງໝົດ
໗. ເຮົາມີກໍາເປັນຂອງຕົນ ເປັນຜູ້ຮັບຜົນຂອງກໍາ ມີກໍາເປັນກໍາເນີດ ມີກໍາເປັນເຜົ່າພັນ ມີກໍາເປັນບ່ອນເພິ່ງອາໄສ ເຮົາເຮັດກໍາໃດໄວ້ ຈະເປັນກໍາດີຫຼືກໍາຊົ່ວກໍຕາມ ຍ່ອມເປັນຜູ້ຮັບຜົນຂອງກໍານັ້ນ

໗. ມື້ຄືນລ່ວງໄປ ໆ ບັດນີ້ເຮົາເຮັດຫຍັງຢູ່
໘. ເຮົາຍິນດີຍິ່ງໃນເຮືອນວ່າງ^(໑)ຢູ່ບໍ
໑໐. ຍານທັດສະນະທີ່ປະເສີດອັນສາມາດ^(໑)ອັນວິເສດຍິ່ງກວ່າທຳຂອງມະນຸດ^(໒) ທີ່ເຮົາບັນລຸແລ້ວເຊິ່ງຈັກເປັນເຫດໃຫ້ເຮົາບໍ່ເກີ້ເຂີນເມື່ອເພື່ອນພົມມະຈາຣີຖາມໃນພາຍຫຼັງ ມີຢູ່ບໍ

ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ແລ ບັນພະຊິດຄວນພິຈາລະນາເນືອງ ໆ

**ປັບພະຊິຕະອະພິນຫະສູດທີ ໗ ຈົບ**

## ໘. ສະຣີຣັດຖະທຳມະສູດ

## ວ່າດ້ວຍທຳປະຈຳສະຣີຣະ

[໔໘] ພິກຂຸທັງຫຼາຍ ທຳປະຈຳສະຣີຣະ ໑໐ ປະການນີ້ ບັນພະຊິດຄວນ ພິຈາລະນາເນືອງ ໆ

ທຳປະຈຳສະຣີຣະ ໑໐ ປະການ ອັນໃດແດ່ ຄື

໑. ຄວາມໜາວ
໒. ຄວາມຮ້ອນ
໓. ຄວາມຫິວ
໔. ຄວາມຢາກ
໕. ຄວາມປວດອຸດຈາຣະ
໖. ຄວາມປວດປັດສາວະ
໗. ຄວາມສັງລວມກາຍ
໘. ຄວາມສັງລວມວາຈາ
໙. ຄວາມສັງລວມອາຊີບ
໑໐. ທຳເປັນເຄື່ອງປຸງແຕ່ງພົບ^(໑) ເປັນເຫດໃຫ້ເກີດໃນພົບໃໝ່

ພິກຂຸທັງຫຼາຍ ທຳປະຈຳສະຣີຣະ ໑໐ ປະການນີ້ແລ ບັນພະຊິດຄວນພິຈາລະນາ ເນືອງ ໆ

**ສະຣີຣັດຖະທຳມະສູດທີ ໘ ຈົບ**

## ໑໐. ພັນທະນະສູດ

## ວ່າດ້ວຍພິກຂຸເກີດຄວາມໝາງໃຈກັນ

[໕໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນແລ ພິກຂຸເປັນຈຳນວນຫຼາຍກັບຈາກບິນທະ

ບາດ ພາຍຫຼັງສັນອາຫານສຳເລັດແລ້ວ ນັ່ງປະຊຸມກັນຢູ່ຫໍສັນ ເກີດຄວາມໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່

ເມື່ອໃນເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກ[໑] ສະເດັດເຂົ້າໄປສູ່ຫໍສັນ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ໄດ້ຕັດຖາມພິກຂຸທັງຫຼາຍວ່າ ພິກຂຸທັງຫຼາຍ ບັດນີ້ ທ່ານທັງຫຼາຍ ນັ່ງປະຊຸມສົນທະນາກັນດ້ວຍເລື້ອງອັນໃດນໍ? ແລະເລື້ອງອັນໃດທີ່ທ່ານທັງຫຼາຍສົນທະນາກັນຄ້າງໄວ້"

ພິກຂຸທັງຫຼາຍຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ຂ້າພຣະອົງທັງຫຼາຍກັບຈາກບິນທະບາດພາຍຫຼັງສັນອາຫານສຳເລັດແລ້ວ ນັ່ງປະຊຸມກັນຢູ່ຫໍສັນ ເກີດຄວາມໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ການທີ່ທ່ານທັງຫຼາຍເກີດຄວາມໝາງໃຈກັນ ຜິດກັນ ຖຽງກັນ ໃຊ້ຫອກຄືປາກສຽບແທງກັນຢູ່ນີ້ ບໍ່ສົມຄວນແກ່ທ່ານທັງຫຼາຍ ຜູ້ເປັນກຸນລະບຸດອອກຈາກເຮືອນບວດເປັນບັນພະຊິດດ້ວຍສັດທາເລີຍ

ພິກຂຸທັງຫຼາຍ ສາຣານີຍະທຳ (ທຳເປັນເຫດໃຫ້ຣະນຶກເຖິງກັນ) ໑໐ ປະການນີ້ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ[໒]

ສາຣານີຍະທຳ ໑໐ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ແມ່ນການທີ່ພິກຂຸເປັນຜູ້ມີສີນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ນີ້ກໍເປັນສາຣານີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໒. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທັງຫຼາຍທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດ ບໍລິບູນ ຄົບຖ້ວນ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ ແມ່ນການທີ່

ພິກຂຸເປັນພະຫູສູດ ຯລຯ ແທງຕະຫຼອດດີດ້ວຍທິດຖິ ນີ້ກໍເປັນສາຣານີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໓. ເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ແມ່ນການທີ່ພິກຂຸເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ນີ້ກໍເປັນສາຣານີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໔. ເປັນຜູ້ວ່າງ່າຍ ປະກອບດ້ວຍທຳເປັນເຄື່ອງເຮັດໃຫ້ເປັນຜູ້ວ່າງ່າຍ ອົດທົນ ຮັບຟັງຄຳພ່ຳສອນໂດຍເຄົາລົບ ແມ່ນການທີ່ພິກຂຸເປັນຜູ້ວ່າງ່າຍ ອົດທົນ ຮັບຟັງຄຳພ່ຳສອນໂດຍເຄົາລົບ ນີ້ກໍເປັນສາຣານີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໕. ເປັນຜູ້ດຸໝັ່ນ ບໍ່ຂີ້ຄ້ານໃນວຽກງານທີ່ຈະຕ້ອງຊ່ອຍກັນເຮັດທັງງານສູງ ແລະງານຕ່ຳໆຂອງເພື່ອນພົມມະຈາຣີທັງຫຼາຍ ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາອັນເປັນອຸບາຍໃນວຽກງານທີ່ຈະຕ້ອງຊ່ອຍກັນເຮັດນັ້ນ ສາມາດເຮັດໄດ້ ສາມາດຈັດໄດ້ ແມ່ນການທີ່ພິກຂຸເປັນຜູ້ດຸໝັ່ນ ບໍ່ຂີ້ຄ້ານໃນວຽກງານທີ່ຈະຕ້ອງຊ່ອຍກັນເຮັດທັງງານສູງ ແລະງານຕ່ຳຂອງເພື່ອນພົມມະຈາຣີທັງຫຼາຍ ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາອັນເປັນອຸບາຍໃນວຽກງານທີ່ຈະຕ້ອງຊ່ອຍກັນເຮັດນັ້ນ ສາມາດເຮັດໄດ້ ສາມາດຈັດໄດ້ ນີ້ກໍເປັນສາຣານີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໖. ເປັນຜູ້ຕ້ອງການທຳ ເປັນຜູ້ຟັງ ແລະຜູ້ສະແດງທຳອັນເປັນທີ່ພໍໃຈ ມີປາໂມດຢ່າງຍິ່ງໃນອະພິທຳ ໃນອະພິວິໄນໆ ແມ່ນການທີ່ພິກຂຸເປັນຜູ້ຕ້ອງການທຳ ຯລຯ ນີ້ກໍເປັນສາຣານີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ

໗. ເປັນຜູ້ຜາຣົບຄວາມພຽນເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖີ້ເປົາໃນກຸສົນທຳທັງຫຼາຍຢູ່ ແມ່ນການທີ່ພິກຂຸເປັນຜູ້ຜາຣົບຄວາມພຽນເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖີ້ເປົາໃນກຸສົນທຳທັງຫຼາຍ ນີ້ກໍເປັນ

ສາຣານີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໗. ເປັນຜູ້ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້ ແມ່ນການທີ່ພິກຂຸເປັນຜູ້ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້ ນີ້ກໍເປັນສາຣານີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໘. ເປັນຜູ້ມີສະຕິ ຄືປະກອບດ້ວຍສະຕິປັນຍາເປັນເຄື່ອງຮັກສາຕົນ໌ຢ່າງຍິ່ງ ຣະນຶກເຖິງສິ່ງທີ່ເຮັດແລະຄຳທີ່ເວົ້າແມ່ນດົນໄດ້ ແມ່ນການທີ່ພິກຂຸເປັນຜູ້ມີສະຕິ ຄືປະກອບດ້ວຍສະຕິປັນຍາເປັນເຄື່ອງຮັກສາຕົນຢ່າງຍິ່ງ ຣະນຶກເຖິງສິ່ງທີ່ເຮັດແລະຄຳທີ່ເວົ້າແມ່ນດົນໄດ້ ນີ້ກໍເປັນສາຣານີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

໑໐. ເປັນຜູ້ມີປັນຍາ ຄືປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງ ຄວາມເກີດແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງຄວາມສິ້ນທຸກໂດຍຊອບ ແມ່ນການທີ່ພິກຂຸເປັນຜູ້ມີປັນຍາ ຄືປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາເຫັນທັງຄວາມເກີດແລະຄວາມດັບອັນເປັນອະຣິຍະ ທຳລາຍກິເລດໃຫ້ເຖິງ ຄວາມສິ້ນທຸກໂດຍຖືກຕ້ອງ ນີ້ກໍເປັນສາຣານີຍະທຳທີ່ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

ພິກຂຸທັງຫຼາຍ ສາຣານີຍະທຳ ໑໐ ປະການນີ້ແລ ເຮັດໃຫ້ເປັນທີ່ຮັກ ເຮັດໃຫ້ເປັນທີ່ເຄົາລົບ ເປັນໄປເພື່ອຄວາມສົງເຄາະກັນ ເພື່ອຄວາມບໍ່ຜິດຖຽງກັນ ເພື່ອຄວາມສາມັກຄີກັນ ເພື່ອຄວາມເປັນອັນດຽວກັນ

**ພັນທະນະສູດທີ ໑໐ ຈົບ**

**ອັກໂກສະວັກທີ ໕ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື



**ປະຖົມປັນນາດ ຈົບບໍລິບູນ**

# ໘. ທຸຕິຍະປັນນາດ

## ໑. ສະຈິດຕະວັກ

### ໝວດວ່າດ້ວຍວາຣະຈິດຂອງຕົນ

## ໑. ສະຈິດຕະສູດ

### ວ່າດ້ວຍຜູ້ສະຫຼາດໃນວາຣະຈິດຂອງຕົນ

[໕໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ຫາກພິກຂຸເປັນຜູ້ບໍ່ສະຫຼາດໃນວາຣະຈິດຂອງຜູ້ອື່ນ ເມື່ອເປັນແນວນັ້ນ ທ່ານທັງຫຼາຍເພິ່ງໃສ່ໃຈວ່າ “ເຮົາທັງຫຼາຍຈັກເປັນຜູ້ສະຫຼາດໃນວາຣະຈິດຂອງຕົນ” ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

ພິກຂຸເປັນຜູ້ສະຫຼາດໃນວາຣະຈິດຂອງຕົນ ເປັນແນວໃດ?

ຄື ພິກຂຸມີການພິຈາລະນາທີ່ເປັນອຸປະກາຣະຫຼາຍໃນກຸສົນທຳທັງຫຼາຍວ່າ “ເຮົາເປັນຜູ້ມີອະພິດຊາ(ຄວາມເພ່ງເລັງຢາກໄດ້ຂອງເຂົາ)ຢູ່ສ່ວນຫຼາຍບໍນໍ ຫຼືບໍ່ມີອະພິດຊາ ເຮົາເປັນຜູ້ມີຈິດພະຍາບາດຢູ່ສ່ວນຫຼາຍບໍນໍ ຫຼືມີຈິດບໍ່ພະຍາບາດ ເຮົາເປັນຜູ້ມີຖີນະມິດທະ (ຄວາມທໍ້ຖອຍແລະງ່ວງເຫງົາ )ກຸ້ມລຸມຢູ່ສ່ວນຫຼາຍບໍນໍ ຫຼືປາສະຈາກ ຖີນະມິດທະ ເຮົາເປັນຜູ້ມີຈິດຟຸ້ງຊ່ານຢູ່ສ່ວນຫຼາຍບໍນໍ ຫຼື ບໍ່ມີຈິດຟຸ້ງຊ່ານ ເຮົາເປັນຜູ້ມີຄວາມສົງໄສຢູ່ສ່ວນຫຼາຍບໍນໍ ຫຼື ຂ້າມພົ້ນຄວາມສົງໄສແລ້ວ ເຮົາເປັນຜູ້ມັກໂກດຢູ່ສ່ວນຫຼາຍບໍນໍ ຫຼື ບໍ່ມັກໂກດ ເຮົາເປັນຜູ້ມີຈິດເສົ້າໝອງຢູ່ສ່ວນຫຼາຍບໍນໍ ຫຼື ມີຈິດບໍ່ເສົ້າໝອງ ເຮົາເປັນຜູ້ມີກາຍກະສັບກະສ່າຍຢູ່ສ່ວນຫຼາຍບໍນໍ ຫຼື ມີກາຍບໍ່ກະສັບກະສ່າຍ ເຮົາເປັນຜູ້ຂີ້ຄ້ານຢູ່ສ່ວນຫຼາຍບໍນໍ ຫຼື ຜາຣົບຄວາມພຽນ ເຮົາເປັນຜູ້ມີຈິດບໍ່ຕັ້ງໝັ້ນຢູ່ສ່ວນຫຼາຍບໍນໍ ຫຼື ມີຈິດຕັ້ງໝັ້ນ” ປຽບຄືສະຕີຫຼືບຸຣຸດທີ່ຍັງໜຸ່ມສາວ ມີປົກກະຕິມັກແຕ່ງໂຕ ແຍງເບິ່ງເງົາໜ້າຂອງຕົນໃນແວ່ນອັນບໍລິສຸດຜຸດຜ່ອງ ຫຼື ໃນພາຊະນະນ້ຳທີ່ໃສ ຖ້າເຫັນທຸລີ ຫຼື ຈຸດດຳທີ່ໜ້ານັ້ນກໍພະຍາຍາມກຳຈັດທຸລີ ຫຼື ຈຸດດຳນັ້ນສາ ຫາກບໍ່ເຫັນທຸລີ ຫຼື ຈຸດດຳທີ່ໜ້ານັ້ນ ກໍດີໃຈ ພູມໃຈດ້ວຍເຫດນັ້ນ ເອງວ່າ “ເປັນລາບຂອງເຮົານໍ ໜ້າຂອງເຮົາບໍລິສຸດແລ້ວນໍ?”

ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາເປັນຜູ້ມີອະພິດຊາຢູ່ສ່ວນຫຼາຍ ເປັນຜູ້ມີຈິດພະຍາບາດຢູ່ສ່ວນຫຼາຍ ເປັນຜູ້ມີຖີນະມິດທະກຸ້ມລຸມຢູ່ສ່ວນຫຼາຍ ເປັນຜູ້ມີຈິດຟຸ້ງຊ່ານຢູ່ສ່ວນຫຼາຍ ເປັນຜູ້ມີຄວາມສົງໄສຢູ່ສ່ວນຫຼາຍ ເປັນຜູ້ມັກໂກດຢູ່ສ່ວນຫຼາຍ ເປັນຜູ້ມີຈິດເສົ້າໝອງຢູ່ສ່ວນຫຼາຍ ເປັນຜູ້ມີກາຍກະສັບກະສ່າຍຢູ່ສ່ວນຫຼາຍ ເປັນຜູ້ຂີ້ຄ້ານຢູ່ສ່ວນຫຼາຍ ເປັນຜູ້ມີຈິດບໍ່ຕັ້ງໝັ້ນຢູ່ສ່ວນຫຼາຍ" ພິກຂຸນັ້ນຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງ ເພື່ອລະບາບອະກຸສົນທຳເຫຼົ່ານັ້ນ

ພິກຂຸນັ້ນ ຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງເພື່ອລະບາບອະກຸສົນທຳເຫຼົ່ານັ້ນ ປຽບຄືບຸກຄົນຜູ້ມີຜ້າທີ່ຖືກໄຟໄໝ້ ຫຼື ມີຫົວທີ່ຖືກໄຟໄໝ້ ເພິ່ງທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງເພື່ອດັບໄຟທີ່ໄໝ້ຜ້າຫຼືໄຟທີ່ໄໝ້ຫົວນັ້ນ

ພິກຂຸທັງຫຼາຍ ຖ້າພິກຂຸພິຈາລະນາຢູ່ ຮູ້ແນວນີ້ວ່າ "ເຮົາເປັນຜູ້ບໍ່ມີອະພິດຊາຢູ່ສ່ວນຫຼາຍ ເປັນຜູ້ມີຈິດບໍ່ພະຍາບາດຢູ່ສ່ວນຫຼາຍ ເປັນຜູ້ປາສະຈາກຖີນະມິດທະຢູ່ສ່ວນຫຼາຍ ເປັນຜູ້ບໍ່ມີຈິດຟຸ້ງຊ່ານຢູ່ສ່ວນຫຼາຍ ເປັນຜູ້ຂ້າມພົ້ນຄວາມສົງໄສແລ້ວຢູ່ສ່ວນຫຼາຍ ເປັນຜູ້ບໍ່ໂກດຢູ່ສ່ວນຫຼາຍ ເປັນຜູ້ມີຈິດບໍ່ເສົ້າໝອງຢູ່ສ່ວນຫຼາຍ ເປັນຜູ້ມີກາຍບໍ່ກະສັບກະສ່າຍຢູ່ສ່ວນຫຼາຍ ເປັນຜູ້ຜາຣົບຄວາມພຽນຢູ່ສ່ວນຫຼາຍ ເປັນຜູ້ມີຈິດຕັ້ງໝັ້ນຢູ່ສ່ວນຫຼາຍ" ພິກຂຸນັ້ນ ຄວນຕັ້ງໝັ້ນຢູ່ໃນກຸສົນທຳເຫຼົ່ານັ້ນແລ້ວເຮັດຄວາມພຽນເພື່ອຄວາມສິ້ນໄປແຫ່ງອາສະວະທັງຫຼາຍໃຫ້ຍິ່ງຂຶ້ນໄປ

**ສະຈິດຕະສູດທີ ໑ ຈົບ**

## ໘. ສາຣີປຸດຕະສູດ

## ວ່າດ້ວຍພຣະສາຣີບຸດ

[໕໘] ໃນບ່ອນນັ້ນແລ ທ່ານພຣະສາຣີບຸດໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນກ່າວຮັບຄຳແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວເລື່ອງນີ້ ວ່າ

ຜູ້ມີອາຍຸທັງຫຼາຍ ຫາກພິກຂຸເປັນຜູ້ບໍ່ສະຫຼາດໃນວາຣະຈິດຂອງຜູ້ອື່ນ ເມື່ອເປັນແນວນັ້ນພິກຂຸນັ້ນເພິ່ງໃສ່ໃຈວ່າ "ເຮົາຈັກເປັນຜູ້ສະຫຼາດໃນວາຣະຈິດຂອງຕົນ" ຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

ພິກຂຸເປັນຜູ້ສະຫຼາດໃນວາຣະຈິດຂອງຕົນ ເປັນແນວໃດ?

ຄື ພິກຂຸມີການພິຈາລະນາທີ່ເປັນອຸປະກາຣະຫຼາຍໃນກຸສົນທຳທັງຫຼາຍວ່າ "ເຮົາເປັນຜູ້ມີອະພິດຊາ ຢູ່ສ່ວນຫຼາຍບໍ່ນໍ ຫຼື ບໍ່ມີອະພິດຊາ ເຮົາເປັນຜູ້ມີຈິດພະຍາບາດຢູ່ສ່ວນຫຼາຍບໍ່ນໍ ຫຼື ມີຈິດບໍ່ພະຍາບາດ ເຮົາເປັນຜູ້ມີຖີນະມິດທະກຸ້ມລຸມຢູ່ສ່ວນຫຼາຍບໍ່ນໍ ຫຼື ປາສະຈາກ ຖີນະມິດທະ ເຮົາເປັນຜູ້ມີຈິດຟຸ້ງຊ່ານຢູ່ສ່ວນຫຼາຍບໍ່ນໍ ຫຼື ບໍ່ມີຈິດຟຸ້ງຊ່ານ ເຮົາເປັນຜູ້ມີຄວາມສົງໄສຢູ່ສ່ວນຫຼາຍບໍ່ນໍ ຫຼື ຂ້າມພົ້ນຄວາມສົງໄສແລ້ວ ເຮົາເປັນຜູ້ມັກໂກດຢູ່ສ່ວນຫຼາຍບໍ່ນໍ ຫຼື ບໍ່ມັກໂກດ ເຮົາເປັນຜູ້ມີຈິດເສົ້າໝອງຢູ່ສ່ວນຫຼາຍບໍ່ນໍ ຫຼື ມີຈິດບໍ່ເສົ້າໝອງ ເຮົາເປັນຜູ້ມີກາຍກະສັບກະສ່າຍຢູ່ສ່ວນຫຼາຍບໍ່ນໍ ຫຼື ມີກາຍບໍ່ກະສັບກະສ່າຍ ເຮົາເປັນຜູ້ຂີ້ຄ້ານຢູ່ສ່ວນຫຼາຍບໍ່ນໍ ຫຼື ຜາຣົບຄວາມພຽນ ເຮົາເປັນຜູ້ມີຈິດບໍ່ຕັ້ງໝັ້ນຢູ່ສ່ວນຫຼາຍບໍ່ນໍ ຫຼື ມີຈິດຕັ້ງໝັ້ນ" ປຽບຄື ສະຕີຫຼືບຸຣຸດທີ່ຍັງໜຸ່ມສາວ ມີປົກກະຕິມັກແຕ່ງໂຕ ແຍງເບິ່ງເງົາໜ້າຂອງຕົນໃນແວ່ນອັນບໍລິສຸດຜຸດຜ່ອງ ຫຼື ໃນພາຊະນະນ້ຳທີ່ໃສ ຖ້າເຫັນທຸລີ ຫຼື ຈຸດດຳທີ່ໜ້ານັ້ນກໍພະຍາຍາມກຳຈັດທຸລີ ຫຼື ຈຸດດຳນັ້ນສາ ຫາກບໍ່ເຫັນທຸລີ ຫຼື ຈຸດດຳທີ່ໜ້ານັ້ນ ກໍດີໃຈ ພູມໃຈ ດ້ວຍເຫດນັ້ນເອງວ່າ "ເປັນລາບຂອງເຮົານໍ ໜ້າຂອງເຮົາບໍລິສຸດແລ້ວນໍ?"

ຖ້າພິກຂຸພິຈາລະນາຢູ່ ຮູ້ແນວນີ້ວ່າ "ເຮົາເປັນຜູ້ມີອະພິດຊາຢູ່ສ່ວນຫຼາຍ ໆລໆ ເປັນຜູ້ ມີຈິດບໍ່ຕັ້ງໝັ້ນຢູ່ສ່ວນຫຼາຍ" ພິກຂຸນັ້ນ ຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິ ແລະ ສຳປະຊັນຍະໃຫ້ມີປະມານຍິ່ງເພື່ອລະບາບອະກຸສົນທຳເຫຼົ່ານັ້ນ

ພິກຂຸນັ້ນຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງເພື່ອລະບາບອະກຸສົນທຳເຫຼົ່ານັ້ນ ປຽບຄື ບຸກຄົນຜູ້ມີຜ້າທີ່ຖືກໄຟໄໝ້ ຫຼື ມີຫົວທີ່ຖືກໄຟໄໝ້ ທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະ ສຳປະຊັນຍະໃຫ້ມີປະມານຍິ່ງເພື່ອດັບໄຟທີ່ໄໝ້ຜ້າ ຫຼື ໄຟທີ່ໄໝ້ຫົວນັ້ນ

ຜູ້ມີອາຍຸທັງຫຼາຍ ຖ້າພິກຂຸພິຈາລະນາຢູ່ ຮູ້ແນວນີ້ວ່າ "ເຮົາເປັນຜູ້ບໍ່ມີອະພິດຊາຢູ່ ສ່ວນຫຼາຍ ໆລໆ ເປັນຜູ້ມີຈິດຕັ້ງໝັ້ນຢູ່ສ່ວນຫຼາຍ" ພິກຂຸນັ້ນ ຄວນຕັ້ງໝັ້ນຢູ່ໃນກຸສົນທຳ ເຫຼົ່ານັ້ນແລ້ວເຮັດຄວາມພຽນເພື່ອຄວາມສິ້ນໄປແຫ່ງອາສະວະທັງຫຼາຍໃຫ້ຍິ່ງຂຶ້ນໄປ

**ສາຣີປຸດຕະສູດທີ ໘ ຈົບ**

# ៩. ຖິຕິສູດ

## ວ່າດ້ວຍຄວາມຄົງຢູ່ກັບທີ່ໃນທຳ

[໕៩] ພິກຂຸທັງຫຼາຍ ເຮົາບໍ່ສັນເສີນແມ່ນແຕ່ຄວາມຄົງຢູ່ກັບທີ່ໃນກຸສົນທຳທັງຫຼາຍ ເປັນຫຍັງຈະສັນເສີນຄວາມເສື່ອມນໍ ພິກຂຸທັງຫຼາຍ ແຕ່ເຮົາສັນເສີນຄວາມຈະເລີນໃນກຸສົນທຳທັງຫຼາຍ ບໍ່ແມ່ນຄວາມຄົງຢູ່ກັບທີ່ ບໍ່ແມ່ນຄວາມເສື່ອມ

ຄວາມເສື່ອມໃນກຸສົນທຳທັງຫຼາຍ ບໍ່ແມ່ນຄວາມຄົງຢູ່ກັບທີ່ ບໍ່ແມ່ນຄວາມຈະເລີນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ມີສັດທາ ສີນ ສຸຕະ ຈາຄະ ປັນຍາ ແລະປະຕິພານຢູ່ທີ່ໃດ ທຳເຫຼົ່ານັ້ນຂອງພິກຂຸນັ້ນ ບໍ່ຄົງຢູ່ກັບທີ່ ບໍ່ຈະເລີນ ເຮົາກ່າວຂໍ້ນີ້ວ່າເປັນຄວາມເສື່ອມໃນກຸສົນທຳທັງຫຼາຍ ບໍ່ແມ່ນຄວາມຄົງຢູ່ກັບທີ່ ບໍ່ແມ່ນຄວາມຈະເລີນ

ຄວາມເສື່ອມໃນກຸສົນທຳທັງຫຼາຍ ບໍ່ແມ່ນຄວາມຄົງຢູ່ກັບທີ່ ບໍ່ແມ່ນຄວາມຈະເລີນ ເປັນແນວນີ້ແລ

ຄວາມຄົງຢູ່ກັບທີ່ໃນກຸສົນທຳທັງຫຼາຍ ບໍ່ແມ່ນຄວາມເສື່ອມ ບໍ່ແມ່ນຄວາມຈະເລີນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ມີສັດທາ ສີນ ສຸຕະ ຈາຄະ ປັນຍາ ແລະປະຕິພານຢູ່ທີ່ໃດ ທຳເຫຼົ່ານັ້ນຂອງພິກຂຸນັ້ນ ບໍ່ເສື່ອມ ບໍ່ຈະເລີນ ເຮົາກ່າວຂໍ້ນີ້ວ່າເປັນຄວາມຄົງຢູ່ກັບທີ່ໃນກຸສົນທຳທັງຫຼາຍ ບໍ່ແມ່ນຄວາມເສື່ອມ ບໍ່ແມ່ນຄວາມຈະເລີນ

ຄວາມຄົງຢູ່ກັບທີ່ໃນກຸສົນທຳທັງຫຼາຍ ບໍ່ແມ່ນຄວາມເສື່ອມ ບໍ່ແມ່ນຄວາມຈະເລີນ ເປັນແນວນີ້ແລ

ຄວາມຈະເລີນໃນກຸສົນທຳທັງຫຼາຍ ບໍ່ແມ່ນຄວາມຄົງຢູ່ກັບທີ່ ບໍ່ແມ່ນຄວາມເສື່ອມ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເປັນຜູ້ມີສັດທາ ສີນ ສຸຕະ ຈາຄະ ປັນຍາ ແລະປະຕິພານຢູ່ທີ່ໃດ ທຳເຫຼົ່ານັ້ນຂອງພິກຂຸນັ້ນບໍ່ຄົງຢູ່ກັບທີ່ ບໍ່ເສື່ອມ ເຮົາກ່າວຂໍ້ນີ້ວ່າເປັນຄວາມຈະເລີນໃນກຸສົນທຳທັງຫຼາຍ ບໍ່ແມ່ນຄວາມຄົງຢູ່ກັບທີ່ ບໍ່ແມ່ນຄວາມເສື່ອມ

ຄວາມຈະເລີນໃນກຸສົນທຳທັງຫຼາຍ ບໍ່ແມ່ນຄວາມຄົງຢູ່ກັບທີ່ ບໍ່ແມ່ນຄວາມເສື່ອມ ເປັນແນວນີ້ແລ

ຫາກພິກຂຸເປັນຜູ້ບໍ່ສະຫຼາດໃນວາຣະຈິດຂອງຜູ້ອື່ນ ເມື່ອເປັນແນວນັ້ນ ພິກຂຸເພິ່ງຕັ້ງໃຈຮູ້ວ່າ "ເຮົາຈັກເປັນຜູ້ສະຫຼາດໃນວາຣະຈິດຂອງຕົນ" ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

ພິກຂຸເປັນຜູ້ສະຫຼາດໃນວາຣະຈິດຂອງຕົນ ເປັນແນວໃດ?

ຄື ພິກຂຸມີການພິຈາລະນາທີ່ເປັນອຸປະກາຣະຫຼາຍໃນກຸສົນທຳທັງຫຼາຍວ່າ "ເຮົາເປັນຜູ້ມີອະພິດຊາ ຢູ່ສ່ວນຫຼາຍບໍນໍ ຫຼືບໍ່ມີອະພິດຊາ ເຮົາເປັນຜູ້ມີຈິດພະຍາບາດຢູ່ສ່ວນຫຼາຍບໍນໍ ຫຼື ມີຈິດບໍ່ພະຍາບາດ ເຮົາເປັນຜູ້ມີຖີນະມິດທະກຸ້ມລຸມຢູ່ສ່ວນຫຼາຍບໍນໍ ຫຼື ປາສະຈາກ ຖີນະມິດທະ ເຮົາເປັນຜູ້ມີຈິດຟຸ້ງຊ່ານຢູ່ສ່ວນຫຼາຍບໍນໍ? ຫຼື ບໍ່ມີຈິດຟຸ້ງຊ່ານ ເຮົາເປັນຜູ້ມີຄວາມສົງໄສຢູ່ສ່ວນຫຼາຍບໍນໍ ຫຼື ຂ້າມພົ້ນຄວາມສົງໄສແລ້ວ ເຮົາເປັນຜູ້ມັກໂກດຢູ່ສ່ວນຫຼາຍບໍນໍ ຫຼື ບໍ່ມັກໂກດ ເຮົາເປັນຜູ້ມີຈິດເສົ້າໝອງຢູ່ສ່ວນຫຼາຍບໍນໍ ຫຼື ມີຈິດບໍ່ເສົ້າໝອງ ເຮົາເປັນຜູ້ມີກາຍກະສັບກະສ່າຍຢູ່ສ່ວນຫຼາຍບໍນໍ ຫຼື ມີກາຍບໍ່ກະສັບກະສ່າຍ ເຮົາເປັນຜູ້ຂີ້ຄ້ານຢູ່ສ່ວນຫຼາຍບໍນໍ ຫຼື ຜາຣົບຄວາມພຽນ ເຮົາເປັນຜູ້ມີຈິດບໍ່ຕັ້ງໝັ້ນຢູ່ສ່ວນຫຼາຍບໍນໍ ຫຼື ມີຈິດຕັ້ງໝັ້ນ" ປຽບຄື ສະຕີ ຫຼື ບຸຣຸດທີ່ຍັງໜຸ່ມສາວ ມີປົກກະຕິມັກແຕ່ງໂຕ ແຍງເບິ່ງເງົາໜ້າຂອງຕົນໃນແວ່ນອັນບໍລິສຸດຜຸດຜ່ອງ ຫຼື ໃນພາຊະນະນ້ຳທີ່ໃສ ຖ້າເຫັນທຸລີ ຫຼື ຈຸດດຳທີ່ໜ້ານັ້ນກໍພະຍາຍາມກຳຈັດທຸລີ ຫຼື ຈຸດດຳນັ້ນສາ ຫາກບໍ່ເຫັນທຸລີ ຫຼື ຈຸດດຳທີ່ໜ້ານັ້ນ ກໍດີໃຈ ພູມໃຈ ດ້ວຍເຫດນັ້ນເອງວ່າ "ເປັນລາບຂອງເຮົານໍ ໜ້າຂອງເຮົາບໍລິສຸດແລ້ວນໍ"

ຖ້າພິກຂຸພິຈາລະນາຢູ່ຮູ້ແນວນີ້ວ່າ "ເຮົາເປັນຜູ້ມີອະພິດຊາຢູ່ສ່ວນຫຼາຍ ເປັນຜູ້ມີຈິດພະຍາບາດຢູ່ສ່ວນຫຼາຍ ເປັນຜູ້ມີຖີນະມິດທະກຸ້ມລຸມຢູ່ສ່ວນຫຼາຍ ເປັນຜູ້ມີຈິດຟຸ້ງຊ່ານຢູ່ສ່ວນຫຼາຍ ເປັນຜູ້ມີຄວາມສົງໄສຢູ່ສ່ວນຫຼາຍ ເປັນຜູ້ມັກໂກດຢູ່ສ່ວນຫຼາຍ ເປັນຜູ້ມີຈິດເສົ້າໝອງ ຢູ່ສ່ວນຫຼາຍ ເປັນຜູ້ມີກາຍກະສັບກະສ່າຍຢູ່ສ່ວນຫຼາຍ ເປັນຜູ້ຂີ້ຄ້ານຢູ່ສ່ວນຫຼາຍ ເປັນຜູ້ມີຈິດບໍ່ຕັ້ງໝັ້ນຢູ່ສ່ວນຫຼາຍ" ພິກຂຸນັ້ນຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງ ເພື່ອລະບາບອະກຸສົນທຳເຫຼົ່ານັ້ນ

ພິກຂຸນັ້ນຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິ ແລະສຳປະຊັນຍະໃຫ້ມີປະມານຍິ່ງເພື່ອລະບາບອະກຸສົນທຳເຫຼົ່ານັ້ນ ປຽບຄື ບຸກຄົນຜູ້ມີຜ້າທີ່ຖືກໄຟໄໝ້ ຫຼືມີຫົວທີ່ຖືກໄຟໄໝ້ ທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງເພື່ອດັບໄຟທີ່ໄໝ້ຜ້າຫຼືໄຟທີ່ໄໝ້ຫົວນັ້ນ

ພິກຂຸທັງຫຼາຍ ຖ້າພິກຂຸພິຈາລະນາຢູ່ ຮູ້ແນວນີ້ວ່າ "ເຮົາເປັນຜູ້ບໍ່ມີອະພິດຊາຢູ່ສ່ວນຫຼາຍ ເປັນຜູ້ມີຈິດບໍ່ພະຍາບາດຢູ່ສ່ວນຫຼາຍ ເປັນຜູ້ປາສະຈາກຖີນະມິດທະຢູ່ສ່ວນຫຼາຍ ເປັນຜູ້ບໍ່ຟຸ້ງຊ່ານຢູ່ສ່ວນຫຼາຍ ເປັນຜູ້ຂ້າມພົ້ນຄວາມສົງໄສແລ້ວຢູ່ສ່ວນຫຼາຍ ເປັນຜູ້ບໍ່ມັກໂກດຢູ່ສ່ວນຫຼາຍ ເປັນຜູ້ມີຈິດບໍ່ເສົ້າ ໝອງຢູ່ສ່ວນຫຼາຍ ເປັນຜູ້ມີກາຍບໍ່ກະສັບກະສ່າຍຢູ່ສ່ວນຫຼາຍ ເປັນຜູ້ຜາຣົບຄວາມພຽນຢູ່ສ່ວນຫຼາຍ ເປັນຜູ້ມີຈິດຕັ້ງໝັ້ນຢູ່ສ່ວນຫຼາຍ" ພິກຂຸນັ້ນຄວນ ຕັ້ງໝັ້ນຢູ່ໃນກຸສົນທຳເຫຼົ່ານັ້ນແລ້ວເຮັດຄວາມພຽນເພື່ອຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ໃຫ້ຍິ່ງຂຶ້ນໄປ

**ຖິຕິສູດທີ ໑ ຈົບ**

# ໔. ສະມະຖະສູດ

## ວ່າດ້ວຍຄວາມສະງົບແຫ່ງຈິດ

[໕໔] ພິກຂຸທັງຫຼາຍ ຫາກພິກຂຸບໍ່ສະຫຼາດໃນວາຣະຈິດຂອງຜູ້ອື່ນ ເມື່ອເປັນແນວນັ້ນ ພິກຂຸເພິ່ງໃສ່ໃຈວ່າ "ເຮົາຈັກເປັນຜູ້ສະຫຼາດໃນວາຣະຈິດຂອງຕົນ" ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

ພິກຂຸສະຫຼາດໃນວາຣະຈິດຂອງຕົນ ເປັນແນວໃດ?

ຄື ພິກຂຸມີການພິຈາລະນາທີ່ເປັນອຸປະກາຣະຫຼາຍໃນກຸສົນທຳທັງຫຼາຍວ່າ "ເຮົາໄດ້ຄວາມສະງົບແຫ່ງຈິດພາຍໃນບໍໄດ້ນໍ ເຮົາໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງບໍໄດ້ນໍ" ປຽບຄືສະຕີຫຼືບຸຣຸດທີ່ຍັງໜຸ່ມສາວ ມີປົກກະຕິຊອບແຕ່ງໂຕ ແຍງເບິ່ງເງົາໜ້າຂອງຕົນໃນແວ່ນອັນບໍລິສຸດຜຸດຜ່ອງ ຫຼື ໃນພາຊະນະນ້ຳທີ່ໃສ ຖ້າເຫັນທຸລີຫຼືຈຸດດຳທີ່ໜ້ານັ້ນ ກໍພະຍາຍາມກຳຈັດທຸລີ ຫຼື ຈຸດດຳນັ້ນສາ ຫາກບໍ່ເຫັນທຸລີຫຼືຈຸດດຳນັ້ນ ກໍດີໃຈ ພູມໃຈ ດ້ວຍເຫດນັ້ນເອງວ່າ "ເປັນລາບຂອງເຮົາ ໜ້າຂອງເຮົາບໍລິສຸດແລ້ວນໍ?"

ຖ້າພິກຂຸພິຈາລະນາຢູ່ ຮູ້ແນວນີ້ວ່າ "ເຮົາໄດ້ຄວາມສະງົບແຫ່ງຈິດພາຍໃນ ແຕ່ບໍ່ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ" ພິກຂຸນັ້ນ ຄວນຕັ້ງໝັ້ນໃນຄວາມສະງົບແຫ່ງຈິດພາຍໃນແລ້ວເຮັດຄວາມພຽນ ເພື່ອຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງເທີ້ນ ສະໄໝຕໍ່ມາ ພິກຂຸນັ້ນໄດ້ທັງຄວາມສະງົບແຫ່ງຈິດພາຍໃນ ແລະຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ

ຖ້າພິກຂຸພິຈາລະນາຢູ່ ຮູ້ແນວນີ້ວ່າ "ເຮົາໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ແຕ່ບໍ່ໄດ້ຄວາມສະງົບແຫ່ງຈິດພາຍໃນ" ພິກຂຸນັ້ນ ຄວນຕັ້ງໝັ້ນຢູ່ໃນຄວາມເຫັນແຈ້ງທຳດ້ວຍປັນຍາ

ອັນຍິ່ງແລ້ວເຮັດຄວາມພຽນເພື່ອຄວາມສະງົບແຫ່ງຈິດພາຍໃນເທີ້ນ ສະໄໝຕໍ່ມາ ພິກຂຸນັ້ນໄດ້ທັງຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ ແລະຄວາມສະງົບຈິດພາຍໃນ

ຖ້າພິກຂຸພິຈາລະນາຢູ່ ຮູ້ແນວນີ້ວ່າ "ເຮົາບໍ່ໄດ້ຄວາມສະງົບແຫ່ງຈິດພາຍໃນ ແລະຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ" ພິກຂຸນັ້ນຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິ ແລະສຳປະຊັນຍະໃຫ້ມີປະມານຍິ່ງ ເພື່ອໄດ້ກຸສົນທຳເຫຼົ່ານັ້ນເທີ້ນ

ພິກຂຸນັ້ນເພິ່ງທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງເພື່ອໄດ້ກຸສົນທຳເຫຼົ່ານັ້ນ ປຽບຄື ບຸກຄົນຜູ້ມີຜ້າທີ່ຖືກໄຟໄໝ້ ຫຼືມີຫົວທີ່ຖືກໄຟໄໝ້ ທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະ ໃຫ້ມີປະມານຍິ່ງເພື່ອດັບໄຟທີ່ໄໝ້ຜ້າຫຼືໄຟທີ່ໄໝ້ຫົວນັ້ນ ສະໄໝຕໍ່ມາ ພິກຂຸນັ້ນ ໄດ້ທັງຄວາມສະງົບແຫ່ງຈິດພາຍໃນ ແລະຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ

ຖ້າພິກຂຸພິຈາລະນາຢູ່ ຮູ້ແນວນີ້ວ່າ "ເຮົາໄດ້ຄວາມສະງົບແຫ່ງຈິດພາຍໃນ ໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງ" ພິກຂຸນັ້ນ ຄວນຕັ້ງໝັ້ນຢູ່ໃນກຸສົນທຳເຫຼົ່ານັ້ນແລ້ວ ເຮັດຄວາມພຽນ ເພື່ອຄວາມສິ້ນໄປແຫ່ງອາສະວະທັງຫຼາຍໃຫ້ຍິ່ງຂຶ້ນໄປ

ແມ່ນຈີວອນເຮົາກໍກ່າວວ່າມີ ໒ ແນວ ຄືຈີວອນທີ່ຄວນໃຊ້ສອຍ ແລະຈີວອນທີ່ບໍ່ຄວນໃຊ້ສອຍ ແມ່ນບິນທະບາດເຮົາກໍກ່າວວ່າມີ ໒ ແນວ ຄື ບິນທະບາດທີ່ຄວນສັນ ແລະບິນທະບາດທີ່ບໍ່ຄວນສັນ ແມ່ນເສນາສະນະເຮົາກໍກ່າວວ່າມີ ໒ ແນວ ຄື ເສນາສະນະທີ່ຄວນຢູ່ອາໄສ ແລະເສນາສະນະທີ່ບໍ່ຄວນຢູ່ອາໄສ ແມ່ນບ້ານແລະນິຄົມເຮົາກໍກ່າວວ່າມີ ໒ ແນວ ຄື ບ້ານແລະນິຄົມທີ່ຄວນຢູ່ອາໄສ ແລະບ້ານ ແລະນິຄົມທີ່ບໍ່ຄວນຢູ່ອາໄສ ແມ່ນຊົນນະບົດແລະປະເທດເຮົາ ກໍກ່າວວ່າມີ ໒ ແນວ ຄືຊົນນະບົດ ແລະປະເທດທີ່ຄວນຢູ່ອາໄສ ແລະຊົນນະບົດ ແລະປະເທດທີ່ບໍ່ຄວນຢູ່ອາໄສ ແມ່ນບຸກຄົນເຮົາກໍກ່າວວ່າມີ ໒ ປະເພດ ຄືບຸກຄົນທີ່ຄວນຄົບ ແລະບຸກຄົນທີ່ບໍ່ຄວນຄົບ

## ຈີວອນທີ່ຄວນໃຊ້ສອຍ ແລະທີ່ບໍ່ຄວນໃຊ້ສອຍ

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ແມ່ນຈີວອນເຮົາກໍກ່າວວ່າມີ ໒ ແນວ ຄືຈີວອນທີ່ຄວນໃຊ້ສອຍ ແລະຈີວອນທີ່ບໍ່ຄວນໃຊ້ສອຍ" ຍ້ອນອາໄສອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ບັນດາຈີວອນ ໒ ແນວນັ້ນ ຈີວອນໃດພິກຂຸຮູ້ວ່າ "ເມື່ອເຮົາໃຊ້ສອຍຈີວອນນີ້ແລ ອະກຸສົນທຳທັງຫຼາຍ ຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມໄປ" ຈີວອນນີ້ບໍ່ຄວນໃຊ້ສອຍ ຈີວອນໃດ

ພິກຂຸ ຮູ້ວ່າ "ເມື່ອເຮົາໃຊ້ສອຍຈີວອນນີ້ແລ ອະກຸສົນທຳເສື່ອມໄປ ກຸສົນທຳຈະເລີນຍິ່ງຂຶ້ນ" ຈີວອນນີ້ຄວນໃຊ້ສອຍ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ແມ່ນຈີວອນເຮົາກໍກ່າວວ່າ ມີ ໔ ແນວ ຄືຈີວອນທີ່ຄວນໃຊ້ສອຍ ແລະຈີວອນທີ່ບໍ່ຄວນໃຊ້ສອຍ" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

## ບິນທະບາດທີ່ຄວນສັນ ແລະທີ່ບໍ່ຄວນສັນ

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ແມ່ນບິນທະບາດເຮົາກໍກ່າວວ່າມີ ໔ ແນວ ຄື ບິນທະບາດທີ່ຄວນສັນ ແລະບິນທະບາດທີ່ບໍ່ຄວນສັນ" ຍ້ອນອາໄສອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ບັນດາບິນທະບາດ ໔ ແນວນັ້ນ ບິນທະບາດໃດພິກຂຸຮູ້ວ່າ "ເມື່ອເຮົາສັນບິນທະບາດ ນີ້ແລ ອະກຸສົນທຳຈະເລີນຍິ່ງຂຶ້ນ ກຸສົນທຳເສື່ອມໄປ" ບິນທະບາດນີ້ບໍ່ຄວນສັນ ບິນທະບາດໃດພິກຂຸຮູ້ວ່າ "ເມື່ອເຮົາສັນບິນທະບາດນີ້ແລ ອະກຸສົນທຳເສື່ອມໄປ ກຸສົນທຳຈະເລີນຍິ່ງຂຶ້ນ" ບິນທະບາດນີ້ຄວນສັນ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ແມ່ນບິນທະບາດເຮົາກໍກ່າວວ່າ ມີ ໔ ແນວ ຄື ບິນທະບາດທີ່ຄວນສັນ ແລະບິນທະບາດທີ່ບໍ່ຄວນສັນ" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

## ເສນາສະນະທີ່ຄວນຢູ່ອາໄສ ແລະທີ່ບໍ່ຄວນຢູ່ອາໄສ

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ແມ່ນເສນາສະນະເຮົາກໍກ່າວວ່າມີ ໔ ແນວ ຄືເສນາສະນະທີ່ຄວນຢູ່ອາໄສ ແລະເສນາສະນະທີ່ບໍ່ຄວນຢູ່ອາໄສ" ຍ້ອນອາໄສອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ບັນດາເສນາສະນະ ໔ ແນວນັ້ນ ເສນາສະນະໃດພິກຂຸຮູ້ວ່າ "ເມື່ອເຮົາຢູ່ອາໄສ ເສນາສະນະນີ້ແລ ອະກຸສົນທຳຈະເລີນຍິ່ງຂຶ້ນ ກຸສົນທຳເສື່ອມໄປ" ເສນາສະນະນີ້ບໍ່ຄວນຢູ່ ອາໄສ ເສນາສະນະໃດພິກຂຸຮູ້ວ່າ "ເມື່ອເຮົາຢູ່ອາໄສເສນາສະນະນີ້ແລ ອະກຸສົນທຳເສື່ອມໄປ ກຸສົນທຳຈະເລີນຍິ່ງຂຶ້ນ" ເສນາສະນະນີ້ຄວນຢູ່ອາໄສ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ແມ່ນເສນາສະນະເຮົາກໍກ່າວວ່າມີ ໔ ແນວ ຄື ເສນາສະນະທີ່ຄວນຢູ່ອາໄສ ແລະເສນາສະນະທີ່ບໍ່ຄວນຢູ່ອາໄສ" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

## ບ້ານ ແລະນິຄົມທີ່ຄວນຢູ່ອາໄສ ແລະທີ່ບໍ່ຄວນຢູ່ອາໄສ

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ແມ່ນບ້ານແລະນິຄົມເຮົາກໍກ່າວວ່າມີ ໔ ແນວ ຄືບ້ານແລະນິຄົມທີ່ຄວນຢູ່ອາໄສ ແລະບ້ານແລະນິຄົມທີ່ບໍ່ຄວນຢູ່ອາໄສ" ຍ້ອນອາໄສອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ບັນດາບ້ານແລະນິຄົມ ໔ ແນວນັ້ນ ບ້ານ ແລະນິຄົມໃດພິກຂຸຮູ້ວ່າ "ເມື່ອເຮົາຢູ່ອາໄສ

ບ້ານແລະນິຄົມນີ້ແລ ອະກຸສົນທຳຈະເລີນຍິ່ງຂຶ້ນ ກຸສົນທຳເສື່ອມໄປ" ບ້ານ ແລະນິຄົມນີ້ ບໍ່ຄວນຢູ່ອາໄສ ບ້ານແລະນິຄົມໃດພິກຂຸຮູ້ວ່າ "ເມື່ອເຮົາຢູ່ອາໄສບ້ານ ແລະນິຄົມນີ້ແລ ອະກຸສົນທຳເສື່ອມໄປ ກຸສົນທຳຈະເລີນຍິ່ງຂຶ້ນ" ບ້ານແລະນິຄົມນີ້ຄວນຢູ່ອາໄສ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ແມ່ນບ້ານແລະນິຄົມເຮົາກໍກ່າວວ່າມີ ໘ ແນວ ຄືບ້ານແລະນິຄົມທີ່ຄວນຢູ່ອາໄສ ແລະບ້ານແລະນິຄົມທີ່ບໍ່ຄວນຢູ່ອາໄສ" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

## ຊົນນະບົດແລະປະເທດທີ່ຄວນຢູ່ອາໄສ ແລະທີ່ບໍ່ຄວນຢູ່ອາໄສ

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ແມ່ນຊົນນະບົດແລະປະເທດເຮົາກໍກ່າວວ່າມີ ໘ ແນວ ຄືຊົນນະບົດແລະປະເທດທີ່ຄວນຢູ່ອາໄສ ແລະຊົນນະບົດແລະປະເທດທີ່ບໍ່ຄວນຢູ່ອາໄສ" ຍ້ອນອາໄສອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ບັນດາຊົນນະບົດແລະປະເທດ ໘ ແນວນັ້ນ ຊົນນະບົດແລະປະເທດໃດພິກຂຸຮູ້ວ່າ "ເມື່ອເຮົາຢູ່ອາໄສຊົນນະບົດແລະປະເທດນີ້ແລ ອະກຸສົນທຳຈະເລີນຍິ່ງຂຶ້ນ ກຸສົນທຳເສື່ອມໄປ" ຊົນນະບົດ ແລະປະເທດນີ້ບໍ່ຄວນຢູ່ອາໄສ ຊົນນະບົດແລະປະເທດໃດພິກຂຸຮູ້ວ່າ "ເມື່ອເຮົາຢູ່ອາໄສ ຊົນນະບົດແລະປະເທດນີ້ແລ ອະກຸສົນທຳເສື່ອມໄປ ກຸສົນທຳຈະເລີນຍິ່ງຂຶ້ນ" ຊົນນະບົດແລະປະເທດນີ້ຄວນຢູ່ອາໄສ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ແມ່ນຊົນນະບົດແລະປະເທດເຮົາກໍກ່າວວ່າມີ ໘ ແນວ ຄື ຊົນນະບົດແລະປະເທດທີ່ຄວນຢູ່ອາໄສ ແລະຊົນນະບົດແລະປະເທດທີ່ບໍ່ຄວນຢູ່ອາໄສ" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

## ບຸກຄົນທີ່ຄວນຄົບ ແລະທີ່ບໍ່ຄວນຄົບ

ເຮົາກ່າວໄວ້ແລ້ວເຊັ່ນນີ້ແລວ່າ "ແມ່ນບຸກຄົນເຮົາກໍກ່າວວ່າມີ ໘ ປະເພດ ຄືບຸກຄົນທີ່ຄວນຄົບ ແລະບຸກຄົນທີ່ບໍ່ຄວນຄົບ" ຍ້ອນອາໄສອັນໃດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

ບັນດາບຸກຄົນ ໘ ປະເພດນັ້ນ ບຸກຄົນໃດພິກຂຸຮູ້ວ່າ "ເມື່ອເຮົາຄົບບຸກຄົນນີ້ແລ ອະກຸສົນທຳຈະເລີນຍິ່ງຂຶ້ນ ກຸສົນທຳເສື່ອມໄປ" ບຸກຄົນນີ້ບໍ່ຄວນຄົບ ບຸກຄົນໃດ ພິກຂຸຮູ້ວ່າ "ເມື່ອເຮົາຄົບບຸກຄົນນີ້ແລ ອະກຸສົນທຳເສື່ອມໄປ ກຸສົນທຳຈະເລີນຍິ່ງຂຶ້ນ" ບຸກຄົນນີ້ຄວນຄົບ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ແມ່ນບຸກຄົນເຮົາກໍກ່າວວ່າມີ ໘ ປະເພດ ຄື ບຸກຄົນທີ່ຄວນຄົບແລະບຸກຄົນທີ່ບໍ່ຄວນຄົບ" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

**ສະມະຖະສູດທີ ໘ ຈົບ**

# ໕. ປະຣິຫານະສູດ

## ວ່າດ້ວຍບຸກຄົນຜູ້ມີທຳທີ່ເສື່ອມໄປ

[໕໕] ໃນບ່ອນນັ້ນແລ ທ່ານພຣະສາຣີບຸດໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນກ່າວຮັບຄຳແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວ ເລື້ອງນີ້ວ່າ

"ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ບຸກຄົນຜູ້ມີທຳທີ່ເສື່ອມໄປ ບຸກຄົນຜູ້ມີທຳທີ່ເສື່ອມໄປ" ແລະຕັດວ່າ "ບຸກຄົນຜູ້ມີທຳທີ່ບໍ່ເສື່ອມ ບຸກຄົນຜູ້ມີທຳທີ່ບໍ່ເສື່ອມ" ຜູ້ມີອາຍຸທັງຫຼາຍ ບຸກຄົນຜູ້ມີທຳທີ່ເສື່ອມໄປ ພຣະຜູ້ມີພຣະພາກເຈົ້າຕັດດ້ວຍເຫດທໍ່ໃດນໍ ແລະບຸກຄົນຜູ້ມີທຳທີ່ບໍ່ເສື່ອມ ພຣະຜູ້ມີພຣະພາກເຈົ້າຕັດດ້ວຍເຫດທໍ່ໃດ"

ພິກຂຸເຫຼົ່ານັ້ນ ຮຽນວ່າ "ຜູ້ມີອາຍຸ ຂ້ານ້ອຍທັງຫຼາຍມາແຕ່ທີ່ໄກເພື່ອຮູ້ເນື້ອຄວາມແຫ່ງພາສິດນີ້ ໃນສຳນັກຂອງທ່ານສາຣີບຸດ ດີແລ້ວ ສະເພາະທ່ານສາຣີບຸດທໍ່ນັ້ນ ທີ່ຈະອະທິບາຍເນື້ອຄວາມແຫ່ງພາສິດນັ້ນໃຫ້ແຈ່ມແຈ້ງໄດ້ ພິກຂຸທັງຫຼາຍຟັງຕໍ່ຈາກທ່ານສາຣີບຸດແລ້ວ ຈັກຊົງຈຳໄວ້"

ທ່ານພຣະສາຣີບຸດກ່າວວ່າ "ຜູ້ມີອາຍຸທັງຫຼາຍ ຖ້າເປັນແນວນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ຂ້ານ້ອຍຈັກກ່າວ" ພິກຂຸເຫຼົ່ານັ້ນ ຮັບຄຳແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວເລື້ອງນີ້ວ່າ ຜູ້ມີອາຍຸທັງຫຼາຍ ບຸກຄົນຜູ້ມີທຳທີ່ເສື່ອມໄປ ພຣະຜູ້ມີພຣະພາກເຈົ້າຕັດໄວ້ດ້ວຍເຫດທໍ່ໃດ?

ຄື ພິກຂຸໃນພຣະທຳວິໄນນີ້

໑. ບໍ່ໄດ້ຟັງທຳທີ່ຍັງບໍ່ເຄີຍຟັງ
໒. ທຳທີ່ພິກຂຸນັ້ນເຄີຍຟັງແລ້ວ ເຖິງຄວາມເລີເລືອນ
໓. ທຳທີ່ພິກຂຸນັ້ນເຄີຍສຳຜັດດ້ວຍໃຈມາກ່ອນ ບໍ່ຜາກົດແກ່ທ່ານ
໔. ພິກຂຸນັ້ນຍ່ອມບໍ່ຮູ້ທຳທີ່ຍັງບໍ່ເຄີຍຮູ້

ບຸກຄົນຜູ້ມີທຳທີ່ເສື່ອມໄປ ພຣະຜູ້ມີພຣະພາກເຈົ້າຕັດໄວ້ດ້ວຍເຫດທໍ່ນີ້ແລ

ບຸກຄົນຜູ້ມີທຳທີ່ບໍ່ເສື່ອມ

ບຸກຄົນຜູ້ມີທຳທີ່ບໍ່ເສື່ອມ ພຣະຜູ້ມີພຣະພາກເຈົ້າຕັດໄວ້ດ້ວຍເຫດທໍ່ໃດ?

ຄື ພິກຂຸໃນພຣະທຳວິໄນນີ້

໑. ໄດ້ຟັງທຳທີ່ຍັງບໍ່ເຄີຍຟັງ

໔. ທຳທີ່ພິກຂຸນັ້ນເຄີຍຟັງແລ້ວ ບໍ່ເຖິງຄວາມເລີເລືອນ

໖. ທຳທີ່ພິກຂຸນັ້ນເຄີຍສຳຜັດດ້ວຍໃຈມາກ່ອນ ຜາກົດແກ່ທ່ານ

໔. ພິກຂຸນັ້ນຍ່ອມຮູ້ທຳທີ່ຍັງບໍ່ເຄີຍຮູ້

ບຸກຄົນຜູ້ມີທຳທີ່ບໍ່ເສື່ອມ ພຣະຜູ້ມີພຣະພາກເຈົ້າຕັດໄວ້ດ້ວຍເຫດທໍ່ນີ້ແລ

ຫາກພິກຂຸບໍ່ສະຫຼາດໃນວາຣະຈິດຂອງຜູ້ອື່ນ ເມື່ອເປັນແນວນັ້ນ ພິກຂຸນັ້ນເພິ່ງໃສ່ໃຈວ່າ "ເຮົາຈັກເປັນຜູ້ສະຫຼາດໃນວາຣະຈິດຂອງຕົນ"

ຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

ພິກຂຸຜູ້ສະຫຼາດໃນວາຣະຈິດຂອງຕົນ

ພິກຂຸສະຫຼາດໃນວາຣະຈິດຂອງຕົນ ເປັນແນວໃດ?

ຄື ພິກຂຸມີການພິຈາລະນາທີ່ເປັນອຸປະກາຣະຫຼາຍໃນກຸສົນທຳທັງຫຼາຍວ່າ "ເຮົາບໍ່ມີອະພິດຊາຢູ່ສ່ວນຫຼາຍບໍນໍ ທຳນີ້ມີຢູ່ພ້ອມແກ່ເຮົາບໍນໍ ເຮົາມີຈິດບໍ່ພະຍາບາດຢູ່ສ່ວນຫຼາຍບໍນໍ ທຳນີ້ມີຢູ່ພ້ອມແກ່ເຮົາບໍນໍ ເຮົາປາສະຈາກ ຖີນະມິດທະຢູ່ສ່ວນຫຼາຍບໍນໍ ທຳນີ້ມີຢູ່ພ້ອມແກ່ເຮົາບໍນໍ ເຮົາມີຈິດບໍ່ຟຸ້ງຊ່ານຢູ່ສ່ວນຫຼາຍບໍນໍ ທຳນີ້ມີຢູ່ພ້ອມແກ່ເຮົາບໍນໍ ເຮົາຂ້າມພົ້ນຄວາມສົງໄສແລ້ວຢູ່ສ່ວນຫຼາຍບໍນໍ ທຳນີ້ມີຢູ່ພ້ອມແກ່ເຮົາບໍນໍ ເຮົາບໍ່ມັກໂກດຢູ່ສ່ວນຫຼາຍບໍນໍ ທຳນີ້ມີຢູ່ພ້ອມແກ່ເຮົາບໍນໍ ເຮົາມີຈິດບໍ່ເສົ້າໝອງຢູ່ສ່ວນຫຼາຍບໍນໍ ທຳນີ້ມີຢູ່ພ້ອມແກ່ເຮົາບໍນໍ ເຮົາໄດ້ປາໂມດໃນທຳພາຍໃນບໍນໍ ທຳນີ້ມີຢູ່ພ້ອມແກ່ເຮົາບໍນໍ ເຮົາໄດ້ຄວາມສະງົບແຫ່ງຈິດພາຍໃນບໍນໍ ທຳນີ້ມີຢູ່ພ້ອມແກ່ເຮົາບໍນໍ ເຮົາໄດ້ຄວາມເຫັນແຈ້ງທຳດ້ວຍປັນຍາອັນຍິ່ງບໍນໍ ທຳນີ້ມີຢູ່ພ້ອມແກ່ເຮົາບໍນໍ" ປຽບຄື ສະຕີ ຫຼື ບຸຣຸດທີ່ຍັງໜຸ່ມສາວມີປົກກະຕິມັກແຕ່ງໂຕ ແຍງເບິ່ງເງົາໜ້າຂອງຕົນໃນແວ່ນອັນບໍລິສຸດ ຜຸດຜ່ອງ ຫຼື ໃນພາຊະນະນ້ຳທີ່ໃສ ຖ້າເຫັນທຸລີຫຼືຈຸດດຳທີ່ໜ້ານັ້ນ ກໍພະຍາຍາມກຳຈັດທຸລີ ຫຼື ຈຸດດຳນັ້ນສາ ຫາກບໍ່ເຫັນທຸລີຫຼືຈຸດດຳທີ່ໜ້ານັ້ນ ກໍດີໃຈ ພູມໃຈ ດ້ວຍເຫດນັ້ນເອງວ່າ "ເປັນລາບຂອງເຮົານໍ ໜ້າຂອງເຮົາບໍລິສຸດແລ້ວນໍ?"

ຖ້າພິກຂຸພິຈາລະນາຢູ່ ບໍ່ພິຈາລະນາເຫັນກຸສົນທຳເຫຼົ່ານີ້ແມ່ນທັງໝົດໃນຕົນ ພິກຂຸນັ້ນກໍຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງເພື່ອໄດ້ກຸສົນທຳເຫຼົ່ານີ້ທັງໝົດ

ພິກຂຸນັ້ນ ກໍຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງເພື່ອໄດ້ກຸສົນທຳທັງຫຼາຍເຫຼົ່ານີ້ ປຽບຄືບຸກຄົນຜູ້ມີຜ້າທີ່ຖືກໄຟໄໝ້ຫຼືມີຫົວທີ່ຖືກໄຟໄໝ້ ຄວນທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະ ໃຫ້ມີປະມານຍິ່ງເພື່ອດັບໄຟທີ່ໄໝ້ຜ້າຫຼືໄຟທີ່ໄໝ້ຫົວນັ້ນ

ຖ້າພິກຂຸພິຈາລະນາຢູ່ ພິຈາລະນາເຫັນກຸສົນທຳບາງເຫຼົ່າວ່າມີໃນຕົນ ພິຈາລະນາເຫັນ ກຸສົນທຳບາງເຫຼົ່າວ່າບໍ່ມີໃນຕົນ ພິກຂຸນັ້ນກໍຄວນຕັ້ງໝັ້ນຢູ່ໃນກຸສົນທຳທັງຫຼາຍທີ່ພິຈາລະນາເຫັນວ່າມີໃນຕົນແລ້ວ ທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງເພື່ອໄດ້ກຸສົນທຳ ທີ່ພິຈາລະນາເຫັນວ່າບໍ່ມີໃນຕົນເຫຼົ່ານັ້ນ

ພິກຂຸນັ້ນ ຄວນຕັ້ງໝັ້ນຢູ່ໃນກຸສົນທຳທັງຫຼາຍທີ່ພິຈາລະນາເຫັນໃນຕົນແລ້ວ ທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງເພື່ອໄດ້ກຸສົນທຳທັງຫຼາຍທີ່ພິຈາລະນາເຫັນວ່າບໍ່ມີໃນຕົນ ປຽບຄື ບຸກຄົນຜູ້ມີຜ້າທີ່ຖືກໄຟໄໝ້ຫຼືມີຫົວທີ່ຖືກໄຟໄໝ້ ທຳຄວາມພໍໃຈ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມຕັ້ງໃຈ ຄວາມບໍ່ທໍ້ຖອຍ ສະຕິແລະສຳປະຊັນຍະໃຫ້ມີປະມານຍິ່ງເພື່ອດັບໄຟທີ່ໄໝ້ຜ້າ ຫຼື ໄຟທີ່ໄໝ້ຫົວນັ້ນ

ຜູ້ມີອາຍຸທັງຫຼາຍ ຖ້າພິກຂຸພິຈາລະນາຢູ່ ພິຈາລະນາເຫັນກຸສົນທຳເຫຼົ່ານີ້ ແມ່ນທັງໝົດວ່າມີໃນຕົນ ພິກຂຸນັ້ນກໍຄວນຕັ້ງໝັ້ນຢູ່ໃນກຸສົນທຳເຫຼົ່ານັ້ນທັງໝົດເລີຍ ແລ້ວເຮັດຄວາມພຽນເພື່ອຄວາມສິ້ນໄປແຫ່ງອາສະວະທັງຫຼາຍໃຫ້ຍິ່ງຂຶ້ນໄປ

**ປະຣິຫານະສູດທີ ໘ ຈົບ**

## ໖. ປະຖົມສັນຍາສູດ[1]

## ວ່າດ້ວຍສັນຍາ ສູດທີ ໑

[໕໖] ພິກຂຸທັງຫຼາຍ ສັນຍາ ໑໐ ປະການນີ້ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອະມະຕະ[2] ມີອະມະຕະເປັນບ່ອນສຸດ

ສັນຍາ ໑໐ ປະການ ອັນໃດແດ່ ຄື

໑. ອະສຸພະສັນຍາ (ກຳນົດໝາຍຄວາມບໍ່ງາມແຫ່ງກາຍ)
໒. ມໍຣະນະສັນຍາ (ກຳນົດໝາຍຄວາມຕາຍທີ່ຈະຕ້ອງມາເຖິງເປັນທຳມະດາ)
໓. ອາຫາເຣ ປະຕິກູນສັນຍາ (ກຳນົດໝາຍຄວາມປະຕິກູນໃນອາຫານ)
໔. ສັບພະໂລເກ ອະນະພິຣະຕະສັນຍາ (ກຳນົດໝາຍຄວາມບໍ່ໜ້າເພີດເພີນໃນໂລກທັງປວງ)
໕. ອະນິດຈະສັນຍາ (ກຳນົດໝາຍຄວາມບໍ່ທ່ຽງແຫ່ງສັງຂານ)
໖. ອະນິດເຈ ທຸກຂະສັນຍາ (ກຳນົດໝາຍຄວາມເປັນທຸກໃນຄວາມບໍ່ທ່ຽງແຫ່ງສັງຂານ)

໗. ທຸກເຂ ອະນັດຕະສັນຍາ (ກຳນົດໝາຍຄວາມເປັນອະນັດຕາໃນຄວາມເປັນທຸກ)
໘. ປະຫານະສັນຍາ (ກຳນົດໝາຍເພື່ອລະອະກຸສົນວິຕົກແລະບາບທຳທັງຫຼາຍ)
໙. ວິຣາຄະສັນຍາ (ກຳນົດໝາຍວິຣາຄະວ່າເປັນທຳລະອຽດປະນີດ)
໑໐. ນິໂຣທະສັນຍາ (ກຳນົດໝາຍນິໂຣດວ່າເປັນທຳລະອຽດປະນີດ)

ພິກຂຸທັງຫຼາຍ ສັນຍາ ໑໐ ປະການນີ້ແລ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອະມະຕະ ມີອະມະຕະເປັນບ່ອນສຸດ

**ປະຖົມສັນຍາສູດທີ ໖ ຈົບ**

# ໗. ທຸຕິຍະສັນຍາສູດ

## ວ່າດ້ວຍສັນຍາ ສູດທີ ໒

[໕໗] ພິກຂຸທັງຫຼາຍ ສັນຍາ ໑໐ ປະການນີ້ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອະມະຕະ ມີອະມະຕະເປັນບ່ອນສຸດ

ສັນຍາ ໑໐ ປະການ ອັນໃດແດ່ ຄື

໑. ອະນິດຈະສັນຍາ (ກຳນົດໝາຍຄວາມບໍ່ທ່ຽງແທ່ງສັງຂານ)
໒. ອະນັດຕະສັນຍາ (ກຳນົດໝາຍຄວາມເປັນອະນັດຕາແຫ່ງທຳທັງປວງ)
໓. ມໍຣະນະສັນຍາ (ກຳນົດໝາຍຄວາມຕາຍທີ່ຈະຕ້ອງມາເຖິງເປັນທຳມະດາ)
໔. ອາຫາເຣ ປະຕິກູນສັນຍາ (ກຳນົດໝາຍຄວາມປະຕິກູນໃນອາຫານ)
໕. ສັບພະໂລເກ ອະນະພິຣະຕະສັນຍາ(ກຳນົດໝາຍຄວາມບໍ່ໜ້າເພີດເພີນໃນໂລກທັງປວງ)
໖. ອັດຖິກະສັນຍາ (ກຳນົດໝາຍຊາກສົບທີ່ຍັງເຫຼືອຢູ່ແຕ່ຮ່າງກະດູກຫຼືກະດູກທ່ອນ)
໗. ປຸລຸວະກະສັນຍາ (ກຳນົດໝາຍຊາກສົບທີ່ມີໜອນຈຳນວນຫຼາຍເຕັມໄປໝົດ)
໘. ວິນີລະກະສັນຍາ (ກຳນົດໝາຍຊາກສົບທີ່ມີສີຂຽວເຂັ້ມປົນດ້ວຍສີຕ່າງ ໆ)
໙. ວິດສິດທະກະສັນຍາ (ກຳນົດໝາຍຊາກສົບທີ່ຂາດຈາກກັນເປັນ ໒ ທ່ອນ)
໑໐. ອຸດທຸມາຕະກະສັນຍາ (ກຳນົດໝາຍຊາກສົບທີ່ເນົ່າພອງໄຄ່ເບັ່ງ)

ພິກຂຸທັງຫຼາຍ ສັນຍາ ໑໐ ປະການນີ້ແລ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ຢັ່ງລົງສູ່ອະມະຕະ ມີອະມະຕະເປັນບ່ອນສຸດ

**ທຸຕິຍະສັນຍາສູດທີ ໗ ຈົບ**

# ໗. ມູລະກະສູດ

## ວ່າດ້ວຍມູນເຫດແຫ່ງທຳທັງຫຼາຍ

[໕໗] ພິກຂຸທັງຫຼາຍ ຖ້າພວກອັນຍະເດຍຣະຖີປະຣິພາຊົກຖາມແນວນີ້ວ່າ "ຜູ້ມີອາຍຸທັງຫຼາຍ ທຳທັງປວງມີອັນໃດເປັນມູນ ທຳທັງປວງມີອັນໃດເປັນຕົ້ນກຳເນີດ ທຳທັງປວງມີອັນໃດເປັນເຫດເກີດ ທຳທັງປວງມີອັນໃດເປັນທີ່ຊຸມນຸມ ທຳທັງປວງມີອັນໃດເປັນປະມຸກ ທຳທັງປວງມີອັນໃດເປັນໃຫຍ່ ທຳທັງປວງມີອັນໃດເປັນຍອດຍິ່ງ ທຳທັງປວງມີອັນໃດ ເປັນແກ່ນ ທຳທັງປວງມີອັນໃດເປັນທີ່ຢັ່ງລົງ ທຳທັງປວງມີອັນໃດເປັນບ່ອນສຸດ" ພິກຂຸທັງຫຼາຍ ທ່ານທັງຫຼາຍຖືກຖາມແນວນີ້ແລ້ວ ຈະຕອບພວກອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແນວໃດ

ພິກຂຸທັງຫຼາຍຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ທຳຂອງຂ້າພຣະອົງ ທັງຫຼາຍມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ມີພຣະຜູ້ມີພຣະພາກເຈົ້າເປັນຜູ້ນຳ ມີພຣະຜູ້ມີພຣະພາກເຈົ້າເປັນບ່ອນເພິ່ງ ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານອະໄຣກາດ ສະເພາະພຣະຜູ້ມີພຣະພາກເຈົ້າທໍ່ນັ້ນທີ່ຈະຊົງອະທິບາຍເນື້ອຄວາມແຫ່ງພຣະພາສິດນັ້ນໃຫ້ແຈ່ມແຈ້ງໄດ້ ພິກຂຸທັງຫຼາຍຟັງຕໍ່ຈາກພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ຖ້າພວກອັນຍະເດຍຣະຖີປະຣິພາຊົກຖາມແນວນີ້ວ່າ "ຜູ້ມີອາຍຸທັງຫຼາຍ

໑. ທຳທັງປວງມີອັນໃດເປັນ ມູນ
໒. ທຳທັງປວງມີອັນໃດເປັນ ຕົ້ນກຳເນີດ
໓. ທຳທັງປວງມີອັນໃດເປັນ ເຫດເກີດ
໔. ທຳທັງປວງມີອັນໃດເປັນ ທີ່ຊຸມນຸມ
໕. ທຳທັງປວງມີອັນໃດເປັນ ປະມຸກ
໖. ທຳທັງປວງມີອັນໃດເປັນ ໃຫຍ່
໗. ທຳທັງປວງມີອັນໃດເປັນ ຍອດຍິ່ງ
໘. ທຳທັງປວງມີອັນໃດເປັນ ແກ່ນ
໙. ທຳທັງປວງມີອັນໃດເປັນ ທີ່ຢັ່ງລົງ
໑໐. ທຳທັງປວງມີອັນໃດເປັນ ບ່ອນສຸດ"

ທ່ານທັງຫຼາຍຖືກຖາມແບບນີ້ແລ້ວ ຄວນຕອບພວກອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແບບນີ້ວ່າ "ຜູ້ມີອາຍຸທັງຫຼາຍ"

໑. ທຳທັງປວງມີ ສັນທະເປັນມູນ
໒. ທຳທັງປວງມີ ມະນະສິການເປັນຕົ້ນກຳເນີດ
໓. ທຳທັງປວງມີ ຜັດສະເປັນເຫດເກີດ
໔. ທຳທັງປວງມີ ເວທະນາເປັນທີ່ຊຸມນຸມ
໕. ທຳທັງປວງມີ ສະມາທິເປັນປະມຸກ
໖. ທຳທັງປວງມີ ສະຕິເປັນໃຫຍ່
໗. ທຳທັງປວງມີ ປັນຍາເປັນຍອດຍິ່ງ
໘. ທຳທັງປວງມີ ວິມຸດຕິເປັນແກ່ນ
໙. ທຳທັງປວງມີ ອະມະຕະເປັນທີ່ຢັ່ງລົງ
໑໐. ທຳທັງປວງມີ ນິບພານເປັນບ່ອນສຸດ"

ພິກຂຸທັງຫຼາຍ ທ່ານທັງຫຼາຍຖືກຖາມແບບນີ້ແລ້ວ ຄວນຕອບພວກອັນຍະເດຍຣະຖີ ປະຣິພາຊົກເຫຼົ່ານັ້ນແບບນີ້ແລ

**ມູລະກະສູດທີ ໘ ຈົບ**

# ໙. ປັບພັດຊາສູດ

## ວ່າດ້ວຍຈິດທີ່ໄດ້ຮັບການອົບຮົມຕາມສົມຄວນແກ່ບັນພະຊາ

[໕໙] ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແບບນີ້ວ່າ "ຈິດຂອງເຮົາຈັກໄດ້ຮັບການອົບຮົມຕາມສົມຄວນແກ່ບັນພະຊາ ແລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ຈັກບໍ່ຄອບງຳຈິດຢູ່ (ຄື) ຈິດຂອງເຮົາຈັກໄດ້ຮັບການອົບຮົມດ້ວຍອະນິດຈະສັນຍາ ໑ ຈິດຂອງເຮົາຈັກໄດ້ຮັບການອົບຮົມດ້ວຍອະນັດຕະສັນຍາ ໑ ຈິດຂອງເຮົາຈັກໄດ້ຮັບການອົບຮົມດ້ວຍອະສຸພະສັນຍາ ໑ ຈິດຂອງເຮົາຈັກໄດ້ຮັບການອົບຮົມດ້ວຍອາທີນະວະສັນຍາ ໑ ຈິດຂອງເຮົາຈັກຮູ້ຄວາມປະພຶດຖືກແລະບໍ່ຖືກຂອງສັດໂລກແລ້ວໄດ້ຮັບການອົບຮົມດ້ວຍສັນຍາ ໑ ຈິດຂອງເຮົາຈັກຮູ້ຄວາມຈະເລີນແລະຄວາມເສື່ອມຂອງສັດໂລກແລ້ວໄດ້ຮັບການອົບຮົມດ້ວຍສັນຍາ ໑ ຈິດຂອງເຮົາຈັກຮູ້ຄວາມເກີດແລະຄວາມດັບແຫ່ງສັງຂານໂລກແລ້ວໄດ້ຮັບການອົບຮົມດ້ວຍສັນຍາ ໑ ຈິດຂອງເຮົາຈັກໄດ້ຮັບການອົບຮົມດ້ວຍປະຫານະສັນຍາ ໑ ຈິດຂອງເຮົາຈັກໄດ້ຮັບ ການອົບຮົມ

ດ້ວຍວິຣາຄະສັນຍາ ໑ ຈິດຂອງເຮົາຈັກໄດ້ຮັບການອົບຮົມດ້ວຍ ນິໂຣທະສັນຍາ ໑" ພິກຂຸທັງຫຼາຍ ທ່ານທັງຫຼາຍເພິ່ງຕັ້ງໃຈຮູ້ແນວນີ້ແລ

ເມື່ອໃດ ຈິດຂອງພິກຂຸໄດ້ຮັບການອົບຮົມຕາມສົມຄວນແກ່ບັນພະຊາ ແລະບາບອະກຸສົນທຳ ທີ່ເກີດຂຶ້ນແລ້ວ ບໍ່ຄອບງຳຈິດຢູ່ (ຄື) ຈິດໄດ້ຮັບການອົບຮົມດ້ວຍອະນິດຈະສັນຍາ ໑ ຈິດໄດ້ຮັບການອົບຮົມດ້ວຍອະນັດຕະສັນຍາ ໑ ຈິດໄດ້ຮັບການອົບຮົມດ້ວຍອະສຸພະສັນຍາ ໑ ຈິດໄດ້ຮັບການອົບຮົມດ້ວຍອາທີນະວະສັນຍາ ໑ ຈິດນັ້ນຮູ້ຄວາມປະພຶດຖືກແລະບໍ່ຖືກຂອງສັດໂລກແລ້ວໄດ້ຮັບການອົບຮົມດ້ວຍສັນຍາ ໑ ຈິດຮູ້ຄວາມຈະເລີນແລະຄວາມເສື່ອມຂອງສັດໂລກ ແລ້ວໄດ້ຮັບການອົບຮົມດ້ວຍສັນຍາ ໑ ຈິດຮູ້ຄວາມເກີດແລະຄວາມດັບແຫ່ງສັງຂານໂລກແລ້ວໄດ້ຮັບການອົບຮົມດ້ວຍສັນຍາ ໑ ຈິດໄດ້ຮັບການອົບຮົມດ້ວຍປະຫານະສັນຍາ ໑ ຈິດໄດ້ຮັບການອົບຮົມດ້ວຍວິຣາຄະສັນຍາ ໑ ຈິດໄດ້ຮັບການອົບຮົມດ້ວຍນິໂຣທະສັນຍາ ໑

ເມື່ອນັ້ນ ພິກຂຸນັ້ນເພິ່ງຫວັງໄດ້ຜົນແນວ ໑ ໃນ ໒ ແນວ ຄື ອະຣະຫັດຕະຜົນໃນປັດຈຸບັນ ຫຼືເມື່ອຍັງມີອຸປາທານເຫຼືອຢູ່ ກໍຈັກເປັນອະນາຄາມີ

**ປັບພັດຊາສູດທີ ໙ ຈົບ**

## ໑໐. ຄິຣິມານັນທະສູດ

### ວ່າດ້ວຍການຫາຍອາພາດຂອງພຣະຄິຣິມານົນ

[໖໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນແລ ທ່ານພຣະຄິຣິມານົນອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ທ່ານພຣະອານົນຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ທ່ານພຣະຄິຣິມານົນອາພາດ ໄດ້ຮັບທຸກ ເປັນໄຂ້ໜັກ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໄດ້ໂຜດອະນຸເຄາະ ສະເດັດໄປຢ້ຽມທ່ານພຣະຄິຣິມານົນຍັງທີ່ຢູ່ເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ຖ້າທ່ານເຂົ້າໄປຫາແລ້ວກ່າວສັນຍາ ໑໐ ປະການແກ່ຄິຣິມານົນພິກຂຸ ເປັນໄປໄດ້ທີ່ການອາພາດຂອງຄິຣິມານົນພິກຂຸຈະສະງົບລະງັບໂດຍທັນທີຍ້ອນໄດ້ຟັງສັນຍາ ໑໐ ປະການນີ້

ສັນຍາ ໑໐ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ອະນິດຈະສັນຍາ | ໔. ອະນັດຕະສັນຍາ |
| ໓. ອະສຸພະສັນຍາ | ໔. ອາທີນະວະສັນຍາ |
| ໕. ປະຫານະສັນຍາ | ໖. ວິຣາຄະສັນຍາ |
| ໗. ນິໂຣທະສັນຍາ | ໘. ສັບພະໂລເກອະນະພິຣະຕະສັນຍາ |
| ໙. ສັບພະສັງຂາເຣສຸອະນິດຈະສັນຍາ | ໑໐. ອານາປານະສະຕິ |

ອະນິດຈະສັນຍາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ພິຈາລະນາວ່າ "ຮູບບໍ່ທ່ຽງ ເວທະນາບໍ່ທ່ຽງ ສັນຍາບໍ່ທ່ຽງ ສັງຂານບໍ່ທ່ຽງ ວິນຍານບໍ່ທ່ຽງ" ເປັນຜູ້ພິຈາລະນາເຫັນໂດຍຄວາມເປັນຂອງບໍ່ທ່ຽງໃນອຸປາທານຂັນ ໕ ນີ້ຢູ່ແນວນີ້ ນີ້ຮຽກວ່າ ອະນິດຈະສັນຍາ

ອະນັດຕະສັນຍາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ພິຈາລະນາເຫັນວ່າ ຕາເປັນອະນັດຕາ ຮູບເປັນອະນັດຕາ ຫູເປັນອະນັດຕາ ສຽງເປັນອະນັດຕາ ດັງເປັນອະນັດຕາ ກິ່ນເປັນອະນັດຕາ ລີ້ນເປັນອະນັດຕາ ຣົດເປັນອະນັດຕາ ກາຍເປັນອະນັດຕາ ໂຜດຖັບພະເປັນອະນັດຕາ ໃຈເປັນອະນັດຕາ ທຳມາຣົມເປັນອະນັດຕາ ເປັນຜູ້ພິຈາລະນາເຫັນໂດຍຄວາມເປັນອະນັດຕາໃນອາຍະຕະນະທັງຫຼາຍທີ່ເປັນພາຍໃນແລະພາຍນອກ ໖ ປະການນີ້ຢູ່ແນວນີ້ ນີ້ຮຽກວ່າ ອະນັດຕະສັນຍາ

ອະສຸພະສັນຍາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ພິຈາລະນາເຫັນກາຍນີ້ທີ່ນັ້ນ ຕັ້ງແຕ່ພື້ນຕີນຂຶ້ນໄປ ຕັ້ງແຕ່ປາຍຜົມລົງມາ ມີໜັງຫຸ້ມຢູ່ໂດຍຮອບ ເຕັມໄປດ້ວຍຂອງບໍ່ສະອາດມີປະການຕ່າງ ໆ ວ່າ "ໃນກາຍນີ້ມີຜົມ ຂົນ ເລັບ ແຂ້ວ ໜັງ ຊີ້ນ ເອັນ ກະດູກ ເຍື່ອໃນກະດູກ ໄຕ[?] ຫົວໃຈ ຕັບ ພັງຜືດ ມ້າມ ປອດ ໄສ້ໃຫຍ່ ໄສ້ນ້ອຍ ອາຫານໃໝ່ ອາຫານເກົ່າ ບີ ສະເລດ ໜອງ ເລືອດ ເຫື່ອ ມັນຂຸ້ນ ນ້ຳຕາ ນ້ຳມັນ ນ້ຳລາຍ ນ້ຳມູກ ໄຂຂໍ້ ມູດ" ເປັນຜູ້ພິຈາລະນາເຫັນໂດຍຄວາມເປັນຂອງບໍ່ງາມໃນກາຍນີ້ຢູ່ແນວນີ້ ນີ້ຮຽກວ່າ ອະສຸພະສັນຍາ

ອາທີນະວະສັນຍາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ພິຈາລະນາເຫັນວ່າ "ກາຍນີ້ມີທຸກຫຼາຍ ມີໂທດຫຼາຍ ຍ້ອນແນວນັ້ນ ອາພາດຕ່າງ ໆ ຈຶ່ງເກີດຂຶ້ນໃນກາຍນີ້ ຄື ພະຍາດຕາ ພະຍາດຫູ ພະຍາດດັງ ພະຍາດລີ້ນ ພະຍາດກາຍ ພະຍາດຫົວ ພະຍາດທີ່ໃບຫູ ພະຍາດປາກ ພະຍາດແຂ້ວ ພະຍາດໄອ ພະຍາດຫືດ ພະຍາດໄຂ້ຫວັດ ພະຍາດໄຂ້ພິດ

ພະຍາດໄຂ້ເຊື່ອງຊຶມ ພະຍາດທ້ອງ ພະຍາດລົມສະຫຼົບ ພະຍາດລົງແດງ[១] ພະຍາດຈຸກສຽດ ພະຍາດຮາກ ພະຍາດຂີ້ທູດ ພະຍາດຝີ ພະຍາດກາກ ພະຍາດມອງຄໍ່ ພະຍາດລົມບ້າໝູ ພະຍາດທິດເປື່ອຍ ພະຍາດທິດດ້ານ ພະຍາດຄຸດທະຣິດ ພະຍາດທູດ ພະຍາດລະອອງບວມ ພະຍາດຮາກເປັນເລືອດ ພະຍາດບີ ພະຍາດເບົາຫວານ ພະຍາດເຣີມ ພະຍາດພຸພອງ ພະຍາດຣິດສີດວງ ອາພາດມີບີເປັນສະມຸດຖານ ອາພາດມີສະເລດເປັນສະມຸດຖານ ອາພາດມີລົມເປັນສະມຸດຖານ ອາພາດມີໄຂ້ສັນນິບາດເປັນສະມຸດຖານ ອາພາດທີ່ເກີດແຕ່ລະດູປັ່ນປ່ວນ ອາພາດທີ່ເກີດແຕ່ການບໍລິຫານທີ່ບໍ່ສະໝໍ່າສະເໝີ ອາພາດທີ່ເກີດແຕ່ຄວາມພຽນເກີນກໍາລັງ ອາພາດທີ່ເກີດແຕ່ວິບາກຂອງກໍາ ຄວາມໜາວ ຄວາມຮ້ອນ ຄວາມຫິວ ຄວາມກະຫາຍ ປວດອຸດຈາຣະ ປວດປັດສາວະ" ເປັນຜູ້ພິຈາລະນາເຫັນໂດຍຄວາມເປັນໂທດໃນກາຍນີ້ຢູ່ແນວນີ້ ນີ້ຮຽກວ່າ ອາທີນະວະສັນຍາ

ປະຫານະສັນຍາ ເປັນແນວໃດ?

ຄື ພິກຂຸໃນທໍາວິໄນນີ້ບໍ່ຮັບກາມວິຕົກທີ່ເກີດຂື້ນ ລະ ບັນເທົາ ເຮັດໃຫ້ສິ້ນສຸດ ເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ບໍ່ຮັບພະຍາບາດວິຕົກທີ່ເກີດຂື້ນ ລະ ບັນເທົາ ເຮັດໃຫ້ສິ້ນສຸດ ເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ບໍ່ຮັບວິຫິງສາວິຕົກທີ່ເກີດຂື້ນ ລະ ບັນເທົາ ເຮັດໃຫ້ສິ້ນສຸດ ເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ບໍ່ຮັບບາບອະກຸສົນທໍາທີ່ເກີດຂື້ນແລ້ວ ເກີດຂຶ້ນອີກ ລະ ບັນເທົາ ເຮັດໃຫ້ສິ້ນສຸດ ເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ນີ້ຮຽກວ່າ ປະຫານະສັນຍາ

ວິຣາຄະສັນຍາ ເປັນແນວໃດ?

ຄື ພິກຂຸໃນທໍາວິໄນນີ້ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ພິຈາລະນາເຫັນວ່າ "ພາວະທີ່ສະງົບ ປະນີດ ຄື ຄວາມລະງັບສັງຂານທັງປວງ ຄວາມສະລະຄືນເຊື້ອອຸປະທິທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກໍາໜັດ ນິບພານ" ນີ້ຮຽກວ່າ ວິຣາຄະສັນຍາ

ນິໂຣທະສັນຍາ ເປັນແນວໃດ?

ຄື ພິກຂຸໃນທໍາວິໄນນີ້ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ພິຈາລະນາເຫັນວ່າ "ພາວະທີ່ສະງົບ ປະນີດ ຄືຄວາມລະງັບສັງຂານທັງປວງ ຄວາມສະລະຄືນເຊື້ອອຸປະທິທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມດັບ ນິບພານ" ນີ້ຮຽກວ່າ ນິໂຣທະສັນຍາ

ສັບພະໂລເກ ອະນະພິຣະຕະສັນຍາ ເປັນແນວໃດ?

ຄື ພິກຂຸໃນທໍາວິໄນນີ້ ລະອຸປາທານໃນໂລກທີ່ເປັນເຫດຕັ້ງໝັ້ນ ຢຶດໝັ້ນ ແລະ ເປັນອະນຸໄສແຫ່ງຈິດ ງົດເວັ້ນ ບໍ່ຖືໝັ້ນ ນີ້ຮຽກວ່າ ສັບພະໂລເກ ອະນະພິຣະຕະສັນຍາ

ສັບພະສັງຂາເຣສຸ ອະນິດຈະສັນຍາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຍ່ອມອິດອັດ ຣະອາ ລັງກຽດໃນສັງຂານທັງປວງ ນີ້ຮຽກວ່າ ສັບພະສັງຂາເຣສຸ ອະນິດຈະສັນຍາ

ອານາປານະສະຕິ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ນັ່ງຄູ້ບັນລັງ[໑] ຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ[໒] ມີສະຕິຫັນໃຈເຂົ້າ ມີສະຕິຫັນໃຈອອກ[໓]

ອານາປານະສະຕິ ໑໖ ຂັ້ນ[໔]

໑. ເມື່ອຫັນໃຈເຂົ້າຍາວ ກໍຮູ້ແຈ້ງວ່າຫັນໃຈເຂົ້າຍາວ
ເມື່ອຫັນໃຈອອກຍາວ ກໍຮູ້ແຈ້ງວ່າຫັນໃຈອອກຍາວ
໒. ເມື່ອຫັນໃຈເຂົ້າສັ້ນ ກໍຮູ້ແຈ້ງວ່າຫັນໃຈເຂົ້າສັ້ນ
ເມື່ອຫັນໃຈອອກສັ້ນ ກໍຮູ້ແຈ້ງວ່າຫັນໃຈອອກສັ້ນ
໓. ໃສ່ໃຈວ່າ ຈະຮູ້ແຈ້ງກອງລົມທັງປວງ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະຮູ້ແຈ້ງກອງລົມທັງປວງ ຫັນໃຈອອກ
໔. ໃສ່ໃຈວ່າ ຈະລະງັບກາຍສັງຂານ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະລະງັບກາຍສັງຂານ ຫັນໃຈອອກ
໕. ໃສ່ໃຈວ່າ ຈະຮູ້ແຈ້ງ ປີຕິ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະຮູ້ແຈ້ງ ປີຕິ ຫັນໃຈອອກ
໖. ໃສ່ໃຈວ່າ ຈະຮູ້ແຈ້ງ ສຸກ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະຮູ້ແຈ້ງ ສຸກ ຫັນໃຈອອກ
໗. ໃສ່ໃຈວ່າ ຈະຮູ້ແຈ້ງຈິດຕະສັງຂານ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະຮູ້ແຈ້ງຈິດຕະສັງຂານ ຫັນໃຈອອກ
໘. ໃສ່ໃຈວ່າ ຈະລະງັບຈິດຕະສັງຂານ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະລະງັບຈິດຕະສັງຂານ ຫັນໃຈອອກ
໙. ໃສ່ໃຈວ່າ ຈະຮູ້ແຈ້ງຈິດ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະຮູ້ແຈ້ງຈິດ ຫັນໃຈອອກ
໑໐. ໃສ່ໃຈວ່າ ຈະຍັງຈິດໃຫ້ບັນເທີງ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະຍັງຈິດໃຫ້ບັນເທີງ ຫັນໃຈອອກ
໑໑. ໃສ່ໃຈວ່າ ຈະຕັ້ງຈິດໝັ້ນ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະຕັ້ງຈິດໝັ້ນ ຫັນໃຈອອກ
໑໒. ໃສ່ໃຈວ່າ ຈະປົດຈິດ ຫັນໃຈເຂົ້າ

ໃສ່ໃຈວ່າ ຈະປົດຈິດ ຫັນໃຈອອກ
໑໓. ໃສ່ໃຈວ່າ ຈະພິຈາລະນາເຫັນວ່າບໍ່ທ່ຽງ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະພິຈາລະນາເຫັນວ່າບໍ່ທ່ຽງ ຫັນໃຈອອກ
໑໔. ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມຄາຍອອກໄດ້ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມຄາຍອອກໄດ້ ຫັນໃຈອອກ
໑໕. ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມດັບໄປ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມດັບໄປ ຫັນໃຈອອກ
໑໖. ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈເຂົ້າ
ໃສ່ໃຈວ່າ ຈະພິຈາລະນາເຫັນຄວາມສະລະຄືນ ຫັນໃຈອອກ

ນີ້ຮຽກວ່າ ອານາປານະສະຕິ

ຖ້າທ່ານຈະເພິ່ງເຂົ້າໄປຫາແລ້ວກ່າວສັນຍາ ໑໐ ປະການນີ້ແກ່ຄິຣິມານົນພິກຂຸ ເປັນໄປໄດ້ທີ່ອາພາດຂອງຄິຣິມານົນພິກຂຸນັ້ນຈະລະງັບໄປໂດຍທັນທີຍ້ອນໄດ້ຟັງ ສັນຍາ ໑໐ ປະການນີ້

ຄັ້ງນັ້ນແລ ທ່ານພຣະອານົນໄດ້ຮຽນສັນຍາ ໑໐ ປະການນີ້ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ ເຂົ້າໄປຫາທ່ານພຣະຄິຣິມານົນຮອດບ່ອນຢູ່ ກ່າວສັນຍາ ໑໐ ປະການນີ້ແກ່ທ່ານພຣະຄິຣິມານົນ ຂະນະນັ້ນເອງ ອາພາດຂອງທ່ານພຣະຄິຣິມານົນສະງົບລະງັບລົງໂດຍທັນທີຍ້ອນໄດ້ຟັງສັນຍາ ໑໐ ປະການນີ້ ທ່ານພຣະຄິຣິມານົນໄດ້ຫາຍຂາດຈາກ ອາພາດນັ້ນ

ອາພາດນັ້ນ ເປັນພະຍາດອັນທ່ານພຣະຄິຣິມານົນລະໄດ້ ແນວນີ້ແລ

**ຄິຣິມານັນທະສູດທີ ໑໐ ຈົບ**

**ສະຈິດຕະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ສະຈິດຕະສູດ
໒. ຖິຕິສູດ
໓. ປະຣິຫານະສູດ
໔. ທຸຕິຍະສັນຍາສູດ
໕. ປັບພັດຊາສູດ
໖. ສາຣີປຸດຕະສູດ
໗. ສະມະຖະສູດ
໘. ປະຖົມສັນຍາສູດ
໙. ມູລະກະສູດ
໑໐. ຄິຣິມານັນທະສູດ

# ໘. ຍະມະກະວັກ

## ໝວດວ່າດ້ວຍທຳຄູ່ກັນ

## ໑. ອະວິດຊາສູດ

### ວ່າດ້ວຍອະວິດຊາ

[໖໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເງື່ອນຕົ້ນແຫ່ງອະວິດຊາຍ່ອມບໍ່ຜາກົດ ໃນການກ່ອນແຕ່ນີ້ ອະວິດຊາບໍ່ມີ ພາຍຫຼັງຈຶ່ງມີ ຍ້ອນແນວນັ້ນ ເຮົາຈຶ່ງກ່າວຄຳນີ້ແນວນີ້ ກໍເມື່ອເປັນແນວນັ້ນ ອະວິດຊາທີ່ມີຂໍ້ນີ້ເປັນປັດໄຈຈຶ່ງຜາກົດ

ແມ່ນອະວິດຊາ ເຮົາກໍກ່າວວ່າມີອາຫານ[๑] ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງອະວິດຊາ ຄວນຕອບວ່າ "ນິວອນ ໕"

ແມ່ນນິວອນ ໕ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງນິວອນ ໕ ຄວນຕອບວ່າ "ທຸດຈະຣິດ ໓"

ແມ່ນທຸດຈະຣິດ ໓ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງທຸດຈະຣິດ ໓ ຄວນຕອບວ່າ "ຄວາມບໍ່ສັງລວມອິນຊີ"

ແມ່ນຄວາມບໍ່ສັງລວມອິນຊີ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງຄວາມບໍ່ສັງລວມອິນຊີ ຄວນຕອບວ່າ "ຄວາມບໍ່ມີສະຕິສຳປະຊັນຍະ"

ແມ່ນຄວາມບໍ່ມີສະຕິສຳປະຊັນຍະ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງຄວາມບໍ່ມີສະຕິສຳປະຊັນຍະ ຄວນຕອບວ່າ "ການມະນະສິການໂດຍບໍ່ແຍບຄາຍ"

ແມ່ນການມະນະສິການໂດຍບໍ່ແຍບຄາຍ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍ ເປັນອາຫານຂອງການມະນະສິການໂດຍບໍ່ແຍບຄາຍ ຄວນຕອບວ່າ "ຄວາມບໍ່ມີສັດທາ"

ແມ່ນຄວາມບໍ່ມີສັດທາ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍ ເປັນອາຫານຂອງຄວາມບໍ່ມີສັດທາ ຄວນຕອບວ່າ "ການບໍ່ຟັງສັດທຳ"

ແມ່ນການບໍ່ຟັງສັດທຳ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍ ເປັນອາຫານຂອງການບໍ່ຟັງສັດທຳ ຄວນຕອບວ່າ "ການບໍ່ຄົບສັດຕະບຸຣຸດ"

ການບໍ່ຄົບສັດຕະບຸຣຸດທີ່ບໍລິບູນ ຍ່ອມເຮັດໃຫ້ການບໍ່ຟັງສັດທຳບໍລິບູນ

ການບໍ່ຟັງສັດທຳທີ່ບໍລິບູນ ຍ່ອມເຮັດໃຫ້ຄວາມບໍ່ມີສັດທາບໍລິບູນ

ຄວາມບໍ່ມີສັດທາທີ່ບໍລິບູນ ຍ່ອມເຮັດໃຫ້ການມະນະສິການໂດຍບໍ່ແຍບຄາຍບໍລິບູນ

ການມະນະສິການໂດຍບໍ່ແຍບຄາຍທີ່ບໍລິບູນ ຍ່ອມເຮັດໃຫ້ຄວາມບໍ່ມີສະຕິສຳປະຊັນຍະບໍລິບູນ

ຄວາມບໍ່ມີສະຕິສຳປະຊັນຍະທີ່ບໍລິບູນ ຍ່ອມເຮັດໃຫ້ຄວາມບໍ່ສັງລວມອິນຊີບໍລິບູນ

ຄວາມບໍ່ສັງລວມອິນຊີທີ່ບໍລິບູນ ຍ່ອມເຮັດໃຫ້ທຸດຈະຣິດ ໓ ບໍລິບູນ

ທຸດຈະຣິດ ໓ ທີ່ບໍລິບູນ ຍ່ອມເຮັດໃຫ້ນິວອນ ໕ ບໍລິບູນ

ນິວອນ ໕ ທີ່ບໍລິບູນ ຍ່ອມເຮັດໃຫ້ອະວິດຊາບໍລິບູນ

ອະວິດຊານີ້ມີອາຫານແນວນີ້ ແລະບໍລິບູນແນວນີ້ແລ

ພິກຂຸທັງຫຼາຍ ການບໍ່ຄົບສັດຕະບຸຣຸດທີ່ບໍລິບູນຍ່ອມເຮັດໃຫ້ການບໍ່ຟັງສັດທຳບໍລິບູນ ຯລຯ ນິວອນ ໕ ທີ່ບໍລິບູນ ຍ່ອມເຮັດໃຫ້ອະວິດຊາບໍລິບູນ ອະວິດຊານີ້ມີອາຫານແນວນີ້ ແລະບໍລິບູນແນວນີ້ ປຽບຄື ເມື່ອຝົນເມັດໃຫຍ່ຕົກລົງເທິງຈອມພູ ເມື່ອຝົນຕົກລົງໜັກ ໆ ນ້ຳນັ້ນໄຫຼໄປຕາມບ່ອນຫຼຸບເຮັດໃຫ້ຮ່ອມພູ ລຳທານ ແລະຫ້ວຍເຕັມປ່ຽມ ຮ່ອມພູ ລຳທານ ແລະຫ້ວຍເຕັມປ່ຽມແລ້ວເຮັດໃຫ້ໜອງເຕັມ ໜອງເຕັມແລ້ວເຮັດໃຫ້ບຶງເຕັມ ບຶງເຕັມແລ້ວເຮັດໃຫ້ແມ່ນ້ຳນ້ອຍເຕັມ ແມ່ນ້ຳນ້ອຍເຕັມແລ້ວເຮັດໃຫ້ແມ່ນ້ຳໃຫຍ່ເຕັມ ແມ່ນ້ຳໃຫຍ່ເຕັມແລ້ວເຮັດໃຫ້ ມະຫາສະມຸດສາຄອນເຕັມ ມະຫາສະມຸດສາຄອນນີ້ມີອາຫານແນວນີ້ ແລະເຕັມປ່ຽມແນວນີ້

## ວ່າດ້ວຍວິດຊາແລະວິມຸດຕິ

ພິກຂຸທັງຫຼາຍ ແມ່ນວິດຊາແລະວິມຸດຕິ[១] ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍ ເປັນອາຫານຂອງວິດຊາແລະວິມຸດຕິ ຄວນຕອບວ່າ "ໂພດຊົງ ໗"

ແມ່ນໂພດຊົງ ໗ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງໂພດຊົງ ໗ ຄວນຕອບວ່າ "ສະຕິປັດຖານ ໔"

ແມ່ນສະຕິປັດຖານ ໔ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍ ເປັນອາຫານຂອງສະຕິປັດຖານ ໔ ຄວນຕອບວ່າ "ສຸດຈະຣິດ ໓"

ແມ່ນສຸດຈະຣິດ ໓ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງສຸດຈະຣິດ ໓ ຄວນຕອບວ່າ "ຄວາມສັງລວມອິນຊີ"

ແມ່ນຄວາມສັງລວມອິນຊີ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງຄວາມສັງລວມອິນຊີ ຄວນຕອບວ່າ "ສະຕິສຳປະຊັນຍະ"

ແມ່ນສະຕິສຳປະຊັນຍະ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍ ເປັນອາຫານຂອງສະຕິສຳປະຊັນຍະ ຄວນຕອບວ່າ "ການມະນະສິການໂດຍແຍບຄາຍ"

ແມ່ນການມະນະສິການໂດຍແຍບຄາຍ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງການມະນະສິການໂດຍແຍບຄາຍ ຄວນຕອບວ່າ "ສັດທາ"

ແມ່ນສັດທາ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍ ເປັນອາຫານຂອງສັດທາ ຄວນຕອບວ່າ "ການຟັງສັດທຳ"

ແມ່ນການຟັງສັດທຳ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍ ເປັນອາຫານຂອງການຟັງສັດທຳ ຄວນຕອບວ່າ "ການຄົບສັດຕະບຸຣຸດ"

ການຄົບສັດຕະບຸຣຸດທີ່ບໍລິບູນ ຍ່ອມເຮັດໃຫ້ການຟັງສັດທຳບໍລິບູນ
ການຟັງສັດທຳທີ່ບໍລິບູນ ຍ່ອມເຮັດໃຫ້ສັດທາບໍລິບູນ
ສັດທາທີ່ບໍລິບູນ ຍ່ອມເຮັດໃຫ້ການມະນະສິການໂດຍແຍບຄາຍບໍລິບູນ
ການມະນະສິການໂດຍແຍບຄາຍທີ່ບໍລິບູນ ຍ່ອມເຮັດໃຫ້ສະຕິສຳປະຊັນຍະບໍລິບູນ ສະຕິສຳປະຊັນຍະທີ່ບໍລິບູນ ຍ່ອມເຮັດໃຫ້ຄວາມສັງລວມອິນຊີບໍລິບູນ
ຄວາມສັງລວມອິນຊີທີ່ບໍລິບູນ ຍ່ອມເຮັດໃຫ້ສຸດຈະຣິດ ໓ ບໍລິບູນ
ສຸດຈະຣິດ ໓ ທີ່ບໍລິບູນ ຍ່ອມເຮັດໃຫ້ສະຕິປັດຖານ ໔ ບໍລິບູນ
ສະຕິປັດຖານ ໔ ທີ່ບໍລິບູນ ຍ່ອມເຮັດໃຫ້ໂພດຊົງ ໗ ບໍລິບູນ
ໂພດຊົງ ໗ ທີ່ບໍລິບູນ ຍ່ອມເຮັດໃຫ້ວິດຊາແລະວິມຸດຕິບໍລິບູນ
ວິດຊາແລະວິມຸດຕິນີ້ມີອາຫານແນວນີ້ ແລະບໍລິບູນແນວນີ້

ພິກຂຸທັງຫຼາຍ ການຄົບສັດຕະບຸຣຸດທີ່ບໍລິບູນ ຍ່ອມເຮັດໃຫ້ການຟັງສັດທຳບໍລິບູນ ຯລຯ ໂພດຊົງ ໗ ທີ່ບໍລິບູນ ຍ່ອມເຮັດໃຫ້ວິດຊາແລະວິມຸດຕິບໍລິບູນ ວິດຊາແລະວິມຸດຕິນີ້ມີອາຫານແນວນີ້ ແລະບໍລິບູນແນວນີ້ ປຽບຄືເມື່ອຝົນເມັດໃຫຍ່ຕົກລົງເທິງຈອມພູ ເມື່ອຝົນຕົກລົງໜັກໆ ນ້ຳນັ້ນໄຫຼໄປຕາມບ່ອນຫຼຸບເຮັດໃຫ້ຮ່ອມພູ ລຳທານ ແລະຫ້ວຍເຕັມປ່ຽມ ຮ່ອມພູ ລຳທານແລະຫ້ວຍເຕັມປ່ຽມແລ້ວເຮັດໃຫ້ໜອງເຕັມ ໜອງເຕັມແລ້ວເຮັດໃຫ້ບຶງເຕັມ ບຶງເຕັມ ແລ້ວເຮັດໃຫ້ແມ່ນ້ຳນ້ອຍເຕັມ ແມ່ນ້ຳນ້ອຍເຕັມແລ້ວເຮັດໃຫ້ແມ່ນ້ຳໃຫຍ່ເຕັມ ແມ່ນ້ຳໃຫຍ່ ເຕັມແລ້ວເຮັດໃຫ້ມະຫາສະມຸດສາຄອນເຕັມ ມະຫາສະມຸດ ສາຄອນນີ້ມີອາຫານແນວນີ້ ແລະເຕັມປ່ຽມແນວນີ້

**ອະວິດຊາສູດທີ່ ໑ ຈົບ**

# ໘. ຕັນຫາສູດ

## ວ່າດ້ວຍຕັນຫາ

[໖໘] ພິກຂຸທັງຫຼາຍ ເງື່ອນຕົ້ນແຫ່ງພະວະຕັນຫາ(ຄວາມທະຍານຢາກໃນພົບ) ຍ່ອມບໍ່ຜາກົດ ໃນການກ່ອນແຕ່ນີ້ ພະວະຕັນຫາບໍ່ມີ ພາຍຫຼັງຈຶ່ງມີ ຍ້ອນແນວນັ້ນ ເຮົາຈຶ່ງກ່າວຄໍານີ້ແນວນີ້ ເມື່ອເປັນແນວນັ້ນ ພະວະຕັນຫາທີ່ມີຂໍ້ນີ້ເປັນປັດໃຈຈຶ່ງຜາກົດ

ແມ່ນພະວະຕັນຫາ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງພະວະຕັນຫາ ຄວນຕອບວ່າ “ອະວິດຊາ”

ແມ່ນອະວິດຊາ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງອະວິດຊາ ຄວນຕອບວ່າ “ນິວອນ ໕”

ແມ່ນນິວອນ ໕ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງນິວອນ ໕ ຄວນຕອບວ່າ “ທຸດຈະຣິດ ໓”

ແມ່ນທຸດຈະຣິດ ໓ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງທຸດຈະຣິດ ໓ ຄວນຕອບວ່າ “ຄວາມບໍ່ສັງລວມອິນຊີ”

ແມ່ນຄວາມບໍ່ສັງລວມອິນຊີ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງຄວາມບໍ່ສັງລວມອິນຊີ ຄວນຕອບວ່າ “ຄວາມບໍ່ມີສະຕິສໍາປະຊັນຍະ”

ແມ່ນຄວາມບໍ່ມີສະຕິສໍາປະຊັນຍະ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງຄວາມບໍ່ມີສະຕິສໍາປະຊັນຍະ ຄວນຕອບວ່າ “ການມະນະສິການໂດຍບໍ່ແຍບຄາຍ”

ແມ່ນການມະນະສິການໂດຍບໍ່ແຍບຄາຍ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍ ເປັນອາຫານຂອງການມະນະສິການໂດຍບໍ່ແຍບຄາຍ ຄວນຕອບວ່າ “ຄວາມບໍ່ມີສັດທາ”

ແມ່ນຄວາມບໍ່ມີສັດທາ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍ ເປັນອາຫານຂອງຄວາມບໍ່ມີສັດທາ ຄວນຕອບວ່າ “ການບໍ່ຟັງສັດທໍາ”

ແມ່ນການຟັງອະສັດທໍາ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງການຟັງອະສັດທໍາ ຄວນຕອບວ່າ “ການບໍ່ຄົບສັດຕະບຸຣຸດ”

ການບໍ່ຄົບສັດຕະບຸຣຸດທີ່ບໍລິບູນ ຍ່ອມເຮັດໃຫ້ການບໍ່ຟັງສັດທຳບໍລິບູນ
ການບໍ່ຟັງສັດທຳທີ່ບໍລິບູນ ຍ່ອມເຮັດໃຫ້ຄວາມບໍ່ມີສັດທາບໍລິບູນ
ຄວາມບໍ່ມີສັດທາທີ່ບໍລິບູນ ຍ່ອມເຮັດໃຫ້ການມະນະສິການໂດຍບໍ່ແຍບຄາຍບໍລິບູນ
ການມະນະສິການໂດຍບໍ່ແຍບຄາຍທີ່ບໍລິບູນ ຍ່ອມເຮັດໃຫ້ຄວາມບໍ່ມີສະຕິສຳປະຊັນຍະບໍລິບູນ
ຄວາມບໍ່ມີສະຕິສຳປະຊັນຍະທີ່ບໍລິບູນ ຍ່ອມເຮັດໃຫ້ຄວາມບໍ່ສັງລວມອິນຊີບໍລິບູນ
ຄວາມບໍ່ສັງລວມອິນຊີທີ່ບໍລິບູນ ຍ່ອມເຮັດໃຫ້ທຸດຈະຣິດ ໓ ບໍລິບູນ
ທຸດຈະຣິດ ໓ ທີ່ບໍລິບູນ ຍ່ອມເຮັດໃຫ້ນິວອນ ໕ ບໍລິບູນ
ນິວອນ ໕ ທີ່ບໍລິບູນ ຍ່ອມໃຫ້ອະວິດຊາບໍລິບູນ
ອະວິດຊາທີ່ບໍລິບູນ ຍ່ອມເຮັດໃຫ້ພະວະຕັນຫາບໍລິບູນ
ພະວະຕັນຫານີ້ມີອາຫານແນວນີ້ ແລະບໍລິບູນແນວນີ້

ພິກຂຸທັງຫຼາຍ ການບໍ່ຄົບສັດຕະບຸຣຸດທີ່ບໍລິບູນ ຍ່ອມເຮັດໃຫ້ການບໍ່ຟັງສັດທຳ ບໍລິບູນ ຯລຯ ອະວິດຊາທີ່ບໍລິບູນ ຍ່ອມເຮັດໃຫ້ພະວະຕັນຫາບໍລິບູນ ພະວະຕັນຫານີ້ມີອາຫານ ແນວນີ້ ແລະບໍລິບູນແນວນີ້ ປຽບຄືເມື່ອຝົນເມັດໃຫຍ່ຕົກລົງເທິງຈອມພູ ເມື່ອຝົນຕົກລົງໜັກ ໆ ນ້ຳນັ້ນໄຫຼໄປຕາມບ່ອນຫຼຸບເຮັດໃຫ້ຮ່ອມພູ ລຳທານ ແລະຫ້ວຍເຕັມປ່ຽມ ຮ່ອມພູ ລຳທານ ແລະຫ້ວຍເຕັມປ່ຽມແລ້ວເຮັດໜອງໃຫ້ເຕັມ ໜອງເຕັມແລ້ວເຮັດໃຫ້ບຶງເຕັມ ບຶງເຕັມແລ້ວເຮັດໃຫ້ແມ່ນ້ຳນ້ອຍເຕັມ ແມ່ນ້ຳນ້ອຍເຕັມແລ້ວເຮັດໃຫ້ແມ່ນ້ຳໃຫຍ່ເຕັມ ແມ່ນ້ຳໃຫຍ່ເຕັມແລ້ວເຮັດໃຫ້ມະຫາສະມຸດສາຄອນເຕັມ ມະຫາສະມຸດສາຄອນນີ້ມີອາຫານແນວນີ້ ແລະເຕັມປ່ຽມແນວນີ້

## ວ່າດ້ວຍວິດຊາແລະວິມຸດຕິ

ແມ່ນວິດຊາແລະວິມຸດຕິ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງວິດຊາແລະວິມຸດຕິ ຄວນຕອບວ່າ “ໂພດຊົງ ໗”

ແມ່ນໂພດຊົງ ໗ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງໂພດຊົງ ໗ ຄວນຕອບວ່າ “ສະຕິປັດຖານ ໔”

ແມ່ນສະຕິປັດຖານ ໔ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງສະຕິປັດຖານ ໔ ຄວນຕອບວ່າ “ສຸດຈະຣິດ ໓”

ແມ່ນສຸດຈະຣິດ ໓ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານຂອງສຸດຈະຣິດ ໓ ຄວນຕອບວ່າ “ຄວາມສັງລວມອິນຊີ”

ແມ່ນຄວາມສັງລວມອິນຊີ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດ ນໍ ເປັນອາຫານຂອງຄວາມສັງລວມອິນຊີ ຄວນຕອບວ່າ "ສະຕິສໍາປະຊັນຍະ"

ແມ່ນສະຕິສໍາປະຊັນຍະ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍ ເປັນອາຫານຂອງສະຕິສໍາປະຊັນຍະ ຄວນຕອບວ່າ "ການມະນະສິການໂດຍແຍບຄາຍ"

ແມ່ນການມະນະສິການໂດຍແຍບຄາຍ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີ ອາຫານ ອັນໃດນໍເປັນອາຫານຂອງການມະນະສິການໂດຍແຍບຄາຍ ຄວນຕອບວ່າ "ສັດທາ"

ແມ່ນສັດທາ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍເປັນອາຫານ ຂອງສັດທາ ຄວນຕອບວ່າ "ການຟັງສັດທໍາ"

ແມ່ນການຟັງສັດທໍາ ເຮົາກໍກ່າວວ່າມີອາຫານ ບໍ່ໄດ້ກ່າວວ່າບໍ່ມີອາຫານ ອັນໃດນໍ ເປັນ ອາຫານຂອງການຟັງສັດທໍາ ຄວນຕອບວ່າ "ການຄົບສັດຕະບຸຣຸດ"

ການຄົບສັດຕະບຸຣຸດທີ່ບໍລິບູນ ຍ່ອມເຮັດໃຫ້ການຟັງສັດທໍາບໍລິບູນ
ການຟັງສັດທໍາທີ່ບໍລິບູນ ຍ່ອມເຮັດໃຫ້ສັດທາບໍລິບູນ
ສັດທາທີ່ບໍລິບູນ ຍ່ອມເຮັດໃຫ້ການມະນະສິການໂດຍແຍບຄາຍບໍລິບູນ
ການມະນະສິການໂດຍແຍບຄາຍທີ່ບໍລິບູນ ຍ່ອມເຮັດໃຫ້ສະຕິສໍາປະຊັນຍະບໍລິບູນ
ສະຕິສໍາປະຊັນຍະທີ່ບໍລິບູນ ຍ່ອມເຮັດໃຫ້ຄວາມສັງລວມອິນຊີບໍລິບູນ
ຄວາມສັງລວມອິນຊີທີ່ບໍລິບູນ ຍ່ອມເຮັດໃຫ້ສຸດຈະຣິດ ໓ ບໍລິບູນ
ສຸດຈະຣິດ ໓ ທີ່ບໍລິບູນ ຍ່ອມເຮັດໃຫ້ສະຕິປັດຖານ ໔ ບໍລິບູນ
ສະຕິປັດຖານ ໔ ທີ່ບໍລິບູນ ຍ່ອມເຮັດໃຫ້ໂພດຊົງ ໗ ບໍລິບູນ
ໂພດຊົງ ໗ ທີ່ບໍລິບູນ ຍ່ອມເຮັດໃຫ້ວິດຊາແລະວິມຸດຕິບໍລິບູນ
ວິດຊາແລະວິມຸດຕິນີ້ມີອາຫານແນວນີ້ ແລະບໍລິບູນແນວນີ້

ພິກຂຸທັງຫຼາຍ ການຄົບສັດຕະບຸຣຸດທີ່ບໍລິບູນ ຍ່ອມເຮັດໃຫ້ການຟັງສັດທໍາບໍລິບູນ ຯລຯ ໂພດຊົງ ໗ ທີ່ບໍລິບູນ ຍ່ອມເຮັດໃຫ້ວິດຊາແລະວິມຸດຕິບໍລິບູນ ວິດຊາແລະວິມຸດຕິນີ້ມີອາຫານ ແນວນີ້ ແລະບໍລິບູນແນວນີ້ ປຽບຄືເມື່ອຝົນເມັດໃຫຍ່ຕົກລົງເທິງຈອມພູ ເມື່ອຝົນຕົກລົງໜັກໆ ນໍ້ານັ້ນໄຫຼໄປຕາມບ່ອນຫຼຸບເຮັດໃຫ້ຮ່ອມພູ ລໍາທານ ແລະຫ້ວຍເຕັມປ່ຽມ ຮ່ອມພູ ລໍາທານ ແລະ ຫ້ວຍເຕັມປ່ຽມແລ້ວເຮັດໃຫ້ໜອງເຕັມ ໜອງເຕັມແລ້ວເຮັດໃຫ້ບຶງເຕັມ ບຶງເຕັມແລ້ວເຮັດໃຫ້ ແມ່ນໍ້ານ້ອຍເຕັມ ແມ່ນໍ້ານ້ອຍເຕັມແລ້ວເຮັດໃຫ້ແມ່ນໍ້າໃຫຍ່ເຕັມ ແມ່ນໍ້າໃຫຍ່ເຕັມແລ້ວເຮັດໃຫ້ ມະຫາສະມຸດສາຄອນເຕັມ ມະຫາສະມຸດສາຄອນນີ້ມີອາຫານແນວນີ້ ແລະເຕັມປ່ຽມ ແນວນີ້

**ຕັນຫາສູດທີ ໘ ຈົບ**

# ໓. ນິດຖັງຄະຕະສູດ
## ວ່າດ້ວຍບຸກຄົນຜູ້ເຊື່ອໝັ້ນໃນຕະຖາຄົດ

[໗໓] ພິກຂຸທັງຫຼາຍ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງເຊື່ອໝັ້ນໃນເຮົາ ບຸກຄົນເຫຼົ່ານັ້ນ ທັງໝົດເປັນຜູ້ເຖິງພ້ອມດ້ວຍທິດຖິ[໑] ບັນດາບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເຫຼົ່ານັ້ນ ບຸກຄົນ ໕ ຈຳພວກມີຄວາມສຳເລັດ[໒] ໃນໂລກນີ້ ແລະບຸກຄົນ ໕ ຈຳພວກລະໂລກນີ້ໄປແລ້ວ ຈຶ່ງມີຄວາມສຳເລັດ

ບຸກຄົນ ໕ ຈຳພວກໃດແດ່ ມີຄວາມສຳເລັດໃນໂລກນີ້ ຄື

໑. ພຣະສັດຕັກຂັດຕຸປະຣະມະໂສດາບັນ[໑]
໒. ພຣະໂກລັງໂກລະໂສດາບັນ[໒]
໓. ພຣະເອກະພີຊີໂສດາບັນ[໓]
໔. ພຣະສະກະທາຄາມີ
໕. ພຣະອະຣະຫັນໃນປັດຈຸບັນ

ບຸກຄົນ ໕ ຈຳພວກນີ້ ມີຄວາມສຳເລັດໃນໂລກນີ້

ບຸກຄົນ ໕ ຈຳພວກໃດແດ່ ລະໂລກນີ້ໄປແລ້ວຈຶ່ງມີຄວາມສຳເລັດ ຄື

໑. ພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີ[໔]
໒. ພຣະອະນາຄາມີຜູ້ອຸປະຫັດຈະປະຣິນິບພາຍີ[໕]
໓. ພຣະອະນາຄາມີຜູ້ອະສັງຂາຣະປະຣິນິບພາຍີ[໑]
໔. ພຣະອະນາຄາມີຜູ້ສະສັງຂາຣະປະຣິນິບພາຍີ[໒]
໕. ພຣະອະນາຄາມີຜູ້ອຸດທັງໂສຕະອະກະນິດຖະຄາມີ[໓]

ບຸກຄົນ ໕ ຈຳພວກນີ້ລະໂລກນີ້ໄປແລ້ວຈຶ່ງມີຄວາມສຳເລັດ

ພິກຂຸທັງຫຼາຍ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງເຊື່ອໝັ້ນໃນເຮົາ ບຸກຄົນເຫຼົ່ານັ້ນທັງໝົດເປັນຜູ້ເຖິງພ້ອມດ້ວຍທິດຖິ ບັນດາບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເຫຼົ່ານັ້ນ ບຸກຄົນ ໕ ຈຳພວກ ທຳອິດນີ້ ມີຄວາມສຳເລັດໃນໂລກນີ້ ແລະບຸກຄົນ ໕ ຈຳພວກຫຼັງນີ້ລະໂລກນີ້ໄປແລ້ວຈຶ່ງມີຄວາມສຳເລັດ

**ນິດຖັງຄະຕະສູດທີ ໓ ຈົບ**

# ໔. ອະເວດຈັບປະສັນນະສູດ
## ວ່າດ້ວຍຜູ້ເຫຼື້ອມໃສຢ່າງບໍ່ຫວັ່ນໄຫວ

[໗໔] ພິກຂຸທັງຫຼາຍ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງ ເຫຼື້ອມໃສຢ່າງບໍ່ຫວັ່ນໄຫວໃນເຮົາ ບຸກຄົນ

ເຫຼົ່ານັ້ນທັງໝົດເປັນໂສດາບັນ[6] ບັນດາບຸກຄົນຜູ້ເປັນໂສດາບັນເຫຼົ່ານັ້ນ ບຸກຄົນ ໕ ຈຳພວກ ມີຄວາມສຳເລັດໃນໂລກນີ້ ແລະບຸກຄົນ ໕ ຈຳພວກລະໂລກນີ້ໄປແລ້ວຈຶ່ງມີຄວາມສຳເລັດ

ບຸກຄົນ ໕ ຈຳພວກໃດແດ່ ມີຄວາມສຳເລັດໃນໂລກນີ້ ຄື

໑. ພຣະສັດຕັກຂັດຕຸປະຣະມະໂສດາບັນ
໒. ພຣະໂກລັງໂກລະໂສດາບັນ
໓. ພຣະເອກະພີຊີໂສດາບັນ
໔. ພຣະສະກະທາຄາມີ
໕. ພຣະອະຣະຫັນໃນປັດຈຸບັນ

ບຸກຄົນ ໕ ຈຳພວກນີ້ ມີຄວາມສຳເລັດໃນໂລກນີ້

ບຸກຄົນ ໕ ຈຳພວກໃດແດ່ ລະໂລກນີ້ໄປແລ້ວຈຶ່ງມີຄວາມສຳເລັດ ຄື

໑. ພຣະອະນາຄາມີຜູ້ອັນຕະຣາປະຣິນິບພາຍີ
໒. ພຣະອະນາຄາມີຜູ້ອຸປະຫັດຈະປະຣິນິບພາຍີ
໓. ພຣະອະນາຄາມີຜູ້ອະສັງຂາຣະປະຣິນິບພາຍີ
໔. ພຣະອະນາຄາມີຜູ້ສະສັງຂາຣະປະຣິນິບພາຍີ
໕. ພຣະອະນາຄາມີຜູ້ອຸດທັງໂສຕະອະກະນິດຖະຄາມີ

ບຸກຄົນ ໕ ຈຳພວກນີ້ລະໂລກນີ້ໄປແລ້ວຈຶ່ງມີຄວາມສຳເລັດ

ພິກຂຸທັງຫຼາຍ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງເຫຼື້ອມໃສຢ່າງບໍ່ຫວັ່ນໄຫວໃນເຮົາ ບຸກຄົນເຫຼົ່ານັ້ນທັງໝົດເປັນໂສດາບັນ ບັນດາບຸກຄົນຜູ້ເປັນໂສດາບັນເຫຼົ່ານັ້ນ ບຸກຄົນ ໕ ຈຳພວກ ທຳອິດນີ້ມີຄວາມສຳເລັດໃນໂລກນີ້ ແລະບຸກຄົນ ໕ ຈຳພວກຫຼັງນີ້ລະໂລກນີ້ໄປແລ້ວຈຶ່ງມີຄວາມສຳເລັດ

**ອະເວດຈັບປະສັນນະສູດທີ ໔ ຈົບ**

## ໕. ປະຖົມສຸຂະສູດ

## ວ່າດ້ວຍເຫດໃຫ້ເກີດສຸກແລະທຸກ ສູດທີ ໑

[໖໕] ສະໄໝໜຶ່ງ ທ່ານພຣະສາຣີບຸດຢູ່ ນາລະກະຄາມ[1] ແຄວ້ນມະຄົດ ຄັ້ງນັ້ນແລ ປະຣິພາຊົກຊື່ວ່າສາມັນທະການິເຂົ້າໄປຫາທ່ານຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານວ່າ "ທ່ານສາຣີບຸດ ອັນໃດນໍເປັນເຫດໃຫ້ເກີດສຸກ ອັນໃດເປັນເຫດໃຫ້ເກີດທຸກ"

ທ່ານພຣະສາຣີບຸດຕອບວ່າ "ຜູ້ມີອາຍຸ ການເກີດເປັນເຫດໃຫ້ເກີດທຸກ ການບໍ່ເກີດເປັນເຫດໃຫ້ເກີດສຸກ ເມື່ອມີການເກີດ ທຸກນີ້ເປັນອັນເພິ່ງຫວັງໄດ້ຄືຄວາມໜາວ ຮ້ອນ ຫິວ ກະຫາຍ ປວດອຸດຈາຣະ ປວດປັດສາວະ ສໍາຜັດໄຟ ຖືກຕີດ້ວຍໄມ້ ຖືກທໍາຮ້າຍດ້ວຍອາວຸດ ທັງຍາດມິດຕ່າງກໍພາກັນໂກດເຄືອງເຂົາ

ເມື່ອມີການເກີດ ທຸກນີ້ເປັນອັນເພິ່ງຫວັງໄດ້ ເມື່ອບໍ່ມີການເກີດ ສຸກນີ້ເປັນອັນເພິ່ງຫວັງໄດ້ ຄື ຄວາມບໍ່ໜາວ ບໍ່ຮ້ອນ ບໍ່ຫິວ ບໍ່ກະຫາຍ ບໍ່ຕ້ອງປວດອຸດຈາຣະ ບໍ່ຕ້ອງປວດປັດສາວະ ບໍ່ຕ້ອງສໍາຜັດໄຟ ບໍ່ຖືກຕີດ້ວຍໄມ້ ບໍ່ຖືກທໍາຮ້າຍດ້ວຍອາວຸດ ທັງຍາດມິດກໍບໍ່ພາກັນໂກດເຄືອງເຂົາ

ຜູ້ມີອາຍຸ ເມື່ອບໍ່ມີການເກີດ ສຸກນີ້ເປັນອັນເພິ່ງຫວັງໄດ້"

**ປະຖົມສຸກສູດທີ ໕ ຈົບ**

## ໖. ທຸຕິຍະສຸຂະສູດ

## ວ່າດ້ວຍເຫດໃຫ້ເກີດສຸກແລະທຸກ ສູດທີ ໘

[໖໖] ສະໄໝໜຶ່ງ ທ່ານພຣະສາຣີບຸດຢູ່ ນາລະກະຄາມ ແຄວ້ນມະຄົດ ຄັ້ງນັ້ນແລ ປະຣິພາຊົກຊື່ວ່າສາມັນທະການິເຂົ້າໄປຫາທ່ານຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານວ່າ "ທ່ານສາຣີບຸດ ໃນທໍາວິໄນນີ້ ອັນໃດນໍເປັນເຫດໃຫ້ເກີດສຸກ ອັນໃດເປັນເຫດໃຫ້ເກີດທຸກ"

ທ່ານພຣະສາຣີບຸດຕອບວ່າ "ຜູ້ມີອາຍຸ ໃນທໍາວິໄນນີ້ ຄວາມບໍ່ຍິນດີເປັນເຫດໃຫ້ເກີດທຸກ ຄວາມຍິນດີເປັນເຫດໃຫ້ເກີດສຸກ ເມື່ອບໍ່ຍິນດີ ທຸກນີ້ເປັນອັນເພິ່ງຫວັງໄດ້ ຄື ບຸກຄົນຜູ້ບໍ່ຍິນດີແມ່ນຍ່າງຢູ່ກໍບໍ່ປະສົບຄວາມສຸກສະບາຍ ບຸກຄົນຜູ້ບໍ່ຍິນດີ ແມ່ນຢືນຢູ່ ຯລຯ ແມ່ນນັ່ງຢູ່ ຯລຯ ແມ້ນອນຢູ່ ຯລຯ ແມ່ນໄປສູ່ບ້ານ ຯລຯ ແມ່ນໄປສູ່ປ່າ ຯລຯ ແມ່ນໄປສູ່ເຫງົ້າໄມ້ ຯລຯ ແມ່ນໄປສູ່ເຮືອນວ່າງ ຯລຯ ແມ່ນໄປສູ່ກາງແຈ້ງ ຯລຯ ແມ່ນໄປສູ່ທ່າມກາງພິກຂຸສົງ ກໍບໍ່ປະສົບຄວາມສຸກສະບາຍ

ຜູ້ມີອາຍຸ ເມື່ອບໍ່ຍິນດີ ທຸກນີ້ເປັນອັນເພິ່ງຫວັງໄດ້ ເມື່ອມີຄວາມຍິນດີ ສຸກນີ້ເປັນອັນເພິ່ງຫວັງໄດ້ ຄື ບຸກຄົນຜູ້ມີຄວາມຍິນດີ ແມ່ນຍ່າງຢູ່ ກໍປະສົບຄວາມສຸກສະບາຍ ແມ່ນຢືນຢູ່ ຯລຯ ແມ່ນນັ່ງຢູ່ ຯລຯ ແມ້ນອນຢູ່ ຯລຯ ແມ່ນໄປສູ່ບ້ານ ຯລຯ ແມ່ນໄປສູ່ປ່າ ຯລຯ ແມ່ນໄປສູ່ເຫງົ້າໄມ້ ຯລຯ ແມ່ນໄປສູ່ເຮືອນວ່າງ ຯລຯ ແມ່ນໄປສູ່ທ່າມກາງພິກຂຸສົງ ຯລຯ ກໍປະສົບຄວາມສຸກສະບາຍ

ຜູ້ມີອາຍຸ ເມື່ອມີຄວາມຍິນດີ ສຸກນີ້ເປັນອັນເພິ່ງຫວັງໄດ້"

**ທຸຕິຍະສຸກສູດທີ ໖ ຈົບ**

## ໗. ປະຖົມນະລະກະປານະສູດ

### ວ່າດ້ວຍພຣະທຳມະເທດສະໜາທີ່ນະລະກະປານະນິຄົມ ສູດທີ ໑

[໖໗] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໃນແຄວ້ນໂກສົນ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ໄດ້ສະເດັດເຖິງນິຄົມຂອງຊາວໂກສົນຊື່ວ່າ ນະລະກະປານະ ປະທັບຢູ່ທີ່ປະລາສະຫວັນ ໃກ້ນະລະກະປານະນິຄົມນັ້ນ ສະໄໝນັ້ນແລ ພຣະຜູ້ມີພຣະພາກເຈົ້າມີພິກຂຸສົງຮ້ອມລ້ອມແລ້ວ ປະທັບນັ່ງໃນມື້ອຸໂປສົດນັ້ນ ຊົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮອຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາສິ້ນຫຼາຍຣາຕີຢ່າງແນ່ນອນ ຊົງແນມເບິ່ງພິກຂຸສົງຜູ້ມິດງຽບຢູ່ ຊົງຮຽກທ່ານພຣະສາຣີບຸດມາຕັດວ່າ

"ສາຣີບຸດ ພິກຂຸສົງປາສະຈາກຖີນະມິດທະ(ຄວາມທໍ້ຖອຍແລະງ່ວງເຫງົາ)ແລ້ວ ສະເພາະທ່ານທໍ່ນັ້ນ ທີ່ຈະອະທິບາຍທຳມີກະຖາໃຫ້ແຈ່ມແຈ້ງແກ່ພິກຂຸທັງຫຼາຍໄດ້ ເຮົາເມື່ອຍຫຼັງ ຈັກເອນຫຼັງ"

ທ່ານພຣະສາຣີບຸດໄດ້ທູນຮັບສະໜອງພຣະດຳຣັດແລ້ວ ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປູລາດສັງຄາຕິທົບ ໔ ຊັ້ນ ບັນທົມສີຫະໄສຍາດໂດຍສະແຄງຂວາ ຊົງວາງພຣະບາດເຫຼື່ອມພຣະບາດ ຊົງມີສະຕິສຳປະຊັນຍະ ຊົງເຮັດອຸດຖານສັນຍາ(ຄວາມກຳນົດໝາຍວ່າຈະລຸກຂຶ້ນ) ໄວ້ໃນພຣະຫະໄທ ໃນບ່ອນນັ້ນແລ ທ່ານພຣະສາຣີບຸດໄດ້ຮຽກພິກຂຸທັງຫຼາຍ ມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນກ່າວຮັບຄຳແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວເລື້ອງນີ້ວ່າ

ຜູ້ມີອາຍຸທັງຫຼາຍ ຜູ້ໃດຜູ້ໜຶ່ງບໍ່ມີສັດທາໃນກຸສົນທຳທັງຫຼາຍ ບໍ່ມີຫິຣິ ຯລຯ ບໍ່ມີໂອດຕັບປະ ຯລຯ ບໍ່ມີວິຣິຍະ ຯລຯ ບໍ່ມີປັນຍາໃນກຸສົນທຳທັງຫຼາຍ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມເສື່ອມແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມຈະເລີນເລີຍ

ຜູ້ໃດຜູ້ໜຶ່ງບໍ່ມີສັດທາໃນກຸສົນທຳທັງຫຼາຍ ບໍ່ມີຫິຣິ ຯລຯ ບໍ່ມີໂອດຕັບປະ ຯລຯ ບໍ່ມີວິຣິຍະ ຯລຯ ບໍ່ມີປັນຍາໃນກຸສົນທຳທັງຫຼາຍ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນ ຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມເສື່ອມແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມຈະເລີນເລີຍ ປຽບຄືເມື່ອ

ກາງຄືນຫຼືກາງເວັນຂອງດວງຈັນໃນກາລະປັກ (ຂ້າງແຮມ)ຜ່ານໄປ ດວງຈັນນັ້ນ ຍ່ອມເສື່ອມຈາກຄວາມງາມ ຍ່ອມເສື່ອມຈາກ ຣັດສະໝີ ຍ່ອມເສື່ອມຈາກແສງສະຫວ່າງ ຍ່ອມເສື່ອມຈາກດ້ານຍາວແລະດ້ານກວ້າງ

ຂໍ້ທີ່ວ່າ "ບຸກຄົນຜູ້ບໍ່ມີສັດທາ ບໍ່ມີຫີຣິ ບໍ່ມີໂອດຕັບປະ ຂີ້ຄ້ານ ມີປັນຍາຊາມ ມັກໂກດຜູກໂກດ ປາຖະໜາຊົ່ວ ມີມິດຊົ່ວ ເປັນມິດສາທິດຖິ" ນີ້ເປັນຄວາມເສື່ອມ

ຜູ້ໃດຜູ້ໜຶ່ງມີສັດທາໃນກຸສົນທຳທັງຫຼາຍ ມີຫີຣິ ຯລຯ ມີໂອດຕັບປະ ຯລຯ ມີວິຣິຍະ ຯລຯ ມີປັນຍາໃນກຸສົນທຳທັງຫຼາຍ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ

ຜູ້ມີອາຍຸທັງຫຼາຍ ຜູ້ໃດຜູ້ໜຶ່ງມີສັດທາໃນກຸສົນທຳທັງຫຼາຍ ມີຫີຣິ ຯລຯ ມີໂອດຕັບປະ ຯລຯ ມີວິຣິຍະ ຯລຯ ມີປັນຍາໃນກຸສົນທຳທັງຫຼາຍ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນ ຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ ປຽບຄືເມື່ອກາງຄືນຫຼືກາງເວັນຂອງດວງຈັນໃນຊຸນຫະປັກ(ຂ້າງຂຶ້ນ) ຜ່ານໄປ ດວງຈັນນັ້ນຍ່ອມຈະເລີນດ້ວຍຄວາມງາມ ຍ່ອມຈະເລີນດ້ວຍຣັດສະໝີ ຍ່ອມຈະເລີນດ້ວຍແສງສະຫວ່າງ ຍ່ອມຈະເລີນດ້ວຍດ້ານຍາວແລະດ້ານກວ້າງ

ຂໍ້ທີ່ວ່າ "ບຸກຄົນຜູ້ມີສັດທາ ມີຫີຣິ ມີໂອດຕັບປະ ຜາຣົບຄວາມພຽນ ມີປັນຍາ ບໍ່ມັກໂກດບໍ່ຜູກໂກດ ມັກໜ້ອຍ ມີມິດດີ ເປັນສຳມາທິດຖິ" ນີ້ບໍ່ເປັນຄວາມເສື່ອມ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດລຸກຂຶ້ນແລ້ວຕັດຊົມທ່ານພຣະສາຣີບຸດວ່າ ດີແລ້ວດີແລ້ວ ສາຣີບຸດ ຜູ້ໃດຜູ້ໜຶ່ງບໍ່ມີສັດທາໃນກຸສົນທຳທັງຫຼາຍ ບໍ່ມີຫີຣິ ຯລຯ ບໍ່ມີໂອດຕັບປະ ຯລຯ ບໍ່ມີວິຣິຍະ ຯລຯ ບໍ່ມີປັນຍາໃນກຸສົນທຳທັງຫຼາຍ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມເສື່ອມແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມຈະເລີນເລີຍ

ສາຣີບຸດ ຜູ້ໃດຜູ້ໜຶ່ງບໍ່ມີສັດທາໃນກຸສົນທຳທັງຫຼາຍ ຯລຯ ບໍ່ມີປັນຍາໃນກຸສົນທຳທັງຫຼາຍເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນ ຯລຯ ບໍ່ມີຄວາມຈະເລີນເລີຍ ປຽບຄືເມື່ອກາງຄືນຫຼືກາງເວັນຂອງດວງຈັນໃນກາລະປັກຜ່ານໄປ ດວງຈັນນັ້ນ ຍ່ອມເສື່ອມຈາກຄວາມງາມ ຍ່ອມເສື່ອມຈາກຣັດສະໝີ ຍ່ອມເສື່ອມຈາກແສງສະຫວ່າງ ຍ່ອມເສື່ອມຈາກດ້ານຍາວແລະດ້ານກວ້າງ

ຂໍ້ທີ່ວ່າ "ບຸກຄົນຜູ້ບໍ່ມີສັດທາ ບໍ່ມີຫີຣິ ບໍ່ມີໂອດຕັບປະ ຂີ້ຄ້ານ ມີປັນຍາຊາມ ມັກໂກດຜູກໂກດ ປາຖະໜາຊົ່ວ ມີມິດຊົ່ວ ເປັນມິດສາທິດຖິ" ນີ້ເປັນຄວາມເສື່ອມ

ຜູ້ໃດຜູ້ໜຶ່ງມີສັດທາໃນກຸສົນທຳທັງຫຼາຍ ມີຫິຣິ ຯລຯ ມີໂອດຕັບປະ ຯລຯ ມີວິຣິຍະ ຯລຯ ມີປັນຍາໃນກຸສົນທຳທັງຫຼາຍ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ຜູ້ນັ້ນເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ

ສາຣີບຸດ ຜູ້ໃດຜູ້ໜຶ່ງມີສັດທາໃນກຸສົນທຳທັງຫຼາຍ ມີຫິຣິ ຯລຯ ມີໂອດຕັບປະ ຯລຯ ມີວິຣິຍະ ຯລຯ ມີປັນຍາໃນກຸສົນທຳທັງຫຼາຍ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ ປຽບຄືເມື່ອກາງຄືນຫຼືກາງເວັນຂອງດວງຈັນໃນຊຸນຫະປັກຜ່ານໄປ ດວງຈັນນັ້ນ ຍ່ອມຈະເລີນດ້ວຍຄວາມງາມ ຍ່ອມຈະເລີນດ້ວຍຣັດສະໝີ ຍ່ອມຈະເລີນດ້ວຍແສງສະຫວ່າງ ຍ່ອມຈະເລີນດ້ວຍດ້ານຍາວແລະດ້ານກວ້າງ

ສາຣີບຸດ ຂໍ້ທີ່ວ່າ "ບຸກຄົນຜູ້ມີສັດທາ ມີຫິຣິ ມີໂອດຕັບປະ ພາຣົບຄວາມພຽນ ມີປັນຍາບໍ່ມັກໂກດ ບໍ່ຜູກໂກດ ມັກໜ້ອຍ ມີມິດດີ ເປັນສຳມາທິດຖິ" ນີ້ບໍ່ເປັນຄວາມເສື່ອມ

**ປະຖົມນະລະກະປານະສູດທີ ໗ ຈົບ**

## ໘. ທຸຕິຍະນະລະກະປານະສູດ

### ວ່າດ້ວຍພຣະທຳມະເທດສະໜາທີ່ນະລະກະປານະນິຄົມ ສູດທີ ໘

[໖໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າ ປະທັບຢູ່ປະລາສະຫວັນ ໃກ້ນະລະກະປານະນິຄົມ ສະໄໝນັ້ນແລ ພຣະຜູ້ມີພຣະພາກເຈົ້າມີພິກຂຸສົງຮ້ອມລ້ອມ ປະທັບນັ່ງໃນມື້ອຸໂປສົດນັ້ນຊົງຊີ້ແຈ່ງໃຫ້ພິກຂຸທັງຫຼາຍເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາສິ້ນຫຼາຍຣາຕີແລ ຊົງແນມເບິ່ງພິກຂຸສົງຜູ້ມິດງຽບຢູ່ ໄດ້ຊົງຮຽກທ່ານພຣະສາຣີບຸດມາຕັດວ່າ

"ສາຣີບຸດ ພິກຂຸສົງເປັນຜູ້ປາສະຈາກຖີນະມິດທະແລ້ວ ສະເພາະທ່ານທໍ່ນັ້ນທີ່ຈະອະທິບາຍ ທຳມີກະຖາໃຫ້ແຈ່ມແຈ້ງແກ່ພິກຂຸທັງຫຼາຍໄດ້ ເຮົາເມື່ອຍຫຼັງ ຈັກເອນຫຼັງ"

ທ່ານພຣະສາຣີບຸດໄດ້ທູນຮັບສະໜອງພຣະດຳຣັດແລ້ວ ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າ ຮັບສັ່ງໃຫ້ປູລາດສັງຄາຕິທົບ ໔ ຊັ້ນ ບັນທົມສີຫະໄສຍາດໂດຍສະແຄງຂວາ ຊົງວາງພຣະບາດເຫຼື່ອມພຣະບາດ ຊົງມີສະຕິສຳປະຊັນຍະ ຊົງເຮັດອຸດຖານສັນຍາໄວ້ໃນພຣະທະໄທ ໃນບ່ອນນັ້ນແລ ທ່ານພຣະສາຣີບຸດໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວເລື້ອງນີ້ວ່າ

ຜູ້ມີອາຍຸທັງຫຼາຍ ຜູ້ໃດຜູ້ໜຶ່ງບໍ່ມີສັດທາໃນກຸສົນທຳທັງຫຼາຍ ບໍ່ມີຫິຣິ ຯລຯ ບໍ່ມີໂອດຕັບປະ ຯລຯ ບໍ່ມີວິຣິຍະ ຯລຯ ບໍ່ມີປັນຍາ ຯລຯ ບໍ່ມີການງ່ຽງໂສດຟັງທຳ ຯລຯ ບໍ່ມີການຊົງຈຳທຳ ຯລຯ ບໍ່ມີການພິຈາລະນາເນື້ອຄວາມແຫ່ງທຳ ຯລຯ ບໍ່ມີການປະຕິບັດທຳສົມຄວນແກ່ທຳ ຯລຯ ບໍ່ມີຄວາມບໍ່ຜະໝາດໃນກຸສົນທຳທັງຫຼາຍ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມເສື່ອມແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມຈະເລີນເລີຍ

ຜູ້ໃດຜູ້ໜຶ່ງບໍ່ມີສັດທາໃນກຸສົນທຳທັງຫຼາຍ ບໍ່ມີຫິຣິ ຯລຯ ບໍ່ມີໂອດຕັບປະ ຯລຯ ບໍ່ມີວິຣິຍະ ຯລຯ ບໍ່ມີປັນຍາ ຯລຯ ບໍ່ມີການງ່ຽງໂສດຟັງທຳ ຯລຯ ບໍ່ມີການຊົງຈຳທຳ ຯລຯ ບໍ່ມີການພິຈາລະນາເນື້ອຄວາມແຫ່ງທຳ ຯລຯ ບໍ່ມີການປະຕິບັດທຳສົມຄວນແກ່ທຳ ຯລຯ ບໍ່ມີຄວາມບໍ່ຜະໝາດໃນກຸສົນທຳທັງຫຼາຍ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມເສື່ອມແນວດຽວໃນ ກຸສົນທຳທັງຫຼາຍ ບໍ່ມີຄວາມຈະເລີນເລີຍ ປຽບຄືເມື່ອກາງຄືນຫຼືກາງເວັນຂອງດວງຈັນໃນກາລະປັກຜ່ານໄປ ດວງຈັນນັ້ນຍ່ອມເສື່ອມຈາກຄວາມງາມ ຍ່ອມເສື່ອມຈາກຣັດສະໝີ ຍ່ອມເສື່ອມຈາກແສງສະຫວ່າງ ຍ່ອມເສື່ອມຈາກດ້ານຍາວແລະດ້ານກວ້າງ

ຜູ້ໃດຜູ້ໜຶ່ງມີສັດທາໃນກຸສົນທຳທັງຫຼາຍ ມີຫິຣິ ຯລຯ ມີໂອດຕັບປະ ຯລຯ ມີວິຣິຍະ ຯລຯ ມີປັນຍາ ຯລຯ ມີການງ່ຽງໂສດຟັງທຳ ຯລຯ ມີການຊົງຈຳທຳຯລຯ ມີການພິຈາລະນາເນື້ອຄວາມແຫ່ງທຳ ຯລຯ ມີການປະຕິບັດທຳຕາມສົມຄວນແກ່ທຳ ຯລຯ ມີຄວາມບໍ່ຜະໝາດໃນກຸສົນທຳທັງຫຼາຍ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ

ຜູ້ມີອາຍຸທັງຫຼາຍ ຜູ້ໃດຜູ້ໜຶ່ງມີສັດທາໃນກຸສົນທຳທັງຫຼາຍ ມີຫິຣິ ຯລຯ ມີໂອດຕັບປະ ຯລຯ ມີວິຣິຍະ ຯລຯ ມີປັນຍາ ຯລຯ ມີການງ່ຽງໂສດຟັງທຳ ຯລຯ ມີການຊົງຈຳທຳ ຯລຯ ມີການພິຈາລະນາເນື້ອຄວາມແຫ່ງທຳ ຯລຯ ມີການປະຕິບັດທຳສົມຄວນແກ່ທຳ ຯລຯ ມີຄວາມບໍ່ຜະໝາດໃນກຸສົນທຳທັງຫຼາຍ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ ປຽບຄືເມື່ອກາງຄືນຫຼືກາງເວັນຂອງດວງຈັນໃນຊຸນຫະປັກຜ່ານໄປ ດວງຈັນນັ້ນຍ່ອມຈະເລີນດ້ວຍຄວາມງາມ ຍ່ອມຈະເລີນດ້ວຍຣັດສະໝີ ຍ່ອມຈະເລີນດ້ວຍແສງສະຫວ່າງ ຍ່ອມຈະເລີນດ້ວຍດ້ານຍາວແລະດ້ານກວ້າງ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດລຸກຂຶ້ນແລ້ວຕັດຊົມທ່ານພຣະສາຣີບຸດວ່າ ດີແລ້ວ ດີແລ້ວ ສາຣີບຸດ ຜູ້ໃດຜູ້ໜຶ່ງບໍ່ມີສັດທາໃນກຸສົນທຳທັງຫຼາຍ ບໍ່ມີຫິຣິ ຯລຯ ບໍ່ມີໂອດຕັບປະ ຯລຯ ບໍ່ມີວິຣິຍະ ຯລຯ ບໍ່ມີປັນຍາ ຯລຯ ບໍ່ມີການງ່ຽງໂສດຟັງທຳ ຯລຯ ບໍ່ມີການຊົງຈຳທຳ ຯລຯ ບໍ່ມີການພິຈາລະນາເນື້ອຄວາມແຫ່ງທຳ ຯລຯ ບໍ່ມີການປະຕິບັດທຳສົມຄວນແກ່ທຳ ຯລຯ

ບໍ່ມີຄວາມບໍ່ຜະໝາດໃນກຸສົນທຳທັງຫຼາຍ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມເສື່ອມແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມຈະເລີນເລີຍ

ສາຣີບຸດ ຜູ້ໃດຜູ້ໜຶ່ງບໍ່ມີສັດທາໃນກຸສົນທຳທັງຫຼາຍ ຯລຯ ບໍ່ມີຄວາມບໍ່ຜະໝາດໃນກຸສົນທຳທັງຫຼາຍ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມເສື່ອມແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມຈະເລີນເລີຍ ປຽບຄືເມື່ອກາງຄືນຫຼືກາງເວັນຂອງດວງຈັນໃນກາລະປັກຜ່ານໄປ ດວງຈັນນັ້ນຍ່ອມເສື່ອມຈາກຄວາມງາມ ຍ່ອມເສື່ອມຈາກຣັດສະໝີ ຍ່ອມເສື່ອມຈາກແສງສະຫວ່າງ ຍ່ອມເສື່ອມຈາກດ້ານຍາວແລະດ້ານກວ້າງ

ຜູ້ໃດຜູ້ໜຶ່ງມີສັດທາໃນກຸສົນທຳທັງຫຼາຍ ມີຫິຣິ ຯລຯ ມີໂອດຕັບປະ ຯລຯ ມີວິຣິຍະ ຯລຯ ມີປັນຍາ ຯລຯ ມີການງ່ຽງໂສດຟັງທຳ ຯລຯ ມີການຊົງຈຳທຳ ຯລຯ ມີການພິຈາລະນາເນື້ອຄວາມ ແຫ່ງທຳ ຯລຯ ມີການປະຕິບັດທຳສົມຄວນແກ່ທຳ ຯລຯ ມີຄວາມບໍ່ຜະໝາດໃນກຸສົນທຳທັງຫຼາຍ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ

ຜູ້ໃດຜູ້ໜຶ່ງມີສັດທາໃນກຸສົນທຳທັງຫຼາຍ ຯລຯ ມີຄວາມບໍ່ຜະໝາດໃນກຸສົນທຳທັງຫຼາຍ ເມື່ອກາງຄືນຫຼືກາງເວັນຂອງຜູ້ນັ້ນຜ່ານໄປ ເຂົາເພິ່ງຫວັງໄດ້ແຕ່ຄວາມຈະເລີນແນວດຽວໃນກຸສົນທຳທັງຫຼາຍ ບໍ່ມີຄວາມເສື່ອມເລີຍ ປຽບຄືເມື່ອກາງຄືນຫຼື ກາງເວັນຂອງດວງຈັນໃນຊຸນຫະປັກຜ່ານໄປ ດວງຈັນນັ້ນຍ່ອມຈະເລີນດ້ວຍຄວາມງາມ ຍ່ອມຈະເລີນດ້ວຍຣັດສະໝີ ຍ່ອມຈະເລີນດ້ວຍແສງສະຫວ່າງ ຍ່ອມຈະເລີນດ້ວຍດ້ານຍາວແລະດ້ານກວ້າງ

**ທຸຕິຍະນະລະກະປານະສູດທີ ໘ ຈົບ**

# ໙. ປະຖົມກະຖາວັດຖຸສູດ

## ວ່າດ້ວຍກະຖາວັດຖຸ ສູດທີ ໑

[໖໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນຖະກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນແລ ພິກຂຸຈຳນວນຫຼາຍກັບຈາກບິນທະບາດໃນເວລາຫຼັງພັດຕາຫານ ນັ່ງປະຊຸມກັນທີ່ຫໍສັນ ສົນທະນາຕິຣັດສານະກະຖາ[໑]ຕ່າງ ໆ ຄື (໑) ຣາຊະກະຖາ ເລື້ອງພຣະຣາຊາ (໒) ໂຈຣະກະຖາ ເລື້ອງໂຈນ (໓) ມະຫາມັດຕະກະຖາ ເລື້ອງມະຫາອຳມາດ (໔) ເສນາກະຖາ ເລື້ອງກອງທັບ (໕) ພະຍະກະຖາ ເລື້ອງໄພ (໖) ຍຸດທະກະຖາ ເລື້ອງການຣົບ (໗) ອັນນະກະຖາ ເລື້ອງເຂົ້າ (໘) ປານະກະຖາ ເລື້ອງນ້ຳ (໙) ວັດຖະກະຖາ ເລື້ອງຜ້າ (໑໐) ສະຍະນະກະຖາ ເລື້ອງບ່ອນນອນ (໑໑) ມາລາກະຖາ ເລື້ອງດອກໄມ້ (໑

໒) ຄັນທະກະຖາ ເລື້ອງຂອງຫອມ (໑໓) ຍາຕິກະຖາ ເລື້ອງຍາດ (໑໔) ຍານະກະຖາ ເລື້ອງຍານ (໑໕) ຄາມະກະຖາ ເລື້ອງບ້ານ (໑໖) ນິຄະມະກະຖາ ເລື້ອງນິຄົມ (໑໗) ນະຄະຣະກະຖາ ເລື້ອງນະຄອນ (໑໘) ຊະນະປະທະກະຖາ ເລື້ອງຊົນນະບົດ (໑໙) ອິດຖີກະຖາ ເລື້ອງສະຕີ (໒໐) ປຸຣິສະກະຖາ ເລື້ອງບຸຣຸດ (໒໑) ສູຣະກະຖາ ເລື້ອງຄົນກ້າ (໒໒) ວິສິຂາກະຖາ ເລື້ອງຮ່ອມ (໒໓) ກຸມພັດຖານະກະຖາ ເລື້ອງທ່ານ້ຳ (໒໔) ປຸບພະເປຕະກະຖາ ເລື້ອງຄົນທີ່ລ່ວງລັບໄປແລ້ວ (໒໕) ນານັດຕະກະຖາ ເລື້ອງຕ່າງ ໆ (໒໖) ໂລກັກຂາຍິກະ ເລື້ອງໂລກ (໒໗) ສະມຸດທັກຂາຍິກະ ເລື້ອງທະເລ (໒໘) ອິຕິພະວາພະວະກະຖາ ເລື້ອງຄວາມຈະເລີນແລະຄວາມເສື່ອມ

ເມື່ອໃນເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າ ສະເດັດອອກຈາກບ່ອນຫຼີກຫຼີກ[9] ສະເດັດເຂົ້າໄປສູ່ຫໍສັນ ປະທັບນັ່ງເທິງພຸດທະອາດທີ່ປູລາດໄວ້ ໄດ້ຕັດຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ບັດນີ້ ທ່ານທັງຫຼາຍນັ່ງປະຊຸມສົນທະນາກັນດ້ວຍເລື້ອງອັນໃດນໍ ແລະເລື້ອງອັນໃດທີ່ທ່ານທັງຫຼາຍ ສົນທະນາກັນຄ້າງໄວ້"

ພິກຂຸເຫຼົ່ານັ້ນຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ຂ້າພຣະອົງທັງຫຼາຍກັບຈາກບິນທະບາດໃນເວລາຫຼັງພັດຕາຫານ ນັ່ງປະຊຸມກັນທີ່ຫໍສັນ ສົນທະນາຕິຣັດສານະກະຖາຕ່າງ ໆ ຄື (໑) ຣາຊະກະຖາ ເລື້ອງພຣະຣາຊາ (໒) ໂຈຣະກະຖາ ເລື້ອງ ໂຈນ ฯลฯ (໒໘) ອິຕິພະວາພະວະກະຖາ ເລື້ອງຄວາມຈະເລີນແລະຄວາມເສື່ອມ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບໍ່ສົມຄວນເລີຍທີ່ທ່ານທັງຫຼາຍຜູ້ເປັນກຸນລະບຸດມີສັດທາອອກບວດເປັນບັນພະຊິດສົນທະນາຕິຣັດສານະກະຖາຕ່າງ ໆ ຄື (໑) ຣາຊະກະຖາ ເລື້ອງພຣະຣາຊາ (໒) ໂຈຣະກະຖາ ເລື້ອງໂຈນ (໓) ມະຫາມັດຕະກະຖາ ເລື້ອງມະຫາອຳມາດ (໔) ເສນາກະຖາ ເລື້ອງກອງທັບ (໕) ພະຍະກະຖາ ເລື້ອງໄພ (໖) ຍຸດທະກະຖາ ເລື້ອງການຮົບ (໗) ອັນນະກະຖາ ເລື້ອງເຂົ້າ (໘) ປານະກະຖາ ເລື້ອງນ້ຳ (໙) ວັດຖະກະຖາ ເລື້ອງຜ້າ (໑໐) ສະຍະນະກະຖາ ເລື້ອງບ່ອນນອນ (໑໑) ມາລາກະຖາ ເລື້ອງດອກໄມ້ (໑໒) ຄັນທະກະຖາ ເລື້ອງຂອງຫອມ (໑໓) ຍາຕິກະຖາ ເລື້ອງຍາດ (໑໔) ຍານະກະຖາ ເລື້ອງຍານ (໑໕) ຄາມະກະຖາ ເລື້ອງບ້ານ (໑໖) ນິຄະມະກະຖາ ເລື້ອງນິຄົມ (໑໗) ນະຄະຣະກະຖາ ເລື້ອງນະຄອນ (໑໘) ຊະນະປະທະກະຖາ ເລື້ອງຊົນນະບົດ (໑໙) ອິດຖີກະຖາ ເລື້ອງສະຕີ (໒໐) ປຸຣິສະກະຖາ ເລື້ອງບຸຣຸດ (໒໑) ສູຣະກະຖາ ເລື້ອງຄົນກ້າ (໒໒) ວິສິຂາກະຖາ ເລື້ອງຮ່ອມ(໒໓) ກຸມພັດຖານະກະຖາ ເລື້ອງທ່ານ້ຳ (໒໔) ປຸບພະເປຕະກະຖາ ເລື້ອງຄົນທີ່ລ່ວງລັບໄປແລ້ວ (໒໕) ນານັດຕະກະຖາ ເລື້ອງຕ່າງ ໆ (໒໖) ໂລກັກຂາຍິກະ ເລື້ອງໂລກ (໒໗) ສະມຸດທັກຂາຍິກະ ເລື້ອງທະເລ (໒໘) ອິຕິພະວາພະວະກະຖາ ເລື້ອງຄວາມຈະເລີນ ແລະຄວາມເສື່ອມ

ພິກຂຸທັງຫຼາຍ ກະຖາວັດຖຸ ໑໐ ປະການນີ້

ກະຖາວັດຖຸ ໑໐ ປະການ ອັນໃດແດ່ ຄື

໑. ອັບປິດສະກະຖາ (ເລື້ອງຄວາມມັກໜ້ອຍ)
໒. ສັນຕຸດຖິກະຖາ (ເລື້ອງຄວາມສັນໂດດ)
໓. ປະວິເວກກະຖາ (ເລື້ອງຄວາມສະຫງັດ)
໔. ອະສັງສັກຄະກະຖາ (ເລື້ອງຄວາມບໍ່ຄຸກຄີ)
໕. ວິຣິຍາຣຳພະກະຖາ (ເລື້ອງການຜາຣົບຄວາມພຽນ)
໖. ສີລະກະຖາ (ເລື້ອງສີນ)
໗. ສະມາທິກະຖາ (ເລື້ອງສະມາທິ)
໘. ປັນຍາກະຖາ (ເລື້ອງປັນຍາ)
໙. ວິມຸດຕິກະຖາ (ເລື້ອງວິມຸດຕິ)
໑໐. ວິມຸດຕິຍານທັດສະນະກະຖາ (ເລື້ອງຄວາມຮູ້ ຄວາມເຫັນໃນວິມຸດຕິ)

ພິກຂຸທັງຫຼາຍ ກະຖາວັດຖຸ ໑໐ ປະການນີ້ແລ

ພິກຂຸທັງຫຼາຍ ຫາກທ່ານທັງຫຼາຍຈະເພິ່ງຍົກກະຖາວັດຖຸ ໑໐ ປະການນີ້ແນວໃດແນວໜຶ່ງຂຶ້ນມາກ່າວ ທ່ານທັງຫຼາຍກໍຈະສາມາດຄອບງຳເດຊານຸພາບຂອງດວງຈັນ ແລະດວງອາທິດທີ່ມີລິດຫຼາຍ ມີອານຸພາບຫຼາຍແນວນີ້ດ້ວຍເດຊານຸພາບຂອງຕົນໄດ້ ບໍ່ຈຳເປັນຕ້ອງເວົ້າເຖິງອັນຍະເດຍຣະຖີປະຣິພາຊົກທັງຫຼາຍເລີຍ

**ປະຖົມກະຖາວັດຖຸສູດທີ ໙ ຈົບ**

## ໑໐. ທຸຕິຍະກະຖາວັດຖຸສູດ

## ວ່າດ້ວຍກະຖາວັດຖຸ ສູດທີ ໒

[໗໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ສະໄໝນັ້ນແລ ພິກຂຸຈຳນວນຫຼາຍກັບຈາກບິນທະບາດໃນເວລາຫຼັງພັດຕາຫານ ນັ່ງປະຊຸມກັນທີ່ຫໍສັນ ສົນທະນາຕິຣັດສານະກະຖາຕ່າງ ໆ ຄື (໑) ຣາຊະກະຖາ ເລື້ອງພຣະຣາຊາ (໒) ໂຈຣະກະຖາ ເລື້ອງໂຈນ (໓) ມະຫາມັດຕະກະຖາ ເລື້ອງມະຫາອຳມາດ ຯລຯ (໒໘) ອິຕິພະວາພະວະກະຖາ ເລື້ອງຄວາມຈະເລີນແລະຄວາມເສື່ອມ

ເມື່ອໃນເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກ ເຂົ້າໄປສູ່ຫໍສັນປະທັບນັ່ງເທິງພຸດທະອາດທີ່ເຂົາປູລາດໄວ້ ໄດ້ຕັດຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ບັດນີ້ທ່ານທັງຫຼາຍນັ່ງປະຊຸມສົນທະນາກັນດ້ວຍເລື້ອງອັນໃດນໍ ແລະເລື້ອງອັນໃດທີ່ທ່ານທັງຫຼາຍສົນທະນາກັນຄ້າງໄວ້"

ພິກຂຸເຫຼົ່ານັ້ນຂາບທູນວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂໍປະທານອະໄຣກາດ ຂ້າພຣະອົງທັງຫຼາຍກັບຈາກບິນທະບາດໃນເວລາຫຼັງພັດຕາຫານ ນັ່ງປະຊຸມກັນທີ່ຫໍສັນ ສົນທະນາຕິຣັດສານະກະຖາຕ່າງ ໆ ຄື (໑) ຣາຊະກະຖາ ເລື້ອງພຣະຣາຊາ (໒) ໂຈຣະກະຖາ ເລື້ອງໂຈນ ຯລຯ (໒໗) ອິຕິພະວາພະວະກະຖາ ເລື້ອງຄວາມຈະເລີນແລະຄວາມເສື່ອມ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບໍ່ສົມຄວນເລີຍທີ່ທ່ານທັງຫຼາຍຜູ້ເປັນກຸນລະບຸດມີສັດທາອອກບວດເປັນບັນພະຊິດສົນທະນາຕິຣັດສານະກະຖາຕ່າງ ໆ ຄື (໑) ຣາຊະກະຖາ ເລື້ອງພຣະຣາຊາ ຯລຯ (໒໗) ອິຕິພະວາພະວະກະຖາ ເລື້ອງຄວາມຈະເລີນແລະຄວາມເສື່ອມ

ພິກຂຸທັງຫຼາຍ ຖານະທີ່ຄວນສັນເສີນ ໑໐ ປະການນີ້
ຖານະທີ່ຄວນສັນເສີນ ໑໐ ປະການ ອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ຕົນເອງເປັນຜູ້ມັກໜ້ອຍ ແລະສະແດງຄຸນຂອງຄວາມເປັນຜູ້ມັກໜ້ອຍແກ່ພິກຂຸທັງຫຼາຍ ຂໍ້ທີ່ວ່າ "ພິກຂຸເປັນຜູ້ມັກໜ້ອຍ ແລະສະແດງຄຸນຂອງຄວາມເປັນຜູ້ມັກໜ້ອຍແກ່ພິກຂຸທັງຫຼາຍ" ນີ້ເປັນຖານະທີ່ຄວນສັນເສີນ

໒. ຕົນເອງເປັນຜູ້ສັນໂດດ ແລະສະແດງຄຸນຂອງຄວາມສັນໂດດແກ່ພິກຂຸທັງຫຼາຍຂໍ້ທີ່ວ່າ "ພິກຂຸເປັນຜູ້ສັນໂດດ ແລະສະແດງຄຸນຂອງຄວາມສັນໂດດແກ່ພິກຂຸທັງຫຼາຍ" ນີ້ເປັນຖານະທີ່ຄວນສັນເສີນ

໓. ຕົນເອງເປັນຜູ້ສະຫງັດ ແລະສະແດງຄຸນຂອງຄວາມສະຫງັດແກ່ພິກຂຸທັງຫຼາຍ ຂໍ້ທີ່ວ່າ"ພິກຂຸເປັນຜູ້ສະຫງັດແລະສະແດງຄຸນຂອງຄວາມສະຫງັດແກ່ພິກຂຸທັງຫຼາຍ" ນີ້ເປັນຖານະທີ່ຄວນສັນເສີນ

໔. ຕົນເອງເປັນຜູ້ບໍ່ຄຸກຄີ ແລະສະແດງຄຸນຂອງຄວາມເປັນຜູ້ບໍ່ຄຸກຄີແກ່ພິກຂຸທັງຫຼາຍ ຂໍ້ທີ່ວ່າ "ພິກຂຸເປັນຜູ້ບໍ່ຄຸກຄີ ແລະສະແດງຄຸນຂອງຄວາມບໍ່ຄຸກຄີແກ່ພິກຂຸທັງຫຼາຍ" ນີ້ເປັນຖານະທີ່ຄວນສັນເສີນ

໕. ຕົນເອງເປັນຜູ້ຜາຣົບຄວາມພຽນ ແລະສະແດງຄຸນຂອງການຜາຣົບຄວາມພຽນແກ່ພິກຂຸທັງຫຼາຍ ຂໍ້ທີ່ວ່າ "ພິກຂຸເປັນຜູ້ຜາຣົບຄວາມພຽນ ແລະສະແດງຄຸນຂອງການຜາຣົບຄວາມພຽນແກ່ພິກຂຸທັງຫຼາຍ" ນີ້ເປັນຖານະທີ່ຄວນສັນເສີນ

໖. ຕົນເອງເປັນຜູ້ສົມບູນດ້ວຍສີນ ແລະສະແດງຄຸນຂອງຄວາມເປັນຜູ້ສົມບູນດ້ວຍສີນແກ່ພິກຂຸທັງຫຼາຍ ຂໍ້ທີ່ວ່າ "ພິກຂຸເປັນຜູ້ສົມບູນດ້ວຍສີນ ແລະສະແດງຄຸນຂອງຄວາມເປັນຜູ້ສົມບູນດ້ວຍສີນແກ່ພິກຂຸທັງຫຼາຍ" ນີ້ເປັນຖານະທີ່ຄວນສັນເສີນ

໗. ຕົນເອງເປັນຜູ້ສົມບູນດ້ວຍສະມາທິ ແລະສະແດງຄຸນຂອງຄວາມເປັນຜູ້ສົມບູນດ້ວຍສະມາທິແກ່ພິກຂຸທັງຫຼາຍ ຂໍ້ທີ່ວ່າ "ພິກຂຸເປັນຜູ້ສົມບູນດ້ວຍສະມາທິ ແລະສະແດງຄຸນຂອງຄວາມເປັນຜູ້ສົມບູນດ້ວຍສະມາທິແກ່ພິກຂຸທັງຫຼາຍ" ນີ້ເປັນຖານະທີ່ຄວນສັນເສີນ

໘. ຕົນເອງເປັນຜູ້ສົມບູນດ້ວຍປັນຍາ ແລະສະແດງຄຸນຂອງຄວາມເປັນຜູ້ສົມບູນດ້ວຍປັນຍາແກ່ພິກຂຸທັງຫຼາຍ ຂໍ້ທີ່ວ່າ "ພິກຂຸເປັນຜູ້ສົມບູນດ້ວຍປັນຍາ ແລະສະແດງຄຸນຂອງຄວາມເປັນຜູ້ສົມບູນດ້ວຍປັນຍາແກ່ພິກຂຸທັງຫຼາຍ" ນີ້ເປັນຖານະທີ່ຄວນສັນເສີນ

໙. ຕົນເອງເປັນຜູ້ສົມບູນດ້ວຍວິມຸດຕິ ແລະສະແດງຄຸນຂອງຄວາມເປັນຜູ້ສົມບູນດ້ວຍ ວິມຸດຕິແກ່ພິກຂຸທັງຫຼາຍ ຂໍ້ທີ່ວ່າ "ພິກຂຸເປັນຜູ້ສົມບູນດ້ວຍວິມຸດຕິ ແລະສະແດງຄຸນຂອງຄວາມເປັນຜູ້ສົມບູນດ້ວຍວິມຸດຕິແກ່ພິກຂຸທັງຫຼາຍ" ນີ້ເປັນຖານະທີ່ຄວນສັນເສີນ

໑໐. ຕົນເອງເປັນຜູ້ສົມບູນດ້ວຍວິມຸດຕິຍານທັດສະນະ ແລະສະແດງຄຸນຂອງຄວາມເປັນຜູ້ສົມບູນດ້ວຍວິມຸດຕິຍານທັດສະນະແກ່ພິກຂຸທັງຫຼາຍ ຂໍ້ທີ່ວ່າ "ພິກຂຸເປັນຜູ້ສົມບູນດ້ວຍວິມຸດຕິຍານທັດສະນະ ແລະສະແດງຄຸນຂອງຄວາມເປັນຜູ້ສົມບູນດ້ວຍວິມຸດຕິຍານ ທັດສະນະແກ່ພິກຂຸທັງຫຼາຍ" ນີ້ເປັນຖານະທີ່ຄວນສັນເສີນ

ພິກຂຸທັງຫຼາຍ ຖານະທີ່ຄວນສັນເສີນ ໑໐ ປະການນີ້ແລ

**ທຸຕິຍະກະຖາວັດຖຸສູດທີ ໑໐ ຈົບ**

**ຍະມະກະວັກທີ ໘ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໒. ອາກັງຂະວັກ

## ໝວດວ່າດ້ວຍຄວາມຫວັງ

## ໑. ອາກັງຂະສູດ

### ວ່າດ້ວຍຄວາມຫວັງ

[໗໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງ ອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍ ມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງເປັນຜູ້ສົມບູນດ້ວຍສິນ ສົມບູນດ້ວຍປາຕິໂມກ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ[໑] ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍເທີ້ນ

໑. ຫາກພິກຂຸຫວັງວ່າ "ເຮົາເພິ່ງເປັນທີ່ຮັກ ເປັນທີ່ພໍໃຈ ເປັນທີ່ເຄົາລົບ ແລະເປັນທີ່ຍົກຍ້ອງຂອງເພື່ອນພົມມະຈາຣີທັງຫຼາຍ" ເພິ່ງເປັນຜູ້ເຮັດສິນທັງຫຼາຍໃຫ້ບໍລິບູນ ໝັ່ນປະກອບຄວາມສະຫງົບແຫ່ງຈິດພາຍໃນ ບໍ່ຫ່າງຈາກຊານ ປະກອບດ້ວຍວິປັດສະນາ ເພີ່ມພູນເຮືອນວ່າງ[໒]ເທີ້ນ

໒. ຫາກພິກຂຸຫວັງວ່າ "ເຮົາເພິ່ງເປັນຜູ້ໄດ້ຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານ" ເພິ່ງເປັນຜູ້ເຮັດສິນທັງຫຼາຍໃຫ້ບໍລິບູນ ໝັ່ນປະກອບຄວາມສະຫງົບແຫ່ງຈິດພາຍໃນ ບໍ່ຫ່າງຈາກຊານ ປະກອບດ້ວຍວິປັດສະນາ ເພີ່ມພູນເຮືອນວ່າງເທີ້ນ

໓. ຫາກພິກຂຸຫວັງວ່າ "ເຮົາບໍຣິໂພກຈີວອນ ບິນທະບາດ ເສນາສະນະ ແລະຄິລານະ ປັດໄຈເພສັດຊະບໍຣິຂານຂອງຊົນເຫຼົ່າໃດ ຂໍສັກກາຣະຂອງຊົນເຫຼົ່ານັ້ນ ເພິ່ງມີຜົນຫຼາຍ ມີອານິສົງຫຼາຍ" ເພິ່ງເປັນຜູ້ເຮັດສິນທັງຫຼາຍໃຫ້ບໍລິບູນ ໆລໆ ເພີ່ມພູນເຮືອນວ່າງເທີ້ນ

໔. ຫາກພິກຂຸຫວັງວ່າ "ຍາດສາໂລຫິດ¹ເຫຼົ່າໃດ ຜູ້ລ່ວງລັບໄປແລ້ວ ມີຈິດເຫຼື້ອມໃສຣະນຶກເຖິງເຮົາ ຂໍການຣະນຶກເຖິງເຮົາຂອງຍາດສາໂລຫິດເຫຼົ່ານັ້ນ ເພິ່ງມີຜົນຫຼາຍ ມີອານິສົງຫຼາຍ" ເພິ່ງເປັນຜູ້ເຮັດສິນທັງຫຼາຍໃຫ້ບໍລິບູນ ໆລໆ ເພີ່ມພູນເຮືອນວ່າງເທີ້ນ

໕. ຫາກພິກຂຸຫວັງວ່າ "ເຮົາເພິ່ງເປັນຜູ້ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້" ເພິ່ງເປັນຜູ້ເຮັດສິນທັງຫຼາຍໃຫ້ ບໍລິບູນ ໆລໆ ເພີ່ມພູນເຮືອນວ່າງເທີ້ນ

໖. ຫາກພິກຂຸຫວັງວ່າ "ເຮົາເພິ່ງເປັນຜູ້ອົດທົນຕໍ່ຄວາມໜາວ ຮ້ອນ ຫິວ ກະຫາຍເຮືອດ ຍຸງ ລົມ ແດດ ແລະສຳຜັດແຫ່ງສັດເລືອຄານ ຄຳເວົ້າຫຍາບຄາຍດຸຮ້າຍ ເພິ່ງເປັນຜູ້ອົດກັ້ນເວທະນາທັງຫຼາຍອັນມີໃນຮ່າງກາຍທີ່ເກີດຂຶ້ນແລ້ວເປັນທຸກກ້າແຂງ ເຜັດຮ້ອນ ບໍ່ຍິນດີ ບໍ່ໜ້າພໍໃຈ ພາກຊີວິດ" ເພິ່ງເປັນຜູ້ເຮັດສິນທັງຫຼາຍໃຫ້ບໍລິບູນ ໆລໆ ເພີ່ມພູນເຮືອນວ່າງເທີ້ນ

໗. ຫາກພິກຂຸຫວັງວ່າ "ເຮົາເພິ່ງເປັນຜູ້ຂົ່ມຄວາມຍິນດີແລະຄວາມຍິນຮ້າຍ ຄວາມຍິນດີແລະຄວາມຍິນຮ້າຍບໍ່ເພິ່ງຄອບງຳເຮົາ ຂໍເຮົາເພິ່ງຂົ່ມຄວາມຍິນດີແລະຄວາມຍິນຮ້າຍທີ່ເກີດຂຶ້ນຢູ່" ເພິ່ງເປັນຜູ້ເຮັດສິນທັງຫຼາຍໃຫ້ບໍລິບູນ ໆລໆ ເພີ່ມພູນ ເຮືອນວ່າງເທີ້ນ

໘. ຫາກພິກຂຸຫວັງວ່າ "ເຮົາເພິ່ງເປັນຜູ້ລະງັບຄວາມຢ້ານ ຄວາມຫວາດສຽວໄດ້ ຄວາມຢ້ານຄວາມຫວາດສຽວບໍ່ເພິ່ງຄອບງຳເຮົາ ຂໍເຮົາເພິ່ງລະງັບຄວາມຢ້ານຄວາມຫວາດສຽວທີ່ເກີດຂຶ້ນຢູ່" ເພິ່ງເປັນຜູ້ເຮັດສິນທັງຫຼາຍໃຫ້ບໍລິບູນ ໆລໆ ເພີ່ມພູນເຮືອນວ່າງເທີ້ນ

໙. ຫາກພິກຂຸຫວັງວ່າ "ເຮົາເພິ່ງເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ" ເພິ່ງເປັນຜູ້ເຮັດສິນທັງຫຼາຍໃຫ້ບໍລິບູນ ໆລໆ ເພີ່ມພູນເຮືອນວ່າງເທີ້ນ

໑໐. ຫາກພິກຂຸຫວັງວ່າ "ເຮົາເພິ່ງເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ" ເພິ່ງເປັນຜູ້ເຮັດສິນທັງຫຼາຍໃຫ້ບໍລິບູນ ໝັ່ນປະກອບຄວາມສະງົບແຫ່ງຈິດພາຍໃນ ບໍ່ຫ່າງຈາກຊານ ປະກອບດ້ວຍວິປັດສະນາ ເພີ່ມພູນເຮືອນວ່າງເທີ້ນ

ພິກຂຸທັງຫຼາຍ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ທ່ານທັງຫຼາຍຈົ່ງເປັນຜູ້ສົມບູນ ດ້ວຍສິນສົມບູນດ້ວຍປາຕິໂມກ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະ ແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍເທີ້ນ" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

**ອາກັງຂະສູດທີ ໑ ຈົບ**

# ໘. ກັນຕະກະສູດ

## ວ່າດ້ວຍປະຕິປັກຂະທຳ

[ກ໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ກູຕາຄານສາລາ ປ່າມະຫາວັນ ເຂດນະຄອນເວສາລີ ພ້ອມດ້ວຍພຣະສາວົກຜູ້ເປັນເຖຣະທີ່ມີຊື່ສຽງຫຼາຍອົງ ຄື ທ່ານ ພຣະປາລະ ທ່ານພຣະອຸບປາລະ ທ່ານພຣະກັກກະຕະ ທ່ານພຣະກະລິມພະ ທ່ານພຣະນິກະຕະ ທ່ານພຣະກະຕິດສະຫະ ແລະພຣະສາວົກຜູ້ເປັນເຖຣະມີຊື່ສຽງເຫຼົ່າອື່ນ

ສະໄໝນັ້ນແລ ເຈົ້າລິດສະຫວີຜູ້ມີກິດຕິສັບເລື່ອງລືຈຳນວນຫຼາຍໄດ້ພາກັນຈັດຂະບວນພະຍຸຫະຍາດຕາທາງສະຖະລະມາດ ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຍັງປ່າມະຫາວັນ ຄັ້ງນັ້ນແລ ທ່ານພຣະເຖຣະເຫຼົ່ານັ້ນໄດ້ມີຄວາມຄິດແນວນີ້ວ່າ "ເຈົ້າລິດສະຫວີຜູ້ມີກິດຕິສັບເລື່ອງລືຈຳນວນຫຼາຍໄດ້ພາກັນຈັດຂະບວນພະຍຸຫະຍາດຕາທາງສະຖະລະມາດ ສະເດັດເຂົ້າໄປເຝົ້າພຣະຜູ້ມີ ພຣະພາກຍັງປ່າມະຫາວັນ ກໍພຣະຜູ້ມີພຣະພາກເຈົ້າຕັດວ່າຊານມີສຽງເປັນປໍລະປັກທາງທີ່ດີ ເຮົາທັງຫຼາຍຄວນຈະເຂົ້າໄປສູ່ໂຄສິງຄະສາລະວະນະທາຍະວັນ ເປັນຜູ້ງຽບສຽງ ບໍ່ສາລະວົນ ຢູ່ຜາສຸກ" ບັດນັ້ນ ພຣະເຖຣະເຫຼົ່ານັ້ນຈຶ່ງເຂົ້າໄປສູ່ໂຄສິງຄະສາລະວະນະທາຍະວັນ ເປັນຜູ້ງຽບ ສຽງ ບໍ່ສາລະວົນ ຢູ່ຜາສຸກ

ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ປາລະພິກຂຸໄປໃສ ອຸປະປາລະພິກຂຸໄປໃສ ກັກກະຕະພິກຂຸ ກະລິມພະພິກຂຸ ນິກະຕະພິກຂຸ ປະຕິດສະຫະພິກຂຸໄປໃສ ສາວົກຜູ້ເປັນເຖຣະເຫຼົ່ານັ້ນໄປໃສນໍ"

ພິກຂຸເຫຼົ່ານັ້ນຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໄຣກາດ ທ່ານພຣະເຖຣະເຫຼົ່ານັ້ນຄິດວ່າ "ເຈົ້າລິດສະຫວີຜູ້ມີກິດຕິສັບເລື່ອງລືຈຳນວນຫຼາຍໄດ້ພາກັນຈັດຂະບວນພະຍຸຫະຍາດຕາທາງສະຖະລະມາດ ສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຍັງປ່າມະຫາວັນ ກໍພຣະຜູ້ມີພຣະພາກເຈົ້າຕັດວ່າຊານມີສຽງເປັນປໍລະປັກ ທາງທີ່ດີເຮົາທັງຫຼາຍຄວນຈະເຂົ້າໄປສູ່ໂຄສິງຄະສາລະວະນະທາຍະວັນ ເປັນຜູ້ງຽບສຽງ ບໍ່ສາລະວົນ ຢູ່ຜາສຸກ" ບັດນັ້ນ ພຣະເຖຣະເຫຼົ່ານັ້ນ ຈຶ່ງເຂົ້າໄປສູ່ໂຄສິງຄະສາລະວະນະທາຍະວັນ ເປັນຜູ້ງຽບສຽງ ບໍ່ສາລະວົນ ຢູ່ຜາສຸກ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ດີແລ້ວ ດີແລ້ວ ມະຫາສາວົກເຫຼົ່ານັ້ນເມື່ອຕອບໃຫ້ຊັດເຈນເພິ່ງຕອບດັ່ງນັ້ນ ຍ້ອນເຮົາກ່າວວ່າຊານມີສຽງເປັນປໍລະປັກ

ປະຕິປັກຂະທຳ ໑໐ ປະການນີ້ ປະຕິປັກຂະທຳ ໑໐ ປະການ ອັນໃດແດ່ ຄື

໑. ຄວາມເປັນຜູ້ຍິນດີໃນການຄຸກຄີດ້ວຍໝູ່ ເປັນປໍລະປັກຕໍ່ຜູ້ຍິນດີໃນຄວາມສະຫງັດ
໒. ການຈະເລີນສຸພະນິມິດ ເປັນປໍລະປັກຕໍ່ຜູ້ຈະເລີນອະສຸພະນິມິດ
໓. ການເບິ່ງມະໂຫລະສົບທີ່ເປັນຂ້າເສິກ ເປັນປໍລະປັກຕໍ່ຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ
໔. ຄວາມໃກ້ຊິດມາຕຸຄາມ ເປັນປໍລະປັກຕໍ່ພົມມະຈັນ
໕. ສຽງ ເປັນປໍລະປັກຕໍ່ປະຖົມຊານ
໖. ວິຕົກວິຈານ ເປັນປໍລະປັກຕໍ່ທຸຕິຍະຊານ
໗. ປິຕິ ເປັນປໍລະປັກຕໍ່ຕະຕິຍະຊານ
໘. ລົມອັດສາສະປັດສາສະ ເປັນປໍລະປັກຕໍ່ຈະຕຸດຖະຊານ
໙. ສັນຍາແລະເວທະນາ ເປັນປໍລະປັກຕໍ່ສັນຍາເວທະຍິຕະນິໂຣດສະມາບັດ
໑໐. ຣາຄະ ໂທສະ ແລະໂມຫະ ເປັນປະຕິປັກຂະທຳ

ພິກຂຸທັງຫຼາຍ ທ່ານທັງຫຼາຍຈົ່ງເປັນຜູ້ບໍ່ມີປໍລະປັກຢູ່ເທີ້ນ (ທ່ານທັງຫຼາຍຈົ່ງເປັນຜູ້ໝົດປະຕິປັກຂະທຳຢູ່ເທີ້ນ) ທ່ານທັງຫຼາຍ ຈົ່ງເປັນຜູ້ບໍ່ມີປະຕິປັກຂະທຳ ໝົດປະຕິປັກຂະທຳຢູ່ເທີ້ນ ພຣະອະຣະຫັນທັງຫຼາຍບໍ່ມີປະຕິປັກຂະທຳ (ພຣະອະຣະຫັນທັງຫຼາຍໝົດ ປະຕິປັກຂະທຳ) ພິກຂຸທັງຫຼາຍ ພຣະອະຣະຫັນທັງຫຼາຍ ເປັນຜູ້ບໍ່ມີປະຕິປັກຂະທຳແລະໝົດປະຕິປັກຂະທຳ

**ກັນຕະກະສູດທີ ໒ ຈົບ**

# ໕. ອິດຖະທຳມະສູດ
## ວ່າດ້ວຍທຳທີ່ໜ້າປາຖະໜາ

[໗໕] ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ ເປັນທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ

ທຳ ໑໐ ປະການ ອັນໃດແດ່ ຄື

໑. ໂພຄະສົມບັດ ເປັນທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ
໒. ຜິວພັນ ເປັນທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ
໓. ຄວາມບໍ່ມີພະຍາດ ເປັນທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈຫາໄດ້ຍາກໃນໂລກ
໔. ສີນ ເປັນທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ
໕. ພົມມະຈັນ ເປັນທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ
໖. ມິດ ເປັນທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ
໗. ຄວາມເປັນພະຫູສູດ ເປັນທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈຫາໄດ້ຍາກໃນໂລກ
໘. ປັນຍາ ເປັນທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ
໙. ທຳ[១] ເປັນທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ
໑໐. ສະຫວັນ ເປັນທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ

ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ແລ ເປັນທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈຫາໄດ້ຍາກໃນໂລກ

ທຳ ໑໐ ປະການນີ້ແລ ເຊິ່ງເປັນທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ ມີທຳທີ່ເປັນອັນຕະລາຍ ໑໐ ປະການ ຄື

໑. ຄວາມຂີ້ຄ້ານ ບໍ່ດຸໝັ່ນຂະຫຍັນພຽນ ເປັນອັນຕະລາຍຕໍ່ໂພຄະສົມບັດ
໒. ການບໍ່ປະດັບຕົກແຕ່ງ ເປັນອັນຕະລາຍຕໍ່ຜິວພັນ
໓. ການເຮັດສິ່ງທີ່ບໍ່ເປັນສັບປາຍະ ເປັນອັນຕະລາຍຕໍ່ຄວາມບໍ່ມີພະຍາດ
໔. ຄວາມເປັນຜູ້ມີປາປະມິດ(ມິດຊົ່ວ) ເປັນອັນຕະລາຍຕໍ່ສິນ
໕. ຄວາມບໍ່ສັງລວມອິນຊີ ເປັນອັນຕະລາຍຕໍ່ພົມມະຈັນ
໖. ການແກ້ງກ່າວໃຫ້ຄາດເຄື່ອນຈາກຄວາມຈິງ ເປັນອັນຕະລາຍຕໍ່ມິດ
໗. ການບໍ່ທຳການສາທະຍາຍ ເປັນອັນຕະລາຍຕໍ່ຄວາມເປັນພະຫູສູດ
໘. ການບໍ່ຟັງດ້ວຍດີ ການບໍ່ສອບຖາມ ເປັນອັນຕະລາຍຕໍ່ປັນຍາ
໙. ການບໍ່ປະກອບຄວາມພຽນ ການບໍ່ພິຈາລະນາ ເປັນອັນຕະລາຍຕໍ່ທຳ
໑໐. ການປະຕິບັດຜິດ ເປັນອັນຕະລາຍຕໍ່ສະຫວັນ

ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ແລ ເປັນອັນຕະລາຍຕໍ່ທຳ ໑໐ ປະການ ເຊິ່ງເປັນທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ

ທຳ ໑໐ ປະການນີ້ແລ ເຊິ່ງເປັນທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ ມີທຳທີ່ເປັນອາຫານ ໑໐ ປະການ ຄື

໑. ຄວາມດຸໝັ່ນຂະຫຍັນພຽນ ບໍ່ຂີ້ຄ້ານ ເປັນອາຫານຂອງໂພຄະສົມບັດ
໒. ການປະດັບຕົກແຕ່ງ ເປັນອາຫານຂອງຜິວພັນ
໓. ການເຮັດສິ່ງທີ່ເປັນສັບປາຍະ ເປັນອາຫານຂອງຄວາມບໍ່ມີພະຍາດ
໔. ຄວາມເປັນຜູ້ມີກັນລະຍານະມິດ(ມິດດີ) ເປັນອາຫານຂອງສິນ
໕. ຄວາມສັງລວມອິນຊີ ເປັນອາຫານຂອງພົມມະຈັນ
໖. ການບໍ່ແກ້ງກ່າວໃຫ້ຄາດເຄື່ອນຈາກຄວາມຈິງ ເປັນອາຫານຂອງມິດ
໗. ການທຳການສາທະຍາຍ ເປັນອາຫານຂອງຄວາມເປັນພະຫູສູດ
໘. ການຟັງດ້ວຍດີ ການສອບຖາມ ເປັນອາຫານຂອງປັນຍາ
໙. ການປະກອບຄວາມພຽນ ການພິຈາລະນາ ເປັນອາຫານຂອງທຳ
໑໐. ການປະຕິບັດຖືກຕ້ອງ ເປັນອາຫານຂອງສະຫວັນ

ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ແລ ເປັນອາຫານຂອງທຳ ໑໐ ປະການ ເຊິ່ງເປັນທຳທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຫາໄດ້ຍາກໃນໂລກ

**ອິດຖະທຳມະສູດທີ ໓ ຈົບ**

# ໔. ວັດທິສູດ

## ວ່າດ້ວຍຄວາມຈະເລີນ

[໗໔] ພິກຂຸທັງຫຼາຍ ອະຣິຍະສາວົກເມື່ອຈະເລີນດ້ວຍຄວາມຈະເລີນ ໑໐ ປະການ ຊື່ວ່າ ຈະເລີນດ້ວຍຄວາມຈະເລີນອັນປະເສີດ ຊື່ວ່າມີປົກກະຕິຮັບເອົາສິ່ງທີ່ເປັນສາຣະ ແລະມີປົກກະຕິ ຮັບເອົາສິ່ງທີ່ປະເສີດແຫ່ງກາຍ

ຄວາມຈະເລີນ ໑໐ ປະການ ອັນໃດແດ່ ຄື

ອະຣິຍະສາວົກ

໑. ຈະເລີນດ້ວຍນາແລະສວນ
໒. ຈະເລີນດ້ວຍຊັບແລະເຂົ້າເປືອກ
໓. ຈະເລີນດ້ວຍບຸດແລະພັນລະຍາ
໔. ຈະເລີນດ້ວຍຂ້າທາດ ກຳມະກອນ ແລະຄົນໃຊ້
໕. ຈະເລີນດ້ວຍສັດສີ່ຕີນ
໖. ຈະເລີນດ້ວຍສັດທາ
໗. ຈະເລີນດ້ວຍສີນ
໘. ຈະເລີນດ້ວຍສຸຕະ
໙. ຈະເລີນດ້ວຍຈາຄະ
໑໐. ຈະເລີນດ້ວຍປັນຍາ

ພິກຂຸທັງຫຼາຍ ອະຣິຍະສາວົກເມື່ອຈະເລີນດ້ວຍທຳເປັນເຄື່ອງຈະເລີນ ໑໐ ປະການນີ້ແລ ຈຶ່ງຊື່ວ່າຈະເລີນດ້ວຍຄວາມຈະເລີນອັນປະເສີດ ຊື່ວ່າເປັນຜູ້ມີປົກກະຕິຮັບເອົາສິ່ງທີ່ເປັນສາຣະ ແລະມີປົກກະຕິຮັບເອົາສິ່ງທີ່ປະເສີດແຫ່ງກາຍ

ບຸກຄົນໃດໃນໂລກນີ້ຈະເລີນດ້ວຍຊັບ
ເຂົ້າເປືອກ ບຸດ ພັນລະຍາ ແລະສັດສີ່ຕີນ
ບຸກຄົນນັ້ນເປັນຜູ້ມີໂພຄະສົມບັດ ມີຍົດ
ຍາດມິດ ແລະພຣະຣາຊາກໍຊົງຍ້ອງຍໍ
ບຸກຄົນໃດໃນໂລກນີ້ຈະເລີນດ້ວຍສັດທາ
ສີນ ສຸຕະ ຈາຄະ ແລະປັນຍາ
ບຸກຄົນນັ້ນ ເປັນຜູ້ໝັ້ນຄົງ ເປັນສັດຕະບຸຣຸດ

ມີປັນຍາເປັນເຄື່ອງພິຈາລະນາ
ຊື່ວ່າຈະເລີນທັງ ໔ ປະການໃນປັດຈຸບັນ

**ວັດທິສູດທີ ໔ ຈົບ**

# ໕. ມິຄະສາລາສູດ[๑]

## ວ່າດ້ວຍອຸປາສິກາຊື່ວ່າມິຄະສາລາ

[໗໕] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ເມື່ອໃນເວລາເຊົ້າ ທ່ານພຣະອານົນຄອງອັນຕະຣະວາສົກຖືບາດແລະຈີວອນ[๒]ແລ້ວ ເຂົ້າໄປສູ່ບ່ອນຢູ່ຂອງມິຄະສາລາອຸປາສິກາ ນັ່ງເທິງອາສະນະທີ່ປູລາດໄວ້ ລຳດັບນັ້ນແລ ມິຄະສາລາອຸປາສິກາໄດ້ເຂົ້າໄປຫາທ່ານພຣະອານົນ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານດັ່ງນີ້ ວ່າ

"ທ່ານອານົນ ທຳນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງວ່າ "ຄົນ ໔ ຄົນ ຄື ຄົນໜຶ່ງປະພຶດພົມມະຈັນ ອີກຄົນໜຶ່ງບໍ່ປະພຶດພົມມະຈັນ ເປັນຜູ້ມີຄະຕິສະເໝີຄືກັນໃນສຳປະຣາຍະພົບ" ຈະເພິ່ງຮູ້ໄດ້ແນວໃດ ທ່ານຜູ້ຈະເລີນ ບິດາຂອງຂ້ານ້ອຍຊື່ວ່າປຸຣານະ ເປັນຜູ້ປະພຶດພົມມະຈັນປະພຶດຫ່າງໄກ ງົດເວັ້ນຈາກເມຖຸນ[๓]ເຊິ່ງເປັນທຳຂອງຊາວບ້ານ ທ່ານເຖິງແກ່ກຳແລ້ວ ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນວ່າເປັນສະກະທາຄາມີບຸກຄົນເກີດໃນໝູ່ເທບຊັ້ນດຸສິດ

ເພື່ອນຮັກຂອງບິດາຂ້ານ້ອຍ ຊື່ວ່າອິສິທັດຕະ ເຖິງບໍ່ປະພຶດພົມມະຈັນ ແຕ່ຖື ສະທາຣະສັນໂດດ(ຍິນດີດ້ວຍພັນລະຍາຂອງຕົນ) ແມ່ນເຂົາເຖິງແກ່ກຳແລ້ວ ພຣະຜູ້ມີພຣະພາກເຈົ້າກໍຊົງພະຍາກອນວ່າເປັນສະກະທາຄາມີບຸກຄົນເກີດໃນໝູ່ເທບຊັ້ນດຸສິດ

ທ່ານອານົນ ທຳນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງວ່າ "ຄົນ ໔ ຄົນ ຄືຄົນໜຶ່ງປະພຶດພົມມະຈັນ ອີກຄົນໜຶ່ງບໍ່ປະພຶດພົມມະຈັນ ເປັນຜູ້ມີຄະຕິສະເໝີຄືກັນໃນສຳປະຣາຍະພົບ" ຈະເພິ່ງຮູ້ໄດ້ແນວໃດ"

ທ່ານພຣະອານົນຕອບວ່າ "ນາງ ຂໍ້ນີ້ພຣະຜູ້ມີພຣະພາກເຈົ້າໄດ້ຊົງພະຍາກອນໄວ້ແລ້ວແນວນີ້ຄືກັນ"

ຄັ້ງນັ້ນແລ ທ່ານພຣະອານົນຮັບບິນທະບາດ ໃນບ່ອນຢູ່ຂອງມິຄະສາລາອຸປາສິກາແລ້ວລຸກຈາກອາສະນະຫຼີກໄປ ເມື່ອໃນເວລາຫຼັງພັດຕາຫານ ທ່ານພຣະອານົນກັບຈາກບິນທະບາດ

ແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານອະໂຣກາດ ເວລາເຊົ້າ ຂ້າພຣະອົງຄອງ ອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປສູ່ບ່ອນຢູ່ຂອງມິຄະສາລາອຸປາສິກາ ນັ່ງເທິງອາສະນະທີ່ປູລາດໄວ້ ລຳດັບນັ້ນແລ ນາງໄດ້ເຂົ້າໄປຫາຂ້າພຣະອົງ ໄຫວ້ແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມຂ້າພຣະອົງວ່າ

ທ່ານອານົນ ທຳນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງວ່າ "ຄົນ ໒ ຄົນ ຄືຄົນໜຶ່ງປະພຶດພົມມະຈັນ ອີກຄົນໜຶ່ງບໍ່ປະພຶດພົມມະຈັນ ເປັນຜູ້ມີຄະຕິສະເໝີຄືກັນໃນສຳປະຣາຍະພົບ" ຈະເພິ່ງຮູ້ໄດ້ແນວໃດ ທ່ານຜູ້ຈະເລີນ ບິດາຂອງຂ້ານ້ອຍຊື່ປຸຣານະ ເປັນຜູ້ປະພຶດພົມມະຈັນ ປະພຶດຫ່າງໄກ ງົດເວັ້ນຈາກເມຖຸນເຊິ່ງເປັນທຳຂອງຊາວບ້ານ ທ່ານເຖິງແກ່ກຳແລ້ວ ພຣະຜູ້ມີພຣະພາກເຈົ້າຊົງພະຍາກອນວ່າເປັນສະກະທາຄາມີບຸກຄົນເກີດໃນໝູ່ເທບຊັ້ນດຸສິດ

ເພື່ອນຮັກຂອງບິດາຂອງຂ້ານ້ອຍ ຊື່ວ່າອິສິທັດຕະ ເຖິງບໍ່ປະພຶດພົມມະຈັນ ແຕ່ຖື ສະທາຣະສັນໂດດ ແມ່ນເຂົາເຖິງແກ່ກຳແລ້ວ ພຣະຜູ້ມີພຣະພາກເຈົ້າກໍຊົງພະຍາກອນວ່າເປັນ ສະກະທາຄາມີບຸກຄົນເກີດໃນໝູ່ເທບຊັ້ນດຸສິດ

ທ່ານອານົນ ທຳນີ້ທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງວ່າ "ຄົນ ໒ ຄົນ ຄືຄົນໜຶ່ງປະພຶດພົມມະຈັນ ອີກຄົນໜຶ່ງບໍ່ປະພຶດພົມມະຈັນ ເປັນຜູ້ມີຄະຕິສະເໝີຄືກັນໃນສຳປະຣາຍະພົບ" ຈະເພິ່ງຮູ້ໄດ້ແນວໃດ

ເມື່ອມິຄະສາລາອຸປາສິກາກ່າວແນວນີ້ແລ້ວ ຂ້າພຣະອົງຈຶ່ງຕອບວ່າ "ນາງ ຂໍ້ນີ້ພຣະຜູ້ມີພຣະພາກເຈົ້າໄດ້ຊົງພະຍາກອນໄວ້ແນວນີ້ຄືກັນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ອານົນ ໃນເລື້ອງຍານເປັນເຄື່ອງກຳນົດຮູ້ອິນຊີແກ່ກ້າແລະອິນຊີອ່ອນຂອງບຸກຄົນ ໃຜກັນນໍຄືມິຄະສາລາອຸປາສິກາຜູ້ຈ້ຳ ບໍ່ສະຫຼາດ ບໍ່ຫຼັກແຫຼມ ມີປັນຍາທຶບ ແລະໃຜກັນນໍຄືພຣະສຳມາສຳພຸດທະເຈົ້າຜູ້ມີວິໄສທີ່ບໍ່ມີອັນໃດຂັດຂວາງໄດ້[๑]

ອານົນ ບຸກຄົນ ໑໐ ຈຳພວກນີ້ ມີຜາກົດຢູ່ໃນໂລກ
ບຸກຄົນ ໑໐ ຈຳພວກໃດແດ່ ຄື

໑. ບຸກຄົນລາງຄົນໃນໂລກນີ້ເປັນຜູ້ທຸສິນ ແລະບໍ່ຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິເຊິ່ງເປັນທີ່ດັບຄວາມເປັນຜູ້ທຸສິນໄດ້ໝົດສິ້ນຕາມຄວາມເປັນຈິງ ບຸກຄົນນັ້ນບໍ່ເຮັດກິດດ້ວຍການຟັງ ບໍ່ເຮັດກິດດ້ວຍຄວາມເປັນພະຫູສູດ ບໍ່ແທງຕະຫຼອດດີດ້ວຍທິດຖິ[๒] ແລະບໍ່ໄດ້ວິມຸດຕິ[๓] ຕາມເວລາ

ອັນຄວນ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປທາງເສື່ອມ ບໍ່ໄປທາງຈະເລີນ ຍ່ອມເຖິງຄວາມເສື່ອມແນວດຽວ ບໍ່ເຖິງຄວາມຈະເລີນ

໔. ສ່ວນບຸກຄົນລາງຄົນໃນໂລກນີ້ເປັນຜູ້ທຸສິນ ແຕ່ຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ເຊິ່ງເປັນທີ່ດັບຄວາມເປັນຜູ້ທຸສິນໄດ້ໝົດສິ້ນຕາມຄວາມເປັນຈິງ ບຸກຄົນນັ້ນເຮັດກິດດ້ວຍການຟັງ ເຮັດກິດດ້ວຍຄວາມເປັນພະຫູສູດ ແທງຕະຫຼອດດີດ້ວຍທິດຖິ ແລະໄດ້ວິມຸດຕິຕາມເວລາອັນຄວນ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປທາງຈະເລີນ ບໍ່ໄປທາງເສື່ອມ ຍ່ອມເຖິງຄວາມຈະເລີນແນວດຽວ ບໍ່ເຖິງຄວາມເສື່ອມ

ບຸກຄົນຜູ້ຖືປະມານ[໑]ຍ່ອມຖືປະມານຂໍ້ນັ້ນວ່າ “ທຳແມ່ນຂອງບຸກຄົນນີ້ກໍຄື ທຳຂອງອີກຄົນໜຶ່ງນັ້ນແລ ບັນດາບຸກຄົນ ໔ ຄົນນັ້ນ ຍ້ອນເຫດໃດ ຄົນໜຶ່ງຈຶ່ງຊົ່ວ ຄົນໜຶ່ງຈຶ່ງດີ” ແທ້ຈິງ ການຖືປະມານຂອງຜູ້ຖືປະມານເຫຼົ່ານັ້ນ ເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກຕະຫຼອດການລະນານ

ບັນດາບຸກຄົນ ໔ ຄົນນັ້ນ ບຸກຄົນໃດເປັນຜູ້ທຸສິນ ແຕ່ຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ເຊິ່ງເປັນທີ່ດັບຄວາມທຸສິນໄດ້ໝົດສິ້ນຕາມຄວາມເປັນຈິງ ບຸກຄົນນັ້ນເຮັດກິດດ້ວຍການຟັງ ເຮັດກິດດ້ວຍຄວາມເປັນພະຫູສູດ ແທງຕະຫຼອດດີດ້ວຍທິດຖິ ແລະໄດ້ວິມຸດຕິຕາມເວລາອັນຄວນ ບຸກຄົນນີ້ດີກວ່າແລະປະນີດກວ່າບຸກຄົນທີ່ກ່າວຂ້າງຕົ້ນນັ້ນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນີ້ຢັ່ງລົງສູ່ອະຣິຍະພູມ ໃຜບໍຈະເພິ່ງຮູ້ເຫດນັ້ນໄດ້ນອກຈາກຕະຖາຄົດ ຍ້ອນເຫດນັ້ນແລ ທ່ານທັງຫຼາຍຢ່າໄດ້ເປັນຜູ້ມັກຖືປະມານໃນບຸກຄົນ ແລະຢ່າຖືປະມານໃນບຸກຄົນ ຍ້ອນບຸກຄົນຜູ້ຖືປະມານໃນບຸກຄົນຍ່ອມທຳລາຍຄຸນວິເສດຂອງຕົນ ສ່ວນເຮົາຫຼືຜູ້ຄືເຮົາເພິ່ງຖືປະມານໃນບຸກຄົນໄດ້

໕. ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີສິນ ແຕ່ບໍ່ຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິເຊິ່ງເປັນທີ່ດັບສິນໄດ້ໝົດສິ້ນຕາມຄວາມເປັນຈິງ ບຸກຄົນນັ້ນບໍ່ເຮັດກິດດ້ວຍການຟັງ ບໍ່ເຮັດກິດດ້ວຍຄວາມເປັນພະຫູ ສູດ ບໍ່ແທງຕະຫຼອດດີດ້ວຍທິດຖິ ແລະບໍ່ໄດ້ວິມຸດຕິຕາມເວລາອັນຄວນ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປທາງເສື່ອມ ບໍ່ໄປທາງຈະເລີນ ຍ່ອມເຖິງຄວາມເສື່ອມແນວດຽວ ບໍ່ເຖິງຄວາມຈະເລີນ

໔. ສ່ວນບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີສິນ ແລະຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ເຊິ່ງເປັນທີ່ດັບສິນໄດ້ໝົດສິ້ນຕາມຄວາມເປັນຈິງ ບຸກຄົນນັ້ນເຮັດກິດດ້ວຍການຟັງ ເຮັດກິດດ້ວຍຄວາມເປັນພະຫູສູດ ແທງຕະຫຼອດດີດ້ວຍທິດຖິ ແລະໄດ້ວິມຸດຕິຕາມເວລາອັນຄວນ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປທາງຈະເລີນ ບໍ່ໄປທາງເສື່ອມ ຍ່ອມເຖິງຄວາມຈະເລີນແນວດຽວ ບໍ່ເຖິງຄວາມເສື່ອມ

ບຸກຄົນຜູ້ຖືປະມານຍ່ອມຖືປະມານຂໍ້ນັ້ນວ່າ ຯລຯ ສ່ວນເຮົາຫຼືຜູ້ຄືເຮົາເພິ່ງຖືປະມານໃນບຸກຄົນໄດ້

໕. ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີຣາຄະຈັດ ແລະບໍ່ຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິເຊິ່ງເປັນທີ່ດັບຣາຄະໄດ້ໝົດສິ້ນຕາມຄວາມເປັນຈິງ ບຸກຄົນນັ້ນບໍ່ເຮັດກິດດ້ວຍການຟັງ ບໍ່ເຮັດກິດດ້ວຍຄວາມເປັນພະຫູສູດ ບໍ່ແທງຕະຫຼອດດີດ້ວຍທິດຖິ ແລະບໍ່ໄດ້ວິມຸດຕິຕາມເວລາອັນຄວນ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປທາງເສື່ອມ ບໍ່ໄປທາງຈະເລີນ ຍ່ອມເຖິງຄວາມເສື່ອມແນວດຽວ ບໍ່ເຖິງຄວາມຈະເລີນ

໖. ສ່ວນບຸກຄົນລາງຄົນໃນໂລກນີ້ເປັນຜູ້ມີຣາຄະຈັດ ແຕ່ຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິເຊິ່ງເປັນທີ່ດັບຣາຄະໄດ້ໝົດສິ້ນຕາມຄວາມເປັນຈິງ ບຸກຄົນນັ້ນເຮັດກິດດ້ວຍການຟັງ ເຮັດກິດດ້ວຍຄວາມເປັນພະຫູສູດ ແທງຕະຫຼອດດີດ້ວຍທິດຖິ ແລະໄດ້ວິມຸດຕິຕາມເວລາອັນຄວນ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປທາງຈະເລີນ ບໍ່ໄປທາງເສື່ອມ ຍ່ອມເຖິງຄວາມຈະເລີນແນວດຽວ ບໍ່ເຖິງຄວາມເສື່ອມ

ບຸກຄົນຜູ້ຖືປະມານຍ່ອມຖືປະມານຂໍ້ນັ້ນວ່າ ຯລຯ ສ່ວນເຮົາຫຼືຜູ້ຄືເຮົາເພິ່ງຖືປະມານໃນບຸກຄົນໄດ້

໗. ບຸກຄົນລາງຄົນໃນໂລກນີ້ເປັນຜູ້ມັກໂກດ ແລະບໍ່ຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິເຊິ່ງເປັນທີ່ດັບຄວາມໂກດໄດ້ໝົດສິ້ນຕາມຄວາມເປັນຈິງ ບຸກຄົນນັ້ນບໍ່ເຮັດກິດດ້ວຍການຟັງ ບໍ່ເຮັດກິດດ້ວຍຄວາມເປັນພະຫູສູດ ບໍ່ແທງຕະຫຼອດດີດ້ວຍທິດຖິ ແລະບໍ່ໄດ້ວິມຸດຕິຕາມເວລາອັນຄວນ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປທາງເສື່ອມ ບໍ່ໄປທາງຈະເລີນ ຍ່ອມເຖິງຄວາມເສື່ອມແນວດຽວ ບໍ່ເຖິງຄວາມຈະເລີນ

໘. ສ່ວນບຸກຄົນລາງຄົນໃນໂລກນີ້ເປັນຜູ້ມັກໂກດ ແຕ່ຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິເຊິ່ງເປັນທີ່ດັບຄວາມໂກດໄດ້ໝົດສິ້ນຕາມຄວາມເປັນຈິງ ບຸກຄົນນັ້ນເຮັດກິດດ້ວຍການຟັງ ເຮັດກິດດ້ວຍຄວາມເປັນພະຫູສູດ ແທງຕະຫຼອດດີດ້ວຍທິດຖິ ແລະໄດ້ວິມຸດຕິຕາມເວລາອັນຄວນ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປທາງຈະເລີນ ບໍ່ໄປທາງເສື່ອມ ຍ່ອມເຖິງຄວາມຈະເລີນແນວດຽວ ບໍ່ເຖິງຄວາມເສື່ອມ

ບຸກຄົນຜູ້ຖືປະມານຍ່ອມຖືປະມານຂໍ້ນັ້ນວ່າ ຯລຯ ສ່ວນເຮົາຫຼືຜູ້ຄືເຮົາເພິ່ງຖືປະມານໃນບຸກຄົນໄດ້

໙. ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຟຸ້ງຊ່ານ ແລະບໍ່ຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ

ເຊິ່ງເປັນທີ່ດັບຄວາມຟຸ້ງຊ່ານໄດ້ໝົດສິ້ນຕາມຄວາມເປັນຈິງ ບຸກຄົນນັ້ນບໍ່ເຮັດກິດດ້ວຍການຟັງ ບໍ່ເຮັດກິດດ້ວຍຄວາມເປັນພະຫູສູດ ບໍ່ແທງຕະຫຼອດດີດ້ວຍທິດຖິ ແລະບໍ່ໄດ້ວິມຸດຕິຕາມເວລາອັນຄວນ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປທາງເສື່ອມ ບໍ່ໄປທາງຈະເລີນ ຍ່ອມເຖິງຄວາມເສື່ອມແນວດຽວ ບໍ່ເຖິງຄວາມຈະເລີນ

໑໐. ສ່ວນບຸກຄົນລາງຄົນໃນໂລກນີ້ເປັນຜູ້ຟຸ້ງຊ່ານ ແຕ່ຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິ ເຊິ່ງເປັນທີ່ດັບຄວາມຟຸ່ງຊ່ານໄດ້ໝົດສິ້ນຕາມຄວາມເປັນຈິງ ບຸກຄົນນັ້ນເຮັດກິດດ້ວຍການຟັງ ເຮັດກິດດ້ວຍຄວາມເປັນພະຫູສູດ ແທງຕະຫຼອດດີດ້ວຍທິດຖິ ແລະໄດ້ວິມຸດຕິຕາມເວລາອັນຄວນ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປທາງຈະເລີນ ບໍ່ໄປທາງເສື່ອມ ຍ່ອມເຖິງຄວາມຈະເລີນແນວດຽວ ບໍ່ເຖິງຄວາມເສື່ອມ

ອານົນ ບຸກຄົນຜູ້ຖືປະມານຍ່ອມຖືປະມານຂໍ້ນັ້ນວ່າ "ທຳແມ່ນຂອງບຸກຄົນນີ້ກໍຄືທຳຂອງອີກຄົນໜຶ່ງນັ້ນແລ ບັນດາບຸກຄົນ ໘ ຄົນນັ້ນ ຍ້ອນເຫດໃດ ຄົນໜຶ່ງຈຶ່ງຊົ່ວ ຄົນໜຶ່ງຈຶ່ງດີ" ແທ້ຈິງການຖືປະມານຂອງຜູ້ຖືປະມານເຫຼົ່ານັ້ນ ເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກຕະຫຼອດການລະນານ

ບັນດາບຸກຄົນ ໘ ຄົນນັ້ນ ບຸກຄົນໃດເປັນຜູ້ຟຸ້ງຊ່ານ ແຕ່ຮູ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິເຊິ່ງເປັນທີ່ດັບຄວາມຟຸ້ງຊ່ານໄດ້ໝົດສິ້ນຕາມຄວາມເປັນຈິງ ບຸກຄົນນັ້ນ ເຮັດກິດດ້ວຍການຟັງ ເຮັດກິດດ້ວຍຄວາມເປັນພະຫູສູດ ແທງຕະຫຼອດດີດ້ວຍທິດຖິ ແລະໄດ້ວິມຸດຕິຕາມເວລາອັນຄວນ ບຸກຄົນນີ້ດີກວ່າ ແລະປະນີດກວ່າບຸກຄົນທີ່ກ່າວຂ້າງຕົ້ນນັ້ນ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນບຸກຄົນນີ້ຢັ່ງລົງສູ່ອະຣິຍະພູມ ໃຜນໍ ຈະເພິ່ງຮູ້ເຫດນັ້ນໄດ້ ນອກຈາກຕະຖາຄົດ ຍ້ອນເຫດນັ້ນແລ ທ່ານທັງຫຼາຍຢ່າໄດ້ເປັນຜູ້ມັກຖືປະມານໃນບຸກຄົນ ແລະຢ່າຖືປະມານໃນບຸກຄົນ ຍ້ອນບຸກຄົນຜູ້ຖືປະມານໃນບຸກຄົນຍ່ອມທຳລາຍຄຸນວິເສດຂອງຕົນ ສ່ວນເຮົາຫຼືຜູ້ຄືເຮົາເພິ່ງຖືປະມານໃນບຸກຄົນໄດ້

ໃນເລື້ອງຍານເປັນເຄື່ອງກຳນົດຮູ້ອິນຊີແກ່ກ້າແລະອິນຊີອ່ອນຂອງບຸກຄົນ ໃຜກັນນໍຄືມິຄະສາລາອຸປາສິກາຜູ້ຈ້ຳ ບໍ່ສະຫຼາດ ບໍ່ຫຼັກແຫຼມ ມີປັນຍາທຶບ ແລະ ໃຜກັນນໍຄືພຣະສຳມາສຳພຸດທະເຈົ້າຜູ້ມີວິໄສທີ່ບໍ່ມີອັນໃດຂັດຂວາງໄດ້

ອານົນ ບຸກຄົນ ໑໐ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

ບຸຣຸດຊື່ວ່າປຸຣານະເປັນຜູ້ປະກອບດ້ວຍສິນເຊັ່ນໃດ ບຸຣຸດຊື່ວ່າອິສິທັດຕະກໍເປັນຜູ້ປະກອບດ້ວຍສິນເຊັ່ນນັ້ນ ບຸຣຸດຊື່ວ່າປຸຣານະຈະໄດ້ຮູ້ແມ່ນຄະຕິຂອງບຸຣຸດຊື່ວ່າອິສິທັດຕະໃນໂລກນີ້ກໍເປັນໄປບໍ່ໄດ້ ບຸຣຸດຊື່ວ່າອິສິທັດຕະເປັນຜູ້ປະກອບດ້ວຍປັນຍາເຊັ່ນໃດ ບຸຣຸດຊື່ວ່າປຸຣານະກໍເປັນຜູ້

ປະກອບດ້ວຍປັນຍາເຊັ່ນນັ້ນ ບຸຣຸດຊື່ວ່າອິສິທັດຕະຈະໄດ້ຮູ້ແມ່ນຄະຕິຂອງບຸຣຸດຊື່ວ່າປຸຣານະໃນໂລກນີ້ກໍເປັນໄປບໍ່ໄດ້

ອານົນ ບຸກຄົນທັງ ໔ ນີ້ແລ ເປັນຜູ້ຕໍ່າກວ່າກັນດ້ວຍອົງຄຸນຄົນລະຢ່າງ ແນວນີ້ແລ

**ມິຄະສາລາສູດທີ ໕ ຈົບ**

## ໖. ຕະໂຍທໍາມະສູດ

## ວ່າດ້ວຍທໍາ ໓ ປະການ

[໗໖] ພິກຂຸທັງຫຼາຍ ທໍາ ໓ ປະການນີ້ ບໍ່ເພິ່ງມີຜາກົດຢູ່ໃນໂລກ ຕະຖາຄົດ ອະຣະຫັນຕະສໍາມາສໍາພຸດທະເຈົ້າບໍ່ເພິ່ງອຸບັດຂຶ້ນໃນໂລກ ທໍາວິໄນທີ່ຕະຖາຄົດປະກາດໄວ້ກໍບໍ່ເພິ່ງຮຸ່ງເຮືອງໃນໂລກ

ທໍາ ໓ ປະການ ອັນໃດແດ່ ຄື

໑. ຊາດ (ຄວາມເກີດ)
໒. ຊະຣາ (ຄວາມແກ່)
໓. ມໍລະນະ (ຄວາມຕາຍ)

ທໍາ ໓ ປະການນີ້ແລ ບໍ່ເພິ່ງມີຜາກົດຢູ່ໃນໂລກ ຕະຖາຄົດອະຣະຫັນຕະສໍາມາສໍາພຸດທະເຈົ້າກໍບໍ່ເພິ່ງອຸບັດຂຶ້ນໃນໂລກ ທໍາວິໄນທີ່ຕະຖາຄົດປະກາດໄວ້ກໍບໍ່ເພິ່ງຮຸ່ງເຮືອງໃນໂລກ

ຍ້ອນທໍາ ໓ ປະການນີ້ຍັງມີຜາກົດຢູ່ໃນໂລກ ສັນນັ້ນ ຕະຖາຄົດອະຣະຫັນຕະສໍາມາສໍາພຸດທະເຈົ້າຈຶ່ງອຸບັດຂຶ້ນໃນໂລກ ທໍາວິໄນທີ່ຕະຖາຄົດປະກາດໄວ້ຈຶ່ງຮຸ່ງເຮືອງໃນໂລກ

໑. ບຸກຄົນຍັງລະທໍາ ໓ ປະການນີ້ບໍ່ໄດ້ ກໍບໍ່ອາດລະຊາດ ຊະຣາ ແລະມໍລະນະໄດ້

ທໍາ ໓ ປະການ ອັນໃດແດ່ ຄື

(໑) ຣາຄະ (ຄວາມກໍາໜັດ)
(໒) ໂທສະ (ຄວາມຄິດປະທຸດສະຮ້າຍ)
(໓) ໂມຫະ (ຄວາມຫຼົງ)

ພິກຂຸທັງຫຼາຍ ບຸກຄົນຍັງລະທຳ ໓ ປະການນີ້ແລບໍ່ໄດ້ ກໍບໍ່ອາດລະຊາດ ຊະຣາ ແລະ ມໍລະນະໄດ້

໔. ບຸກຄົນຍັງລະທຳ ໓ ປະການນີ້ບໍ່ໄດ້ ກໍບໍ່ອາດລະຣາຄະ ໂທສະແລະໂມຫະໄດ້

ທຳ ໓ ປະການ ອັນໃດແດ່ ຄື

(໑) ສັກກາຍະທິດຖິ (ຄວາມເຫັນວ່າເປັນໂຕຂອງຕົນ)
(໒) ວິຈິກິດສາ (ຄວາມລັງເລສົງໄສ)
(໓) ສີລັບພະຕະປະຣາມາດ (ຄວາມຖືໝັ້ນສິນພິດ)

ພິກຂຸທັງຫຼາຍ ບຸກຄົນຍັງລະທຳ ໓ ປະການນີ້ແລບໍ່ໄດ້ ກໍບໍ່ອາດລະຣາຄະ ໂທສະແລະ ໂມຫະໄດ້

໕. ບຸກຄົນຍັງລະທຳ ໓ ປະການນີ້ບໍ່ໄດ້ ກໍບໍ່ອາດລະສັກກາຍະທິດຖິ ວິຈິກິດສາ ແລະ ສີລັບພະຕະປະຣາມາດໄດ້

ທຳ ໓ ປະການ ອັນໃດແດ່ ຄື

(໑) ການມະນະສິການໂດຍບໍ່ແຍບຄາຍ
(໒) ການເດີນທາງຜິດ
(໓) ຄວາມຫົດຫູ່ແຫ່ງຈິດ

ພິກຂຸທັງຫຼາຍ ບຸກຄົນຍັງລະທຳ ໓ ປະການນີ້ແລບໍ່ໄດ້ ກໍບໍ່ອາດລະສັກກາຍະທິດຖິ ວິຈິກິດສາ ແລະສີລັບພະຕະປະຣາມາດໄດ້

໖. ບຸກຄົນຍັງລະທຳ ໓ ປະການນີ້ບໍ່ໄດ້ ກໍບໍ່ອາດລະການມະນະສິການໂດຍບໍ່ແຍບຄາຍ ການເດີນທາງຜິດ ແລະຄວາມຫົດຫູ່ແຫ່ງຈິດໄດ້

ທຳ ໓ ປະການ ອັນໃດແດ່ ຄື

(໑) ຄວາມຫຼົງລືມສະຕິ
(໒) ຄວາມບໍ່ມີສຳປະຊັນຍະ
(໓) ຄວາມຟຸ້ງຊ່ານແຫ່ງຈິດ

ພິກຂຸທັງຫຼາຍ ບຸກຄົນຍັງລະທຳ ໓ ປະການນີ້ແລບໍ່ໄດ້ ກໍບໍ່ອາດລະການມະນະສິການ ໂດຍບໍ່ແຍບຄາຍ ການເດີນທາງຜິດ ແລະຄວາມຫົດຫູ່ແຫ່ງຈິດໄດ້

໕. ບຸກຄົນຍັງລະທຳ ໓ ປະການນີ້ບໍ່ໄດ້ ກໍບໍ່ອາດລະຄວາມຫຼົງລືມສະຕິ ຄວາມບໍ່ມີສຳປະຊັນຍະ ແລະຄວາມຟຸ້ງຊ່ານແຫ່ງຈິດໄດ້

ທຳ ໓ ປະການ ອັນໃດແດ່ ຄື

(໑) ຄວາມເປັນຜູ້ບໍ່ຕ້ອງການຈະເຫັນພຣະອະຣິຍະ
(໒) ຄວາມເປັນຜູ້ບໍ່ຕ້ອງການຈະຟັງທຳຂອງພຣະອະຣິຍະ
(໓) ຄວາມເປັນຜູ້ມີຈິດຄິດແຂ່ງດີ

ພິກຂຸທັງຫຼາຍ ບຸກຄົນຍັງລະທຳ ໓ ປະການນີ້ແລບໍ່ໄດ້ ກໍບໍ່ອາດລະຄວາມຫຼົງລືມສະຕິ ຄວາມບໍ່ມີສຳປະຊັນຍະ ແລະຄວາມຟຸ້ງຊ່ານແຫ່ງຈິດໄດ້

໖. ບຸກຄົນຍັງລະທຳ ໓ ປະການນີ້ບໍ່ໄດ້ ກໍບໍ່ອາດລະຄວາມເປັນຜູ້ບໍ່ຕ້ອງການຈະເຫັນພຣະອະຣິຍະ ຄວາມເປັນຜູ້ບໍ່ຕ້ອງການຈະຟັງທຳຂອງພຣະອະຣິຍະ ແລະຄວາມເປັນຜູ້ມີຈິດຄິດແຂ່ງດີໄດ້

ທຳ ໓ ປະການ ອັນໃດແດ່ ຄື

(໑) ຄວາມຟຸ້ງຊ່ານ
(໒) ຄວາມບໍ່ສັງລວມ
(໓) ຄວາມເປັນຜູ້ທຸສີນ

ພິກຂຸທັງຫຼາຍ ບຸກຄົນຍັງລະທຳ ໓ ປະການນີ້ແລບໍ່ໄດ້ ກໍບໍ່ອາດລະຄວາມເປັນຜູ້ບໍ່ຕ້ອງການຈະເຫັນພຣະອະຣິຍະ ຄວາມເປັນຜູ້ບໍ່ຕ້ອງການຈະຟັງທຳຂອງພຣະອະຣິຍະ ແລະຄວາມເປັນຜູ້ມີຈິດຄິດແຂ່ງດີໄດ້

໗. ບຸກຄົນຍັງລະທຳ ໓ ປະການນີ້ບໍ່ໄດ້ ກໍບໍ່ອາດລະຄວາມຟຸ້ງຊ່ານ ຄວາມບໍ່ສັງລວມ ແລະຄວາມເປັນຜູ້ທຸສີນໄດ້

ທຳ ໓ ປະການ ອັນໃດແດ່ ຄື

(໑) ຄວາມບໍ່ມີສັດທາ
(໒) ຄວາມເປັນຜູ້ບໍ່ມີໃຈເອື້ອເຟື້ອ
(໓) ຄວາມຂີ້ຄ້ານ

ພິກຂຸທັງຫຼາຍ ບຸກຄົນຍັງລະທຳ ໓ ປະການນີ້ແລບໍ່ໄດ້ ກໍບໍ່ອາດລະຄວາມຟຸ້ງຊ່ານ ຄວາມບໍ່ສັງລວມ ແລະຄວາມເປັນຜູ້ທຸສີນໄດ້

໗. ບຸກຄົນຍັງລະທຳ ໓ ປະການນີ້ບໍ່ໄດ້ ກໍບໍ່ອາດລະຄວາມບໍ່ມີສັດທາ ຄວາມເປັນຜູ້ບໍ່ມີໃຈເອື້ອເຟື້ອ ແລະຄວາມຂີ້ຄ້ານໄດ້

ທຳ ໓ ປະການ ອັນໃດແດ່ ຄື

(໑) ຄວາມບໍ່ເອື້ອເຟື້ອ
(໒) ຄວາມເປັນຜູ້ວ່າຍາກ
(໓) ຄວາມເປັນຜູ້ມີປາປະມິດ

ພິກຂຸທັງຫຼາຍ ບຸກຄົນຍັງລະທຳ ໓ ປະການນີ້ແລບໍ່ໄດ້ ກໍບໍ່ອາດລະຄວາມບໍ່ມີສັດທາ ຄວາມເປັນຜູ້ບໍ່ມີໃຈເອື້ອເຟື້ອ ແລະຄວາມຂີ້ຄ້ານໄດ້

໙. ບຸກຄົນຍັງລະທຳ ໓ ປະການນີ້ບໍ່ໄດ້ ກໍບໍ່ອາດລະຄວາມບໍ່ເອື້ອເຟື້ອ ຄວາມເປັນຜູ້ວ່າຍາກ ແລະຄວາມເປັນຜູ້ມີປາປະມິດໄດ້

ທຳ ໓ ປະການ ອັນໃດແດ່ ຄື

(໑) ຄວາມບໍ່ມີຫິຣິ
(໒) ຄວາມບໍ່ມີໂອດຕັບປະ
(໓) ຄວາມຜະໝາດ

ພິກຂຸທັງຫຼາຍ ບຸກຄົນຍັງລະທຳ ໓ ປະການນີ້ແລບໍ່ໄດ້ ກໍບໍ່ອາດລະຄວາມບໍ່ເອື້ອເຟື້ອ ຄວາມເປັນຜູ້ວ່າຍາກ ແລະຄວາມເປັນຜູ້ມີປາປະມິດໄດ້

໑໐. ບຸກຄົນນີ້ເປັນຜູ້ບໍ່ມີຫິຣິ ບໍ່ມີໂອດຕັບປະ ເປັນຜູ້ຜະໝາດ ບຸກຄົນນັ້ນ ເມື່ອຜະໝາດ ຈຶ່ງບໍ່ອາດລະຄວາມບໍ່ເອື້ອເຟື້ອ ຄວາມເປັນຜູ້ວ່າຍາກ ແລະຄວາມເປັນຜູ້ມີປາປະມິດໄດ້ ເມື່ອມີປາປະມິດ ຈຶ່ງບໍ່ອາດລະຄວາມບໍ່ມີສັດທາ ຄວາມເປັນຜູ້ບໍ່ມີໃຈເອື້ອເຟື້ອ ແລະຄວາມຂີ້ຄ້ານໄດ້ ເມື່ອຂີ້ຄ້ານ ຈຶ່ງບໍ່ອາດລະຄວາມຟຸ້ງຊ່ານ ຄວາມບໍ່ສັງລວມ ແລະຄວາມເປັນຜູ້ທຸສິນໄດ້ ເມື່ອທຸສິນ ຈຶ່ງບໍ່ອາດລະຄວາມເປັນຜູ້ບໍ່ຕ້ອງການຈະເຫັນພຣະອະຣິຍະ ຄວາມເປັນຜູ້ບໍ່ຕ້ອງການຈະຟັງທຳຂອງພຣະອະຣິຍະ ແລະຄວາມເປັນຜູ້ມີຈິດຄິດແຂ່ງດີໄດ້ ເມື່ອມີຈິດຄິດແຂ່ງດີ ຈຶ່ງບໍ່ອາດລະຄວາມຫຼົງລືມສະຕິ ຄວາມບໍ່ມີສຳປະຊັນຍະ ແລະຄວາມຟຸ້ງຊ່ານ ແຫ່ງຈິດໄດ້ ເມື່ອມີຈິດຟຸ້ງຊ່ານ ຈຶ່ງບໍ່ອາດລະການມະນະສິການໂດຍບໍ່ແຍບຄາຍ ການເດີນທາງຜິດ ແລະຄວາມທໍ້ຖອຍແຫ່ງຈິດໄດ້ ເມື່ອມີຈິດທໍ້ຖອຍ ຈຶ່ງບໍ່ອາດລະສັກກາຍະທິດຖິ ວິຈິກິດສາ ແລະ ສີລັບພະຕະປະຣາມາດໄດ້ ເມື່ອມີວິຈິກິດສາ ຈຶ່ງບໍ່ອາດລະຣາຄະ ໂທສະ ແລະໂມຫະໄດ້ ເມື່ອລະ ຣາຄະ ໂທສະ ແລະໂມຫະຍັງບໍ່ໄດ້ ຈຶ່ງບໍ່ອາດລະຊາດ ຊະຣາ ແລະມໍລະນະໄດ້

໑. ບຸກຄົນລະທຳ ໓ ປະການນີ້ໄດ້ແລ້ວ ຈຶ່ງອາດລະຊາດ ຊະຣາ ແລະມໍລະນະໄດ້

ທຳ ໓ ປະການ ອັນໃດແດ່ ຄື

(໑) ຣາຄະ
(໔) ໂທສະ
(໓) ໂມຫະ

ພິກຂຸທັງຫຼາຍ ບຸກຄົນລະທຳ ໓ ປະການນີ້ແລໄດ້ແລ້ວ ຈຶ່ງອາດລະຊາດ ຊະຣາ ແລະມໍລະນະໄດ້

໔. ບຸກຄົນລະທຳ ໓ ປະການນີ້ໄດ້ແລ້ວ ຈຶ່ງອາດລະຣາຄະ ໂທສະ ແລະໂມຫະໄດ້

ທຳ ໓ ປະການ ອັນໃດແດ່ ຄື

(໑) ສັກກາຍະທິດຖິ
(໔) ວິຈິກິດສາ
(໓) ສີລັບພະຕະປະຣາມາດ

ພິກຂຸທັງຫຼາຍ ບຸກຄົນລະທຳ ໓ ປະການນີ້ແລໄດ້ແລ້ວ ຈຶ່ງອາດລະຣາຄະ ໂທສະ ແລະໂມຫະໄດ້

໓. ບຸກຄົນລະທຳ ໓ ປະການນີ້ໄດ້ແລ້ວ ຈຶ່ງອາດລະສັກກາຍະທິດຖິ ວິຈິກິດສາ ແລະ ສີລັບພະຕະປະຣາມາດໄດ້

ທຳ ໓ ປະການ ອັນໃດແດ່ ຄື

(໑) ການມະນະສິການໂດຍບໍ່ແຍບຄາຍ
(໔)ການເດີນທາງຜິດ
(໓) ຄວາມຫົດຫູ່ແຫ່ງຈິດ

ພິກຂຸທັງຫຼາຍ ບຸກຄົນລະທຳ ໓ ປະການນີ້ແລໄດ້ແລ້ວ ຈຶ່ງອາດລະສັກກາຍະທິດຖິ ວິຈິກິດສາ ແລະສີລັບພະຕະປະຣາມາດໄດ້

໔. ບຸກຄົນລະທຳ ໓ ປະການນີ້ໄດ້ແລ້ວ ຈຶ່ງອາດລະການມະນະສິການໂດຍບໍ່ແຍບຄາຍ ການເດີນທາງຜິດ ແລະຄວາມຫົດຫູ່ແຫ່ງຈິດໄດ້

ທຳ ໓ ປະການ ອັນໃດແດ່ ຄື

(໑) ຄວາມຫຼົງລືມສະຕິ
(໒) ຄວາມບໍ່ມີສຳປະຊັນຍະ
(໓) ຄວາມຟຸ້ງຊ່ານແຫ່ງຈິດ

ພິກຂຸທັງຫຼາຍ ບຸກຄົນລະທຳ ໓ ປະການນີ້ແລໄດ້ແລ້ວ ຈຶ່ງອາດລະການມະນະສິການໂດຍບໍ່ແຍບຄາຍ ການເດີນທາງຜິດ ແລະຄວາມທໍ້ຖອຍແຫ່ງຈິດໄດ້

໕. ບຸກຄົນລະທຳ ໓ ປະການນີ້ໄດ້ແລ້ວ ຈຶ່ງອາດລະຄວາມຫຼົງລືມສະຕິ ຄວາມບໍ່ມີສຳປະຊັນຍະ ແລະຄວາມຟຸ້ງຊ່ານແຫ່ງຈິດໄດ້

ທຳ ໓ ປະການ ອັນໃດແດ່ ຄື

(໑) ຄວາມເປັນຜູ້ບໍ່ຕ້ອງການຈະເຫັນພຣະອະຣິຍະ
(໒) ຄວາມເປັນຜູ້ບໍ່ຕ້ອງການຈະຟັງທຳຂອງພຣະອະຣິຍະ
(໓) ຄວາມເປັນຜູ້ມີຈິດຄິດແຂ່ງດີ

ພິກຂຸທັງຫຼາຍ ບຸກຄົນລະທຳ ໓ ປະການນີ້ແລໄດ້ແລ້ວ ຈຶ່ງອາດລະຄວາມຫຼົງລືມສະຕິ ຄວາມບໍ່ມີສຳປະຊັນຍະ ແລະຄວາມຟຸ້ງຊ່ານແຫ່ງຈິດໄດ້

໖. ບຸກຄົນລະທຳ ໓ ປະການນີ້ໄດ້ແລ້ວ ຈຶ່ງອາດລະຄວາມເປັນຜູ້ບໍ່ຕ້ອງການຈະເຫັນພຣະອະຣິຍະ ຄວາມເປັນຜູ້ບໍ່ຕ້ອງການຈະຟັງທຳຂອງພຣະອະຣິຍະ ແລະຄວາມເປັນຜູ້ມີຈິດຄິດແຂ່ງດີໄດ້

ທຳ ໓ ປະການ ອັນໃດແດ່ ຄື

(໑) ຄວາມຟຸ້ງຊ່ານ
(໒) ຄວາມບໍ່ສັງລວມ
(໓) ຄວາມເປັນຜູ້ທຸສີນ

ພິກຂຸທັງຫຼາຍ ບຸກຄົນລະທຳ ໓ ປະການນີ້ແລໄດ້ແລ້ວ ຈຶ່ງອາດລະຄວາມເປັນຜູ້ບໍ່ຕ້ອງການຈະເຫັນພຣະອະຣິຍະ ຄວາມເປັນຜູ້ບໍ່ຕ້ອງການຈະຟັງທຳຂອງພຣະອະຣິຍະ ແລະຄວາມເປັນຜູ້ມີຈິດຄິດແຂ່ງດີໄດ້

ໆ. ບຸກຄົນລະທຳ ໓ ປະການນີ້ໄດ້ແລ້ວ ຈຶ່ງອາດລະຄວາມຟຸ້ງຊ່ານ ຄວາມບໍ່ສັງລວມ ແລະຄວາມເປັນຜູ້ທຸສິນໄດ້

ທຳ ໓ ປະການ ອັນໃດແດ່ ຄື

(໑) ຄວາມບໍ່ມີສັດທາ
(໒) ຄວາມເປັນຜູ້ບໍ່ມີໃຈເອື້ອເຟື້ອ
(໓) ຄວາມຂີ້ຄ້ານ

ພິກຂຸທັງຫຼາຍ ບຸກຄົນລະທຳ ໓ ປະການນີ້ແລໄດ້ແລ້ວ ຈຶ່ງອາດລະຄວາມຟຸ້ງຊ່ານ ຄວາມບໍ່ສັງລວມ ແລະຄວາມເປັນຜູ້ທຸສິນໄດ້

ໆ. ບຸກຄົນລະທຳ ໓ ປະການນີ້ໄດ້ແລ້ວ ຈຶ່ງອາດລະຄວາມບໍ່ມີສັດທາ ຄວາມເປັນຜູ້ມີໃຈບໍ່ເອື້ອເຟື້ອ ແລະຄວາມຂີ້ຄ້ານໄດ້

ທຳ ໓ ປະການ ອັນໃດແດ່ ຄື

(໑) ຄວາມບໍ່ເອື້ອເຟື້ອ
(໒) ຄວາມເປັນຜູ້ວ່າຍາກ
(໓) ຄວາມເປັນຜູ້ມີປາປະມິດ

ພິກຂຸທັງຫຼາຍ ບຸກຄົນລະທຳ ໓ ປະການນີ້ແລໄດ້ແລ້ວ ຈຶ່ງອາດລະຄວາມເປັນຜູ້ບໍ່ມີສັດທາ ຄວາມເປັນຜູ້ບໍ່ມີໃຈເອື້ອເຟື້ອ ແລະຄວາມຂີ້ຄ້ານໄດ້

໙. ບຸກຄົນລະທຳ ໓ ປະການນີ້ໄດ້ແລ້ວ ຈຶ່ງອາດລະຄວາມເປັນຜູ້ບໍ່ເອື້ອເຟື້ອ ຄວາມເປັນຜູ້ວ່າຍາກ ແລະຄວາມເປັນຜູ້ມີປາປະມິດໄດ້

ທຳ ໓ ປະການ ອັນໃດແດ່ ຄື

(໑) ຄວາມເປັນຜູ້ບໍ່ມີຫິຣິ
(໒) ຄວາມເປັນຜູ້ບໍ່ມີໂອດຕັບປະ
(໓) ຄວາມຜະໝາດ

ພິກຂຸທັງຫຼາຍ ບຸກຄົນລະທຳ ໓ ປະການນີ້ແລໄດ້ແລ້ວ ຈຶ່ງອາດລະຄວາມເປັນຜູ້ບໍ່ເອື້ອເຟື້ອ ຄວາມເປັນຜູ້ວ່າຍາກ ແລະຄວາມເປັນຜູ້ມີປາປະມິດໄດ້ (໙)

໑໐. ບຸກຄົນນີ້ເປັນຜູ້ມີຫິຣິ ເປັນຜູ້ມີໂອດຕັບປະ ເປັນຜູ້ບໍ່ຜະໝາດ ບຸກຄົນນັ້ນເມື່ອບໍ່ຜະໝາດ ຈຶ່ງອາດລະຄວາມເປັນຜູ້ບໍ່ເອື້ອເຟື້ອ ຄວາມເປັນຜູ້ວ່າຍາກ ແລະຄວາມເປັນຜູ້ມີປາປະມິດໄດ້ ເມື່ອມີກັນລະຍານະມິດ ຈຶ່ງອາດລະຄວາມເປັນຜູ້ບໍ່ມີສັດທາ ຄວາມເປັນຜູ້ບໍ່ມີໃຈເອື້ອເຟື້ອ ແລະຄວາມຂີ້ຄ້ານໄດ້ ເມື່ອຜາຣົບຄວາມພຽນ ຈຶ່ງອາດລະຄວາມຟຸ້ງຊ່ານ ຄວາມບໍ່ສັງລວມ ແລະຄວາມເປັນຜູ້ທຸສິນໄດ້ ເມື່ອມີສິນ ຈຶ່ງອາດລະຄວາມເປັນຜູ້ບໍ່ຕ້ອງການຈະເຫັນພຣະອະຣິຍະ ຄວາມເປັນຜູ້ບໍ່ຕ້ອງການຈະຟັງທຳຂອງພຣະອະຣິຍະ ແລະຄວາມເປັນຜູ້ມີຈິດຄິດແຂ່ງດີໄດ້ ເມື່ອມີຈິດບໍ່ຄິດແຂ່ງດີ ຈຶ່ງອາດລະຄວາມຫຼົງລືມສະຕິ ຄວາມບໍ່ມີສຳປະຊັນຍະ ຄວາມຟຸ້ງຊ່ານແຫ່ງຈິດໄດ້ ເມື່ອມີຈິດບໍ່ຟຸ້ງຊ່ານ ຈຶ່ງອາດລະການມະນະສິການໂດຍບໍ່ແຍບຄາຍ ການເດີນທາງຜິດ ແລະຄວາມຫົດຫູ່ແຫ່ງຈິດໄດ້ ເມື່ອມີຈິດບໍ່ຫົດຫູ່ ຈຶ່ງອາດລະສັກກາຍະທິດຖິ ວິຈິກິດສາ ແລະສີລັບພະຕະປະຣາມາດໄດ້ ເມື່ອບໍ່ມີວິຈິກິດສາ ຈຶ່ງອາດລະຣາຄະ ໂທສະ ແລະ ໂມຫະໄດ້ ເມື່ອລະຣາຄະ ໂທສະ ແລະໂມຫະ ໄດ້ແລ້ວ ຈຶ່ງອາດລະຊາດ ຊະຣາ ແລະມໍລະນະໄດ້

**ຕະໂຍທຳມະສູດທີ ໖ ຈົບ**

## ໗. ກາກະສູດ

## ວ່າດ້ວຍອະສັດທຳຂອງກາ

[໗໗] ພິກຂຸທັງຫຼາຍ ກາປະກອບດ້ວຍອະສັດທຳ ໑໐ ປະການ

ອະສັດທຳ ໑໐ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ມັກກຳຈັດ | ໒. ຄະນອງ |
| ໓. ທະເຍີທະຍານ | ໔. ກິນຫຼາຍ |
| ໕. ຫຍາບຊ້າ | ໖. ບໍ່ມີກະລຸນາ |
| ໗. ອ່ອນແອ | ໘. ມັກຮ້ອງ |
| ໙. ຫຼົງລືມສະຕິ | ໑໐. ສັ່ງສົມ |

ກາປະກອບດ້ວຍອະສັດທຳ ໑໐ ປະການນີ້ແລ ສັນໃດ

ພິກຂຸຊົ່ວປະກອບດ້ວຍອະສັດທຳ ໑໐ ປະການ ກໍຄືກັນສັນນັ້ນ

ອະສັດທຳ ໑໐ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ມັກກຳຈັດ[1] | ໒. ຄະນອງ |

໓. ທະເຍີທະຍານ ໔. ສັນຫຼາຍ
໕. ຫຍາບຊ້າ ໖. ບໍ່ມີກະລຸນາ
໗. ອ່ອນແອ ໘. ມັກຮຽກຮ້ອງ
໙. ຫຼົງລືມສະຕິ ໑໐. ສັ່ງສົມ

ພິກຂຸທັງຫຼາຍ ພິກຂຸຊົ່ວປະກອບດ້ວຍອະສັດທຳ ໑໐ ປະການນີ້ແລ

**ກາກະສູດທີ ໗ ຈົບ**

# ໘. ນິຄັນຖະສູດ

## ວ່າດ້ວຍອະສັດທຳຂອງພວກນິຄົນ

[໗໘] ພິກຂຸທັງຫຼາຍ ພວກນິຄົນປະກອບດ້ວຍອະສັດທຳ ໑໐ ປະການ

ອະສັດທຳ ໑໐ ປະການ ອັນໃດແດ່ ຄື

໑. ບໍ່ມີສັດທາ ໒. ທຸສີນ
໓. ບໍ່ມີຫິຣິ ໔. ບໍ່ມີໂອດຕັບປະ
໕. ບໍ່ພັກດີຕໍ່ສັດຕະບຸຣຸດ ໖. ຍົກຕົນຂົ່ມທ່ານ
໗. ສະລະຄືນຄວາມຢຶດໝັ້ນຖືໝັ້ນດ້ວຍທິດຖິຂອງຕົນໄດ້ຍາກ
໘. ເປັນຄົນລວງໂລກ ໙. ປາຖະໜາຊົ່ວ
໑໐. ເປັນມິດສາທິດຖິ

ພິກຂຸທັງຫຼາຍ ພວກນິຄົນປະກອບດ້ວຍອະສັດທຳ ໑໐ ປະການນີ້ແລ

**ນິຄັນຖະສູດທີ ໘ ຈົບ**

# ໙. ອາຄາຕະວັດຖຸສູດ

## ວ່າດ້ວຍອາຄາດວັດຖຸ

[໗໙] ພິກຂຸທັງຫຼາຍ ອາຄາດວັດຖຸ (ເຫດຜູກອາຄາດ) ໑໐ ປະການນີ້

ອາຄາດວັດຖຸ ໑໐ ປະການ ອັນໃດແດ່ ຄື

ບຸກຄົນຍ່ອມຜູກອາຄາດ ວ່າ

໑. ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດ[9]ແກ່ເຮົາ
໒. ຜູ້ນີ້ກຳລັງເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ
໓. ຜູ້ນີ້ຈັກເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ
໔. ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົາ
໕. ຜູ້ນີ້ກຳລັງເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົາ
໖. ຜູ້ນີ້ຈັກເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົາ
໗. ຜູ້ນີ້ໄດ້ເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົາ
໘. ຜູ້ນີ້ກຳລັງເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົາ
໙. ຜູ້ນີ້ຈັກເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົາ
໑໐. ໂກດໃນເຫດອັນບໍ່ຄວນ[9]

ພິກຂຸທັງຫຼາຍ ອາຄາດວັດຖຸ ໑໐ ປະການນີ້ແລ

**ອາຄາຕະວັດຖຸສູດທີ ໙ ຈົບ**

## ໑໐. ອາຄາຕະປະຕິວິນະຍະສູດ

## ວ່າດ້ວຍອຸບາຍກຳຈັດອາຄາດ

[໘໐] ພິກຂຸທັງຫຼາຍ ອຸບາຍເປັນເຄື່ອງກຳຈັດອາຄາດ ໑໐ ປະການນີ້

ອຸບາຍເປັນເຄື່ອງກຳຈັດອາຄາດ ໑໐ ປະການ ອັນໃດແດ່ ຄື

ບຸກຄົນຍ່ອມກຳຈັດອາຄາດວ່າ

໑. ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົານັ້ນ ຈະຫາໄດ້ໃນຜູ້ນີ້ແຕ່ບ່ອນໃດ
໒. ຜູ້ນີ້ກຳລັງເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົານັ້ນ ຈະຫາໄດ້ໃນຜູ້ນີ້ແຕ່ບ່ອນໃດ
໓. ຜູ້ນີ້ຈັກເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ເຮົານັ້ນ ຈະຫາໄດ້ໃນຜູ້ນີ້ແຕ່ບ່ອນໃດ

໔. ຜູ້ນີ້ໄດ້ເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົານັ້ນ ຈະຫາໄດ້ໃນຜູ້ນີ້ແຕ່ບ່ອນໃດ

໕. ຜູ້ນີ້ກຳລັງເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົານັ້ນ ຈະຫາໄດ້ໃນຜູ້ນີ້ແຕ່ບ່ອນໃດ

໖. ຜູ້ນີ້ຈັກເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົາ ການເຮັດສິ່ງທີ່ບໍ່ເປັນປະໂຫຍດແກ່ຄົນຜູ້ເປັນທີ່ຮັກທີ່ພໍໃຈຂອງເຮົານັ້ນ ຈະຫາໄດ້ໃນຜູ້ນີ້ແຕ່ບ່ອນໃດ

໗. ຜູ້ນີ້ໄດ້ເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົາ ການເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົານັ້ນ ຈະຫາໄດ້ໃນຜູ້ນີ້ແຕ່ບ່ອນໃດ

໘. ຜູ້ນີ້ກຳລັງເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົາ ການເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົານັ້ນ ຈະຫາໄດ້ໃນຜູ້ນີ້ແຕ່ບ່ອນໃດ

໙. ຜູ້ນີ້ຈັກເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົາ ການເຮັດສິ່ງທີ່ເປັນປະໂຫຍດແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ພໍໃຈຂອງເຮົານັ້ນ ຈະຫາໄດ້ໃນຜູ້ນີ້ແຕ່ບ່ອນໃດ

໑໐. ບໍ່ໂກດໃນເຫດອັນບໍ່ຄວນ

ພິກຂຸທັງຫຼາຍ ອຸບາຍເປັນເຄື່ອງກຳຈັດອາຄາດ ໑໐ ປະການນີ້ແລ

**ອາຄາດປະຕິວິນະຍະສູດທີ ໑໐ ຈົບ**

**ອາກັງຂະວັກທີ ໒ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອາກັງຂະສູດ
໒. ອິດຖະທຳມະສູດ
໓. ມິຄະສາລາສູດ
໔. ກາກະສູດ
໕. ອາຄາຕະວັດຖຸສູດ
໖. ກັນຕະກະສູດ
໗. ວັດຖິສູດ
໘. ຕະໂຍທຳມະສູດ
໙. ນິຄັນຖະສູດ
໑໐. ອາຄາຕະປະຕິວິນະຍະສູດ

# ໔. ເຖຣະວັກ

## ໝວດວ່າດ້ວຍພຣະເຖຣະ

## ໑. ວາຫຸນະສູດ

### ວ່າດ້ວຍພຣະວາຫຸນະ

[໗໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຝັ່ງສະລັກຄະຣາໂບກຂະຣະນີ ເຂດນະຄອນຈຳປາ ຄັ້ງນັ້ນແລ ທ່ານພຣະວາຫຸນະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ຈຶ່ງໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຕະຖາຄົດຊົງກຳຈັດ ປາສະຈາກ ລຸດພົ້ນຈາກທຳ ທໍ່ໃດນໍ ຈຶ່ງມີພຣະຫະໄທປາສະຈາກແດນ°ຢູ່ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ວາຫຸນະ ຕະຖາຄົດກຳຈັດ ປາສະຈາກ ລຸດພົ້ນຈາກທຳ ໑໐ ປະການ ຈຶ່ງມີໃຈປາສະຈາກແດນຢູ່

ທຳ ໑໐ ປະການ ອັນໃດແດ່ ຄື

໑. ຕະຖາຄົດກຳຈັດ ປາສະຈາກ ລຸດພົ້ນຈາກຣູບ ຈຶ່ງມີໃຈປາສະຈາກແດນຢູ່
໒. ຕະຖາຄົດກຳຈັດ ປາສະຈາກ ລຸດພົ້ນຈາກເວທະນາ ຯລຯ
໓. ຕະຖາຄົດກຳຈັດ ປາສະຈາກ ລຸດພົ້ນຈາກສັນຍາ ຯລຯ
໔. ຕະຖາຄົດກຳຈັດ ປາສະຈາກ ລຸດພົ້ນຈາກສັງຂານ ຯລຯ
໕. ຕະຖາຄົດກຳຈັດ ປາສະຈາກ ລຸດພົ້ນຈາກວິນຍານ ຯລຯ
໖. ຕະຖາຄົດກຳຈັດ ປາສະຈາກ ລຸດພົ້ນຈາກຊາດ ຯລຯ
໗. ຕະຖາຄົດກຳຈັດ ປາສະຈາກ ລຸດພົ້ນຈາກຊະຣາ ຯລຯ
໘. ຕະຖາຄົດກຳຈັດ ປາສະຈາກ ລຸດພົ້ນຈາກມໍລະນະ ຯລຯ
໙. ຕະຖາຄົດກຳຈັດ ປາສະຈາກ ລຸດພົ້ນຈາກທຸກ ຯລຯ
໑໐. ຕະຖາຄົດກຳຈັດ ປາສະຈາກ ລຸດພົ້ນຈາກກິເລດ ຯລຯ

ວາຫຸນະ ຕະຖາຄົດກຳຈັດ ປາສະຈາກ ລຸດພົ້ນຈາກທຳ ໑໐ ປະການນີ້ ຈຶ່ງມີໃຈປາສະຈາກແດນຢູ່ ປຽບຄືດອກບົວ ດອກບົວຫຼວງ ດອກປຸນທະຣິກທີ່ເກີດໃນນໍ້າ ຈະເລີນໃນນໍ້າ ຂຶ້ນພົ້ນຈາກນໍ້າ ບໍ່ຕິດຢູ່ກັບນໍ້າ ສັນນັ້ນ

**ວາຫຸນະສູດທີ ໑ ຈົບ**

# ໘. ອານັນທະສູດ

## ວ່າດ້ວຍພຣະອານົນ

[໗໘] ຄັ້ງນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດດັ່ງນີ້ ວ່າ

ອານົນ

໑. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ມີສັດທາ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້
໒. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ທຸສິນ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້
໓. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ມີສຸຕະໜ້ອຍ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້
໔. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ວ່າຍາກ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້
໕. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ມີປາປະມິດ (ມິດຊົ່ວ) ຈັກເຖິງຄວາມຈະເລີນງອກງາມໄພບູນ ໃນທຳວິໄນນີ້
໖. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ຂີ້ຄ້ານ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້
໗. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ຫຼົງລືມສະຕິ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້
໘. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ສັນໂດດ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້
໙. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ປາຖະໜາຊົ່ວ ຈັກເຖິງຄວາມຈະເລີນງອກງາມໄພບູນ ໃນທຳວິໄນນີ້
໑໐. ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ເປັນມິດສາທິດຖິ (ເຫັນຜິດ) ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້

ອານົນ ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ປະກອບດ້ວຍທຳ ໑໐ ປະການນີ້ແລ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້

ອານົນ

໑. ເປັນໄປໄດ້ທີ່ພິກຂຸຜູ້ມີສັດທາ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້
໒. ເປັນໄປໄດ້ທີ່ພິກຂຸຜູ້ມີສິນ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້
໓. ເປັນໄປໄດ້ທີ່ພິກຂຸຜູ້ເປັນພະຫູສູດ ຊົງສຸຕະ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້
໔. ເປັນໄປໄດ້ທີ່ພິກຂຸຜູ້ວ່າງ່າຍ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້
໕. ເປັນໄປໄດ້ທີ່ພິກຂຸຜູ້ມີກັນລະຍານະມິດ(ມິດດີ) ຈັກເຖິງຄວາມຈະເລີນງອກງາມ ໄພບູນໃນທຳວິໄນນີ້
໖. ເປັນໄປໄດ້ທີ່ພິກຂຸຜູ້ຜາຣົບຄວາມພຽນ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້
໗. ເປັນໄປໄດ້ທີ່ພິກຂຸຜູ້ມີສະຕິຕັ້ງໝັ້ນ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳ ວິໄນນີ້
໘. ເປັນໄປໄດ້ທີ່ພິກຂຸຜູ້ສັນໂດດ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້
໙. ເປັນໄປໄດ້ທີ່ພິກຂຸຜູ້ມັກໜ້ອຍ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້
໑໐. ເປັນໄປໄດ້ທີ່ພິກຂຸຜູ້ເປັນສຳມາທິດຖິ(ເຫັນຖືກ) ຈັກເຖິງຄວາມຈະເລີນງອກງາມ ໄພບູນໃນທຳວິໄນນີ້

ອານົນ ເປັນໄປໄດ້ທີ່ພິກຂຸຜູ້ປະກອບດ້ວຍທຳ ໑໐ ປະການນີ້ ຈັກເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້

**ອານັນທະສູດທີ ໘ ຈົບ**

## ໙. ປຸນນິຍະສູດ

### ວ່າດ້ວຍພຣະປຸນນິຍະ

[໘໙] ຄັ້ງນັ້ນ ທ່ານພຣະປຸນນິຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ພຣະທຳມະເທດສະໜາຂອງພຣະຕະຖາຄົດແຈ່ມແຈ້ງໃນບາງເວລາ ແຕ່ໃນບາງເວລາ ກັບບໍ່ແຈ່ມແຈ້ງ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ປຸນນິຍະ ພິກຂຸເປັນຜູ້ມີສັດທາ ແຕ່ບໍ່ເຂົ້າໄປຫາ ທຳມະເທດສະໜາຂອງຕະຖາຄົດຈຶ່ງບໍ່ແຈ່ມແຈ້ງ ແຕ່ເມື່ອໃດ ພິກຂຸມີສັດທາແລະເຂົ້າໄປຫາ ເມື່ອນັ້ນ ທຳມະເທດສະໜາຂອງຕະຖາຄົດຈຶ່ງແຈ່ມແຈ້ງ

ປຸນນິຍະ ພິກຂຸເປັນຜູ້ມີສັດທາແລະເຂົ້າໄປຫາ ແຕ່ບໍ່ເຂົ້າໄປນັ່ງໃກ້ ຯລຯ ເຂົ້າໄປນັ່ງໃກ້ແຕ່ບໍ່ສອບຖາມ ຯລຯ ສອບຖາມ ແຕ່ບໍ່ງ່ຽງໂສດຟັງທຳ ງ່ຽງໂສດຟັງທຳ ແຕ່ບໍ່ຊົງຈຳທຳໄວ້ ຯລຯ ຟັງແລ້ວຊົງຈຳທຳໄວ້ ແຕ່ບໍ່ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ ຯລຯ ພິຈາລະນາເນື້ອຄວາມແຫ່ງທຳທີ່ຊົງຈຳໄວ້ ແຕ່ບໍ່ຮູ້ອັດຖະ ບໍ່ຮູ້ທຳ ບໍ່ປະຕິບັດ ທຳສົມຄວນແກ່ທຳ ຮູ້ອັດຖະຮູ້ທຳ ປະຕິບັດທຳສົມຄວນແກ່ທຳແລ້ວ ແຕ່ບໍ່ມີວາຈາງາມ ບໍ່ເຈລະຈາຄຳເວົ້າມ່ວນປະກອບດ້ວຍວາຈາຊາວເມືອງທີ່ສະຫຼະສະຫຼວຍບໍ່ ຫຍາບຄາຍ ໃຫ້ຮູ້ຄວາມໝາຍໄດ້ ມີວາຈາງາມ ເຈຣະຈາຄຳເວົ້າມ່ວນປະກອບດ້ວຍວາຈາ ຊາວເມືອງທີ່ສະຫຼະສະຫຼວຍບໍ່ຫຍາບຄາຍ ໃຫ້ຮູ້ຄວາມໝາຍໄດ້ແຕ່ບໍ່ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ບໍ່ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ບໍ່ປຸກໃຈໃຫ້ອາດຫານແກ່ກ້າ ບໍ່ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສ ທຳມະເທດສະໜາຂອງຕະຖາຄົດຈຶ່ງບໍ່ແຈ່ມແຈ້ງ

ປຸນນິຍະ ແຕ່ເມື່ອໃດ ພິກຂຸເປັນຜູ້ມີສັດທາ ໑ ເຂົ້າໄປຫາ ໑ ເຂົ້າໄປນັ່ງໃກ້ ໑ ສອບຖາມ ໑ ງ່ຽງໂສດຟັງທຳ ໑ ຟັງແລ້ວຊົງຈຳທຳໄວ້ ໑ ພິຈາລະນາເນື້ອຄວາມ ແຫ່ງທຳທີ່ຊົງຈຳໄວ້ ໑ ເປັນຜູ້ຮູ້ອັດຖະຮູ້ທຳ ປະຕິບັດທຳສົມຄວນແກ່ທຳ ໑ ມີວາຈາງາມ ເຈຣະຈາຄຳເວົ້າມ່ວນປະກອບດ້ວຍວາຈາຊາວເມືອງທີ່ສະຫຼະສະຫຼວຍບໍ່ຫຍາບຄາຍ ໃຫ້ຮູ້ຄວາມໝາຍໄດ້ ໑ ຊີ້ແຈ່ງໃຫ້ເພື່ອນພົມມະຈາຣີເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສ ໑ ເມື່ອນັ້ນ ທຳມະເທດສະໜາ ຂອງຕະຖາຄົດຈຶ່ງແຈ່ມແຈ້ງ

ປຸນນິຍະ ທຳມະເທດສະໜາຂອງຕະຖາຄົດປະກອບດ້ວຍທຳ ໑໐ ປະການນີ້ແລ ຈຶ່ງແຈ່ມແຈ້ງໂດຍແທ້

**ປຸນນິຍະສູດທີ ໓ ຈົບ**

## ໔. ພະຍາກະຣະນະສູດ

## ວ່າດ້ວຍການພະຍາກອນອະຣະຫັດຕະຜົນ

[໗໔] ໃນບ່ອນນັ້ນແລ ທ່ານພຣະມະຫາໂມກຄັນລານະໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າພິກຂຸຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະມະຫາໂມກຄັນລານະຈຶ່ງໄດ້ກ່າວເລື້ອງນີ້ວ່າ

ຜູ້ມີອາຍຸທັງຫຼາຍ ພິກຂຸໃນພຣະທຳວິໄນນີ້ ຍ່ອມພະຍາກອນອະຣະຫັດຕະຜົນ "ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດໆສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ໔"ພຣະຕະຖາຄົດເຈົ້າຫຼືສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດ ໃນຈິດຂອງຜູ້ອື່ນ ສະຫຼາດໃນການກຳນົດຮູ້ຈິດຂອງຜູ້ອື່ນ ຍ່ອມຊັກຖາມ ສອບຖາມ ໄລ່ລຽງພິກຂຸນັ້ນ ພິກຂຸນັ້ນຜູ້ຖືກພຣະຕະຖາຄົດເຈົ້າຫຼືສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກຳນົດຮູ້ຈິດຂອງຜູ້ອື່ນ ຊັກຖາມ ສອບຖາມ ໄລ່ລຽງຢູ່ ຍ່ອມເຖິງຄວາມເປັນຄົນເປົ່າ ຄວາມບໍ່ມີຄຸນ ຄວາມບໍ່ຈະເລີນ ຄວາມພິນາດ ທັງຄວາມບໍ່ຈະເລີນແລະຄວາມພິນາດ

ພຣະຕະຖາຄົດເຈົ້າຫຼືສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກຳນົດຮູ້ຈິດຂອງຜູ້ອື່ນ ກຳນົດຮູ້ໃຈດ້ວຍໃຈແລ້ວ ໃສ່ໃຈເຖິງພິກຂຸນັ້ນແນວນີ້ວ່າ "ຍ້ອນເຫດໃດນໍ ທ່ານຜູ້ນີ້ຈຶ່ງພະຍາກອນອະຣະຫັດຕະຜົນ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ພຣະຕະຖາຄົດເຈົ້າຫຼືສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກຳນົດຮູ້ຈິດຂອງຜູ້ອື່ນ ກຳນົດຮູ້ໃຈດ້ວຍໃຈແລ້ວ ຍ່ອມຮູ້ແຈ້ງເຊິ່ງພິກຂຸນັ້ນແນວນີ້ ວ່າ

໑. "ທ່ານຜູ້ນີ້ເປັນຜູ້ມັກໂກດ ມີໃຈຖືກຄວາມໂກດກຸ້ມລຸມຢູ່ສ່ວນຫຼາຍ" ກໍການຖືກຄວາມໂກດກຸ້ມລຸມນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໒. "ທ່ານຜູ້ນີ້ເປັນຜູ້ມັກຜູກໂກດ ມີໃຈຖືກຄວາມຜູກໂກດກຸ້ມລຸມຢູ່ສ່ວນຫຼາຍ" ກໍການຖືກຄວາມຜູກໂກດກຸ້ມລຸມນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໓. "ທ່ານຜູ້ນີ້ເປັນຜູ້ມັກລົບຫຼູ່ ມີໃຈຖືກຄວາມລົບຫຼູ່ກຸ້ມລຸມຢູ່ສ່ວນຫຼາຍ" ກໍການຖືກຄວາມລົບຫຼູ່ກຸ້ມລຸມນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໔. "ທ່ານຜູ້ນີ້ເປັນຜູ້ມັກຕີສະເໝີ ມີໃຈຖືກຄວາມຕີສະເໝີກຸ້ມລຸມຢູ່ສ່ວນຫຼາຍ" ກໍການຖືກຄວາມຕີສະເໝີກຸ້ມລຸມນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໕. "ທ່ານຜູ້ນີ້ເປັນຜູ້ມີຄວາມຣິດສະຫຍາ ມີໃຈຖືກຄວາມຣິດສະຫຍາກຸ້ມລຸມຢູ່ສ່ວນຫຼາຍ" ກໍການຖືກຄວາມຣິດສະຫຍາກຸ້ມລຸມນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໖. "ທ່ານຜູ້ນີ້ເປັນຜູ້ມັກຂີ້ຖີ່ ມີໃຈຖືກຄວາມຂີ້ຖີ່ກຸ້ມລຸມຢູ່ສ່ວນຫຼາຍ" ກໍການຖືກຄວາມຂີ້ຖີ່ກຸ້ມລຸມນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໗. "ທ່ານຜູ້ນີ້ເປັນຜູ້ມັກໂອ້ອວດ ມີໃຈຖືກຄວາມໂອ້ອວດກຸ້ມລຸມຢູ່ສ່ວນຫຼາຍ" ກໍການຖືກຄວາມໂອ້ອວດກຸ້ມລຸມນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໘. "ທ່ານຜູ້ນີ້ເປັນຜູ້ມີມາຍາ ມີໃຈຖືກມາຍາກຸ້ມລຸມຢູ່ສ່ວນຫຼາຍ" ກໍການຖືກມາຍາກຸ້ມລຸມນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໙. "ທ່ານຜູ້ນີ້ເປັນຜູ້ມີຄວາມປາຖະໜາຊົ່ວ ມີໃຈຖືກຄວາມປາຖະໜາຊົ່ວກຸ້ມລຸມຢູ່ສ່ວນຫຼາຍ" ກໍການຖືກຄວາມປາຖະໜາຊົ່ວກຸ້ມລຸມນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໑໐. "ທ່ານຜູ້ນີ້ເປັນຜູ້ຫຼົງລືມສະຕິ ເຖິງຄວາມຢຸດຈິ້ງສາໃນລະຫວ່າງທີ່ຈະບັນລຸຄຸນວິເສດຊັ້ນສູງ ຍ້ອນໄດ້ບັນລຸຄຸນວິເສດຊັ້ນຕ່ຳ" ກໍການເຖິງຄວາມຢຸດຈິ້ງສາໃນລະຫວ່າງນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

ຜູ້ມີອາຍຸທັງຫຼາຍ ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນແລ ລະທຳ ໑໐ ປະການນີ້ບໍ່ໄດ້ແລ້ວ ຈັກເຖິງຄວາມຈະເລີນງອກງາມໄພບູນໃນພຣະທຳວິໄນນີ້

ແຕ່ເປັນໄປໄດ້ທີ່ພິກຂຸນັ້ນແລ ລະທຳ ໑໐ ປະການນີ້ໄດ້ແລ້ວ ຈັກເຖິງຄວາມຈະເລີນງອກງາມໄພບູນໃນພຣະທຳວິໄນນີ້

**ພະຍາກະຣະນະສູດທີ ໔ ຈົບ**

# ໕. ກັດຖິສູດ

## ວ່າດ້ວຍການກ່າວໂອ້ອວດວ່າໄດ້ບັນລຸຄຸນວິເສດ

[໗໕] ສະໄໝໜຶ່ງ ທ່ານພຣະມະຫາຈຸນທະຢູ່ທີ່ສະຫະຊາຕິວັນ ແຄວັນເຈຕີ ໃນບ່ອນນັ້ນແລ ທ່ານພຣະມະຫາຈຸນທະໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ ພິກຂຸຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະມະຫາຈຸນທະຈຶ່ງໄດ້ກ່າວເລື້ອງນີ້ວ່າ

ຜູ້ມີອາຍຸທັງຫຼາຍ ພິກຂຸໃນພຣະທຳວິໄນນີ້ເປັນຜູ້ມັກກ່າວໂອ້ອວດໃນການໄດ້ບັນລຸຄຸນວິເສດວ່າ "ເຮົາເຂົ້າປະຖົມຊານກໍໄດ້ ອອກກໍໄດ້ ເຂົ້າທຸຕິຍະຊານກໍໄດ້ ອອກກໍໄດ້ ເຂົ້າຕະຕິຍະຊານກໍໄດ້ ອອກກໍໄດ້ ເຂົ້າຈະຕຸດຖະຊານກໍໄດ້ ອອກກໍໄດ້ ເຂົ້າອາກາສານັນຈາຍະຕະນະຊານກໍໄດ້ ອອກກໍໄດ້ ເຂົ້າວິນຍານັນຈາຍະຕະນະຊານກໍໄດ້ ອອກກໍໄດ້ ເຂົ້າອາກິນຈັນຍາຍະຕະນະຊານກໍໄດ້ ອອກກໍໄດ້ ເຂົ້າເນວະສັນຍານາສັນຍາຍະຕະນະຊານກໍໄດ້ ອອກກໍໄດ້ ເຂົ້າສັນຍາເວທະຍິຕະນິໂຣດກໍໄດ້ ອອກກໍໄດ້"

ພຣະຕະຖາຄົດເຈົ້າຫຼືສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກຳນົດຮູ້ຈິດຂອງຜູ້ອື່ນ ຍ່ອມຊັກຖາມ ສອບຖາມ ໄລ່ລຽງພິກຂຸນັ້ນ ພິກຂຸນັ້ນຖືກພຣະຕະຖາຄົດເຈົ້າຫຼືສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກຳນົດຮູ້ຈິດຂອງຜູ້ອື່ນ ຊັກຖາມ ສອບຖາມ ໄລ່ລຽງຢູ່ ຍ່ອມເຖິງຄວາມເປັນຄົນເປົ່າ ຄວາມບໍ່ມີຄຸນ ຄວາມບໍ່ຈະເລີນ ຄວາມພິນາດ ທັງຄວາມບໍ່ຈະເລີນແລະຄວາມພິນາດ

ພຣະຕະຖາຄົດເຈົ້າຫຼືສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກຳນົດຮູ້ຈິດຂອງຜູ້ອື່ນ ກຳນົດຮູ້ໃຈດ້ວຍໃຈແລ້ວ ໃສ່ໃຈເຖິງພິກຂຸນັ້ນແນວນີ້ວ່າ

"ຍ້ອນເຫດໃດນໍ ທ່ານຜູ້ນີ້ຈຶ່ງເປັນຜູ້ມັກກ່າວໂອ້ອວດໃນການບັນລຸຄຸນວິເສດວ່າ "ເຮົາເຂົ້າປະຖົມຊານກໍໄດ້ ອອກກໍໄດ້ ฯລฯ ເຂົ້າສັນຍາເວທະຍິຕະນິໂຣດກໍໄດ້ ອອກກໍໄດ້"

ພຣະຕະຖາຄົດເຈົ້າຫຼືສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກຳນົດຮູ້ຈິດຂອງຜູ້ອື່ນ ກຳນົດຮູ້ໃຈດ້ວຍໃຈແລ້ວ ຍ່ອມຮູ້ແຈ້ງເຊິ່ງພິກຂຸນັ້ນແນວນີ້ວ່າ

໑. "ທ່ານຜູ້ນີ້ເປັນຜູ້ເຮັດສິນໃຫ້ຂາດ ໃຫ້ຊອດ ໃຫ້ດ່າງ ໃຫ້ໝອງ ບໍ່ມັກເຮັດຕໍ່ເນື່ອງ ບໍ່ປະພຶດຕໍ່ເນື່ອງໃນສິນທັງຫຼາຍ ທ່ານຜູ້ນີ້ເປັນຜູ້ທຸສິນຕະຫຼອດການລະນານ" ກໍຄວາມເປັນຜູ້ທຸສິນນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໒. "ທ່ານຜູ້ນີ້ເປັນຜູ້ບໍ່ມີສັດທາ ມີຄວາມປະພຶດບໍ່ສົມຄວນ" ກໍຄວາມເປັນຜູ້ບໍ່ມີສັດທານີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໓. "ທ່ານຜູ້ນີ້ເປັນຜູ້ມີສຸຕະໜ້ອຍ ມີຄວາມປະພຶດບໍ່ສົມຄວນ" ກໍຄວາມເປັນຜູ້ມີສຸຕະໜ້ອຍນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໔. "ທ່ານຜູ້ນີ້ເປັນຜູ້ວ່າຍາກ ມີຄວາມປະພຶດບໍ່ສົມຄວນ" ກໍຄວາມເປັນຜູ້ວ່າຍາກນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໕. "ທ່ານຜູ້ນີ້ເປັນຜູ້ມີປາປະມິດ" ກໍຄວາມເປັນຜູ້ມີປາປະມິດນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໖. "ທ່ານຜູ້ນີ້ເປັນຜູ້ຂີ້ຄ້ານ" ກໍຄວາມເປັນຜູ້ຂີ້ຄ້ານນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໗. "ທ່ານຜູ້ນີ້ເປັນຜູ້ຫຼົງລືມສະຕິ" ກໍຄວາມເປັນຜູ້ຫຼົງລືມສະຕິນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໘. "ທ່ານຜູ້ນີ້ເປັນຜູ້ຫຼອກລວງໂລກ" ກໍຄວາມເປັນຜູ້ຫຼອກລວງໂລກນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໙. "ທ່ານຜູ້ນີ້ເປັນຜູ້ລ້ຽງຍາກ" ກໍຄວາມເປັນຜູ້ລ້ຽງຍາກນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໑໐. "ທ່ານຜູ້ນີ້ເປັນຜູ້ມີປັນຍາຊາມ" ກໍຄວາມເປັນຜູ້ມີປັນຍາຊາມນີ້ແລ ເປັນຄວາມເສື່ອມໃນ ພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

ຜູ້ມີອາຍຸທັງຫຼາຍ ປຽບຄື ສະຫາຍເພິ່ງກ່າວກັບສະຫາຍແນວນີ້ວ່າ "ສະຫາຍ ເມື່ອໃດທ່ານມີກິດຈຳເປັນທີ່ຕ້ອງໃຊ້ຊັບ ທ່ານຄວນບອກໃຫ້ເຮົາຮູ້ ເຮົາຈະໃຫ້ຊັບແກ່ທ່ານ" ສະຫາຍອີກຝ່າຍໜຶ່ງນັ້ນ ເມື່ອມີກິດບາງຢ່າງທີ່ຈຳເປັນຕ້ອງໃຊ້ຊັບເກີດຂຶ້ນ ຈຶ່ງບອກກັບສະຫາຍແນວນີ້ວ່າ "ສະຫາຍ ເຮົາຕ້ອງການໃຊ້ຊັບ ຂໍທ່ານຈົ່ງໃຫ້ຊັບແກ່ເຮົາ" ສະຫາຍນັ້ນກໍຕອບແນວນີ້ວ່າ "ສະຫາຍ ຖ້າເປັນແນວນັ້ນ ທ່ານຈົ່ງຂຸດລົງໄປຊື່ນີ້" ສະຫາຍອີກຝ່າຍໜຶ່ງນັ້ນເມື່ອຂຸດລົງໄປຊື່ບ່ອນນັ້ນ ກໍບໍ່ພໍ້ຊັບ ເຂົາຈຶ່ງກ່າວຂຶ້ນແນວນີ້ວ່າ "ສະຫາຍ ທ່ານໄດ້ເວົ້າເຫຼາະແຫຼະຂາດສາຣະກັບເຮົາວ່າ" "ທ່ານຈົ່ງຂຸດລົງໄປຊື່ນີ້" ສະຫາຍນັ້ນຈຶ່ງກ່າວ ແນວນີ້ວ່າ "ສະຫາຍ ເຮົາຫາໄດ້ເວົ້າເຫຼາະແຫຼະຂາດສາຣະກັບທ່ານບໍ່ ຖ້າເປັນແນວນັ້ນ ທ່ານຈົ່ງຂຸດລົງໄປຊື່ນີ້ເທີ້ນ" ສະຫາຍອີກຝ່າຍໜຶ່ງນັ້ນເມື່ອຂຸດລົງໄປ ນະ ທີ່ກົງນັ້ນ ກໍຍັງບໍ່ ພົບຊັບ ຈຶ່ງກ່າວຂຶ້ນແນວນີ້ວ່າ "ສະຫາຍ ທ່ານໄດ້ເວົ້າເຫຼາະແຫຼະຂາດສາຣະກັບເຮົາວ່າ "ທ່ານຈົ່ງຂຸດລົງໄປຊື່ນີ້" ເຂົາຈຶ່ງກ່າວຂຶ້ນແນວນີ້ວ່າ "ສະຫາຍ ເຮົາຫາໄດ້ເວົ້າເຫຼາະແຫຼະ ຂາດສາຣະກັບທ່ານບໍ ຖ້າເປັນແນວນັ້ນ ທ່ານຈົ່ງຂຸດລົງໄປຊື່ນີ້" ສະຫາຍອີກຝ່າຍໜຶ່ງນັ້ນເມື່ອຂຸດລົງໄປຊື່ບ່ອນນັ້ນ ກໍບໍ່ພໍ້ຊັບອີກ ຈຶ່ງເວົ້າຂຶ້ນແນວນີ້ວ່າ "ສະຫາຍ ທ່ານໄດ້ເວົ້າເຫຼາະແຫຼະຂາດສາຣະກັບເຮົາວ່າ "ທ່ານຈົ່ງຂຸດລົງໄປຊື່ນີ້" ສະຫາຍນັ້ນກໍເວົ້າຕອບແນວນີ້ວ່າ "ສະຫາຍ ເຮົາບໍ່ໄດ້ເວົ້າເຫຼາະແຫຼະຂາດສາຣະກັບທ່ານດອກ ແຕ່ເຮົາເອງນີ້ແລ ເຖິງຄວາມ ເປັນຜູ້ມີສະຕິຟັ່ນເຟືອນ ທີ່ບໍ່ໄດ້ກຳນົດຮູ້ດ້ວຍໃຈ" ແມ່ນສັນໃດ

ຜູ້ມີອາຍຸທັງຫຼາຍ ພິກຂຸກໍຄືກັນສັນນັ້ນ ເປັນຜູ້ມັກກ່າວໂອ້ອວດໃນການບັນລຸຄຸນວິເສດວ່າ "ເຮົາເຂົ້າປະຖົມຊານກໍໄດ້ ອອກກໍໄດ້ ເຂົ້າທຸຕິຍະຊານກໍໄດ້ ອອກກໍໄດ້ ເຂົ້າຕະຕິຍະຊານກໍໄດ້ ອອກກໍໄດ້ ເຂົ້າຈະຕຸດຖະຊານກໍໄດ້ ອອກກໍໄດ້ ເຂົ້າອາກາສານັນຈາຍະຕະນະຊານກໍໄດ້ ອອກກໍໄດ້ ເຂົ້າວິນຍານັນຈາຍະຕະນະຊານກໍໄດ້ ອອກກໍໄດ້ ເຂົ້າອາກິນຈັນຍາຍະຕະນະຊານກໍໄດ້ ອອກກໍໄດ້ ເຂົ້າເນວະສັນຍານາສັນຍາຍະຕະນະຊານກໍໄດ້ ອອກກໍໄດ້ ເຂົ້າສັນຍາເວທະຍິຕະນິໂຣດກໍໄດ້ ອອກກໍໄດ້"

ພຣະຕະຖາຄົດເຈົ້າຫຼືສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກຳນົດຮູ້ຈິດຂອງຜູ້ອື່ນ ຍ່ອມຊັກຖາມ ສອບຖາມ ໄລ່ລຽງພິກຂຸນັ້ນ ພິກຂຸນັ້ນຖືກພຣະຕະຖາຄົດເຈົ້າຫຼືສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກຳນົດຮູ້ຈິດຂອງຜູ້ອື່ນຊັກຖາມ ສອບຖາມ ໄລ່ລຽງຢູ່ ຍ່ອມເຖິງຄວາມເປັນຄົນເປົ່າ ຄວາມບໍ່ມີຄຸນ ຄວາມບໍ່ຈະເລີນ ຄວາມພິນາດ ທັງຄວາມບໍ່ຈະເລີນແລະຄວາມພິນາດ

ພຣະຕະຖາຄົດເຈົ້າຫຼືສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກຳນົດຮູ້ຈິດຂອງຜູ້ອື່ນ ກຳນົດໃຈດ້ວຍໃຈແລ້ວ ໃສ່ໃຈເຖິງພິກຂຸນັ້ນແນວນີ້ວ່າ "ຍ້ອນເຫດໃດນໍ ທ່ານຜູ້ນີ້ຈຶ່ງເປັນຜູ້ມັກກ່າວໂອ້ອວດໃນການບັນລຸຄຸນ

ວິເສດວ່າ "ເຮົາເຂົ້າປະຖົມຊານກໍໄດ້ ອອກກໍໄດ້ ຯລຯ ເຂົ້າສັນຍາເວທະຍິຕະນິໂຣດກໍໄດ້ ອອກກໍໄດ້"

ພຣະຕະຖາຄົດເຈົ້າຫຼືສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກໍານົດຮູ້ຈິດຂອງຜູ້ອື່ນ ກໍານົດໃຈດ້ວຍໃຈແລ້ວ ຍ່ອມຮູ້ແຈ້ງເຊິ່ງພິກຂຸນັ້ນແນວນີ້ວ່າ

໑. "ທ່ານຜູ້ນີ້ເປັນຜູ້ເຮັດສິນໃຫ້ຂາດ ໃຫ້ຊອດ ໃຫ້ດ່າງ ໃຫ້ໝອງ ບໍ່ມັກເຮັດຕໍ່ເນື່ອງ ບໍ່ປະພຶດຕໍ່ເນື່ອງໃນສິນທັງຫຼາຍ ທ່ານຜູ້ນີ້ເປັນຜູ້ທຸສິນຕະຫຼອດການລະນານ" ກໍຄວາມເປັນຜູ້ທຸສິນນີ້ແລ ເປັນຄວາມເສື່ອມໃນພຣະທໍາວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໒. "ທ່ານຜູ້ນີ້ເປັນຜູ້ບໍ່ມີສັດທາ" ກໍຄວາມເປັນຜູ້ບໍ່ມີສັດທານີ້ແລ ເປັນຄວາມເສື່ອມໃນພຣະທໍາວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໓. "ທ່ານຜູ້ນີ້ເປັນຜູ້ມີສຸຕະໜ້ອຍ ມີຄວາມປະພຶດບໍ່ສົມຄວນ" ກໍຄວາມເປັນຜູ້ມີສຸຕະໜ້ອຍນີ້ແລ ເປັນຄວາມເສື່ອມໃນພຣະທໍາວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໔. "ທ່ານຜູ້ນີ້ເປັນຜູ້ວ່າຍາກ" ກໍຄວາມເປັນຜູ້ວ່າຍາກນີ້ແລ ເປັນຄວາມເສື່ອມໃນພຣະທໍາວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໕. "ທ່ານຜູ້ນີ້ເປັນຜູ້ມີປາປະມິດ" ກໍຄວາມເປັນຜູ້ມີປາປະມິດນີ້ແລ ເປັນຄວາມເສື່ອມໃນພຣະທໍາວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໖. "ທ່ານຜູ້ນີ້ເປັນຜູ້ຂີ້ຄ້ານ" ກໍຄວາມເປັນຜູ້ຂີ້ຄ້ານນີ້ແລ ເປັນຄວາມເສື່ອມໃນພຣະທໍາວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໗. "ທ່ານຜູ້ນີ້ເປັນຜູ້ຫຼົງລືມສະຕິ" ກໍຄວາມເປັນຜູ້ຫຼົງລືມສະຕິນີ້ແລ ເປັນຄວາມເສື່ອມໃນພຣະທໍາວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໘. "ທ່ານຜູ້ນີ້ເປັນຜູ້ຫຼອກລວງໂລກ" ກໍຄວາມເປັນຜູ້ຫຼອກລວງໂລກນີ້ແລ ເປັນຄວາມເສື່ອມໃນພຣະທໍາວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໙. "ທ່ານຜູ້ນີ້ເປັນຜູ້ລ້ຽງຍາກ" ກໍຄວາມເປັນຜູ້ລ້ຽງຍາກນີ້ແລ ເປັນຄວາມເສື່ອມໃນພຣະທໍາວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໑໐. "ທ່ານຜູ້ນີ້ເປັນຜູ້ມີປັນຍາຊາມ" ກໍຄວາມເປັນຜູ້ມີປັນຍາຊາມນີ້ແລ ເປັນຄວາມເສື່ອມໃນພຣະທໍາວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

ຜູ້ມີອາຍຸທັງຫຼາຍ ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນແລ ລະທໍາ ໑໐ ປະການນີ້ບໍ່ໄດ້ແລ້ວ ຈັກເຖິງຄວາມຈະເລີນງອກງາມໄພບູນໃນພຣະທໍາວິໄນນີ້

ແຕ່ເປັນໄປໄດ້ທີ່ພິກຂຸນັ້ນແລ ລະທໍາ ໑໐ ປະການນີ້ໄດ້ແລ້ວ ຈັກເຖິງຄວາມຈະເລີນງອກງາມໄພບູນໃນພຣະທໍາວິໄນນີ້

**ກັດຖີສູດທີ ໘ ຈົບ**

## ໙. ອະທິມານະສູດ

## ວ່າດ້ວຍຄວາມສໍາຄັນຜິດ

[໗໙] ສະໄໝໜຶ່ງ ທ່ານພຣະມະຫາກັດສະປະຢູ່ທີ່ພຣະເວລຸວັນ ກະລັນທະກະນິວາປະສະຖານ ເຂດນະຄອນຣາດຊະຄຶ ໃນບ່ອນນັ້ນແລ ທ່ານພຣະມະຫາກັດສະປະໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄໍາແລ້ວ ທ່ານພຣະມະຫາກັດສະປະຈຶ່ງໄດ້ກ່າວເລື້ອງນີ້ ວ່າ

ຜູ້ມີອາຍຸທັງຫຼາຍ ພິກຂຸໃນພຣະທໍາວິໄນນີ້ ຍ່ອມພະຍາກອນອະຣະຫັດຕະຜົນ "ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດແລ້ວ ບໍ່ມີກິດອື່ນ ເພື່ອຄວາມເປັນແນວນີ້ອີກຕໍ່ໄປ" ພຣະຕະຖາຄົດເຈົ້າຫຼືສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກໍານົດຮູ້ຈິດຂອງຜູ້ອື່ນຊັກຖາມສອບຖາມ ໄລ່ລຽງພິກຂຸນັ້ນ ພິກຂຸນັ້ນຖືກພຣະຕະຖາຄົດເຈົ້າຫຼືສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກໍານົດຮູ້ຈິດຂອງຜູ້ອື່ນ ຊັກຖາມ ສອບຖາມ ໄລ່ລຽງຢູ່ ຍ່ອມເຖິງຄວາມເປັນຄົນເປົ່າ ຄວາມບໍ່ມີຄຸນ ຄວາມບໍ່ຈະເລີນ ຄວາມພິນາດ ທັງຄວາມບໍ່ຈະເລີນ ແລະຄວາມພິນາດ

ພຣະຕະຖາຄົດເຈົ້າຫຼືສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກໍານົດຮູ້ຈິດຂອງຜູ້ອື່ນ ກໍານົດຮູ້ໃຈດ້ວຍໃຈແລ້ວ ໃສ່ໃຈເຖິງພິກຂຸນັ້ນແນວນີ້ວ່າ "ຍ້ອນເຫດໃດນໍ ທ່ານຜູ້ນີ້ຈຶ່ງພະຍາກອນອະຣະຫັດຕະຜົນ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສໍາເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ພຣະຕະຖາຄົດເຈົ້າ ຫຼື ສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກຳນົດຮູ້ຈິດຂອງຜູ້ອື່ນ ກຳນົດຮູ້ໃຈດ້ວຍໃຈແລ້ວ ຍ່ອມຮູ້ແຈ້ງເຊິ່ງພິກຂຸນັ້ນແນວນີ້ວ່າ "ທ່ານຜູ້ນີ້ມີຄວາມສຳຄັນຜິດ ສຳຄັນຜິດໂດຍສັດຈິງ ມີຄວາມສຳຄັນໃນສິ່ງທີ່ຍັງບໍ່ໄດ້ເຖິງວ່າໄດ້ເຖິງ ມີຄວາມສຳຄັນໃນສິ່ງທີ່ຍັງບໍ່ໄດ້ເຮັດວ່າໄດ້ເຮັດ ມີຄວາມສຳຄັນໃນສິ່ງທີ່ຍັງບໍ່ໄດ້ບັນລຸວ່າໄດ້ບັນລຸ ຍ່ອມພະຍາກອນອະຣະຫັດຕະຜົນດ້ວຍຄວາມສຳຄັນຜິດວ່າ ເຮົາຮູ້ແຈ້ງວ່າຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ພຣະຕະຖາຄົດເຈົ້າ ຫຼື ສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກຳນົດຮູ້ຈິດຂອງຜູ້ອື່ນ ກຳນົດຮູ້ໃຈດ້ວຍໃຈແລ້ວໃສ່ໃຈເຖິງພິກຂຸນັ້ນແນວນີ້ວ່າ "ຍ້ອນເຫດໃດນໍ ທ່ານຜູ້ນີ້ຈຶ່ງມີຄວາມສຳຄັນຜິດ ສຳຄັນຜິດໂດຍສັດຈິງ ຍ້ອນອາໄສສິ່ງທີ່ຍັງບໍ່ໄດ້ບັນລຸ ມີຄວາມສຳຄັນໃນສິ່ງທີ່ຍັງບໍ່ໄດ້ເຖິງວ່າໄດ້ເຖິງ ມີຄວາມສຳຄັນໃນສິ່ງຍັງບໍ່ໄດ້ເຮັດວ່າໄດ້ເຮັດ ມີຄວາມສຳຄັນໃນສິ່ງທີ່ຍັງບໍ່ໄດ້ບັນລຸວ່າໄດ້ບັນລຸ ຍ່ອມພະຍາກອນອະຣະຫັດຕະຜົນດ້ວຍຄວາມສຳຄັນຜິດວ່າ ເຮົາຮູ້ແຈ້ງວ່າຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ພຣະຕະຖາຄົດເຈົ້າຫຼືສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກຳນົດຮູ້ຈິດຂອງຜູ້ອື່ນ ກຳນົດຮູ້ໃຈດ້ວຍໃຈແລ້ວ ໃສ່ໃຈເຖິງພິກຂຸນັ້ນແນວນີ້ວ່າ "ທ່ານຜູ້ນີ້ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທັງຫຼາຍທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະບໍລິສຸດບໍລິບູນຄົບຖ້ວນ ຊົງຈຳໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ ຍ້ອນແນວນັ້ນ ທ່ານຜູ້ນີ້ຈຶ່ງມີຄວາມສຳຄັນຜິດ ສຳຄັນຜິດໂດຍສັດຈິງ ມີຄວາມສຳຄັນໃນສິ່ງທີ່ຍັງບໍ່ໄດ້ເຖິງວ່າໄດ້ເຖິງ ມີຄວາມສຳຄັນໃນສິ່ງທີ່ຍັງບໍ່ໄດ້ເຮັດວ່າໄດ້ເຮັດ ມີຄວາມສຳຄັນໃນສິ່ງທີ່ຍັງບໍ່ໄດ້ບັນລຸວ່າໄດ້ບັນລຸ ຍ່ອມພະຍາກອນອະຣະຫັດຕະຜົນ ດ້ວຍຄວາມສຳຄັນຜິດວ່າ ເຮົາຮູ້ແຈ້ງວ່າ ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ"

ພຣະຕະຖາຄົດເຈົ້າຫຼືສາວົກຂອງພຣະຕະຖາຄົດເຈົ້າຜູ້ໄດ້ຊານ ສະຫຼາດໃນສະມາບັດ ສະຫຼາດໃນຈິດຂອງຜູ້ອື່ນ ສະຫຼາດໃນການກຳນົດຮູ້ຈິດຂອງຜູ້ອື່ນ ກຳນົດຮູ້ໃຈດ້ວຍໃຈແລ້ວ ຍ່ອມຮູ້ແຈ້ງເຊິ່ງພິກຂຸນັ້ນແນວນີ້ ວ່າ

໑. "ທ່ານຜູ້ນີ້ເປັນຜູ້ມີອະພິດຊາ (ຄວາມເພ່ງເລັງຢາກໄດ້ຂອງເຂົາ) ມີໃຈຖືກອະພິດຊາກຸ້ມລຸມຢູ່ສ່ວນຫຼາຍ" ກໍການຖືກອະພິດຊາກຸ້ມລຸມນີ້ແລ ເປັນຄວາມເສື່ອມ ໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໒. "ທ່ານຜູ້ນີ້ເປັນຜູ້ມີພະຍາບາດ(ຄວາມຄິດຮ້າຍ) ມີໃຈຖືກພະຍາບາດກຸ້ມລຸມຢູ່ສ່ວນຫຼາຍ" ກໍການຖືກພະຍາບາດກຸ້ມລຸມນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໓. "ທ່ານຜູ້ນີ້ເປັນຜູ້ມີຖີນະມິດທະ (ຄວາມຫົດຫູ່ແລະງ່ວມເຫງົາ) ມີໃຈຖືກຖີນະມິດທະກຸ້ມລຸມຢູ່ສ່ວນຫຼາຍ" ກໍການຖືກຖີນະມິດທະກຸ້ມລຸມນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໔. "ທ່ານຜູ້ນີ້ເປັນຜູ້ມີອຸດທັດຈະ (ຄວາມຟຸ້ງຊ່ານ) ມີໃຈຖືກອຸດທັດຈະກຸ້ມລຸມຢູ່ສ່ວນຫຼາຍ" ກໍການຖືກອຸດທັດຈະກຸ້ມລຸມນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໕. "ທ່ານຜູ້ນີ້ເປັນຜູ້ມີວິຈິກິດສາ (ຄວາມລັງເລສົງໄສ) ມີໃຈຖືກວິຈິກິດສາກຸ້ມລຸມຢູ່ສ່ວນຫຼາຍ" ກໍການຖືກວິຈິກິດສາກຸ້ມລຸມນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໖. "ທ່ານຜູ້ນີ້ເປັນຜູ້ມັກວຽກງານ[໑] ຍິນດີໃນວຽກງານ ໝັ່ນປະກອບຄວາມເປັນຜູ້ມັກວຽກງານ" ກໍຄວາມເປັນຜູ້ມັກວຽກງານນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໗. "ທ່ານຜູ້ນີ້ເປັນຜູ້ມັກການໂອ້ລົມ ຍິນດີໃນການໂອ້ລົມ ໝັ່ນປະກອບຄວາມເປັນຜູ້ມັກການ ໂອ້ລົມ" ກໍຄວາມເປັນຜູ້ມັກການໂອ້ລົມນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໘. "ທ່ານຜູ້ນີ້ເປັນຜູ້ມັກການນອນຫຼັບ ຍິນດີໃນການນອນຫຼັບ ໝັ່ນປະກອບຄວາມເປັນຜູ້ມັກການນອນຫຼັບ" ກໍຄວາມເປັນຜູ້ມັກການນອນຫຼັບນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໙. "ທ່ານຜູ້ນີ້ເປັນຜູ້ມັກການຄຸກຄີດ້ວຍໝູ່ ຍິນດີການຄຸກຄີດ້ວຍໝູ່ ໝັ່ນປະກອບຄວາມເປັນຜູ້ມັກການຄຸກຄີດ້ວຍໝູ່" ກໍຄວາມເປັນຜູ້ມັກການຄຸກຄີດ້ວຍໝູ່

ນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

໑໐. "ທ່ານຜູ້ນີ້ເປັນຜູ້ຫຼົງລືມສະຕິ ເຖິງຄວາມຢຸດຈິ້ງສາໃນລະຫວ່າງທີ່ຈະບັນລຸຄຸນວິເສດຊັ້ນສູງ ຍ້ອນໄດ້ບັນລຸຄຸນວິເສດຊັ້ນຕ່ຳ" ກໍການເຖິງຄວາມຢຸດຈິ້ງສາໃນລະຫວ່າງນີ້ແລ ເປັນຄວາມເສື່ອມໃນພຣະທຳວິໄນທີ່ພຣະຕະຖາຄົດເຈົ້າຊົງປະກາດແລ້ວ

ຜູ້ມີອາຍຸທັງຫຼາຍ ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນແລ ລະທຳ ໑໐ ປະການນີ້ບໍ່ໄດ້ແລ້ວ ຈັກເຖິງຄວາມຈະເລີນງອກງາມໄພບູນໃນພຣະທຳວິໄນນີ້

ແຕ່ເປັນໄປໄດ້ທີ່ພິກຂຸນັ້ນແລ ລະທຳ ໑໐ ປະການນີ້ໄດ້ແລ້ວ ຈັກເຖິງຄວາມຈະເລີນງອກງາມໄພບູນໃນພຣະທຳວິໄນນີ້

**ອະທິມານະສູດທີ ໖ ຈົບ**

## ໗. ນັບປິຍະສູດ

## ວ່າດ້ວຍທຳທີ່ບໍ່ເປັນໄປເພື່ອຄວາມຮັກ

[໗໗] ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າຊົງຜາຣົບກາລະກະພິກຂຸ ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພິກຂຸທັງຫຼາຍ

໑. ພິກຂຸໃນທຳວິໄນນີ້ເປັນຜູ້ມັກກໍ່ອະທິກອນ໑ບໍ່ສັນເສີນການລະງັບອະທິກອນແມ່ນການທີ່ພິກຂຸເປັນຜູ້ມັກກໍ່ອະທິກອນ ບໍ່ສັນເສີນການລະງັບອະທິກອນ ນີ້ເປັນທຳທີ່ບໍ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍ້ອງຍໍ ເພື່ອຄວາມເປັນສະມະນະ໒ ເພື່ອຄວາມເປັນອັນດຽວກັນ

໒. ພິກຂຸບໍ່ເປັນຜູ້ຕ້ອງການຕໍ່ການສຶກສາ ບໍ່ສັນເສີນການສະມາທານການສຶກສາແມ່ນການທີ່ພິກຂຸບໍ່ເປັນຜູ້ຕ້ອງການຕໍ່ການສຶກສາ ບໍ່ສັນເສີນການສະມາທານການສຶກສາ ນີ້ເປັນທຳທີ່ບໍ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່

ເຄົາລົບ ເພື່ອຄວາມຍ້ອງຍໍ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

໓. ພິກຂຸເປັນຜູ້ປາຖະໜາຊົ່ວ ບໍ່ສັນເສີນການກຳຈັດຄວາມປາຖະໜາຊົ່ວ ແມ່ນການທີ່ພິກຂຸເປັນຜູ້ປາຖະໜາຊົ່ວ ບໍ່ສັນເສີນການກຳຈັດຄວາມປາຖະໜາຊົ່ວ ນີ້ເປັນທຳທີ່ບໍ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍ້ອງຍໍ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

໔. ພິກຂຸເປັນຜູ້ມັກໂກດ ບໍ່ສັນເສີນການກຳຈັດຄວາມໂກດ ແມ່ນການທີ່ພິກຂຸເປັນຜູ້ມັກໂກດ ບໍ່ສັນເສີນການກຳຈັດຄວາມໂກດ ນີ້ເປັນທຳທີ່ບໍ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍ້ອງຍໍ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

໕. ພິກຂຸເປັນຜູ້ມັກລົບຫຼູ່ ບໍ່ສັນເສີນການກຳຈັດຄວາມລົບຫຼູ່ ແມ່ນການທີ່ພິກຂຸເປັນຜູ້ມັກລົບຫຼູ່ ບໍ່ສັນເສີນການກຳຈັດຄວາມລົບຫຼູ່ ນີ້ເປັນທຳທີ່ບໍ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍ້ອງຍໍ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

໖. ພິກຂຸເປັນຜູ້ມັກໂອ້ອວດ ບໍ່ສັນເສີນການກຳຈັດຄວາມໂອ້ອວດ ແມ່ນການທີ່ພິກຂຸເປັນຜູ້ມັກໂອ້ອວດ ບໍ່ສັນເສີນການກຳຈັດຄວາມໂອ້ອວດ ນີ້ເປັນທຳທີ່ບໍ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍ້ອງຍໍ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

໗. ພິກຂຸເປັນຜູ້ມີມາຍາ ບໍ່ສັນເສີນການກຳຈັດມາຍາ ແມ່ນການທີ່ພິກຂຸເປັນຜູ້ມີມາຍາ ບໍ່ສັນເສີນການກຳຈັດມາຍາ ນີ້ເປັນທຳທີ່ບໍ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍ້ອງຍໍ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

໘. ພິກຂຸເປັນຜູ້ບໍ່ພິຈາລະນາທຳ ບໍ່ສັນເສີນການພິຈາລະນາທຳ ແມ່ນການທີ່ພິກຂຸເປັນຜູ້ບໍ່ພິຈາລະນາທຳ ບໍ່ສັນເສີນການພິຈາລະນາທຳ ນີ້ເປັນທຳທີ່ບໍ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍ້ອງຍໍ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

໙. ພິກຂຸເປັນຜູ້ບໍ່ຫຼົບຫຼີກ[๑] ບໍ່ສັນເສີນການຫຼົບຫຼີກ ແມ່ນການທີ່ພິກຂຸເປັນຜູ້ບໍ່ຫຼົບຫຼີກ ບໍ່ສັນເສີນການຫຼົບຫຼີກ ນີ້ເປັນທຳທີ່ບໍ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍ້ອງຍໍ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

໑໐. ພິກຂຸບໍ່ເປັນຜູ້ປະຕິສັນຖານເພື່ອນພົມມະຈາຣີ ບໍ່ສັນເສີນຜູ້ປະຕິສັນຖານ ແມ່ນການທີ່ພິກຂຸບໍ່ເປັນຜູ້ປະຕິສັນຖານເພື່ອນພົມມະຈາຣີ ບໍ່ສັນເສີນຜູ້ປະຕິສັນຖານ ນີ້ເປັນທຳທີ່ບໍ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍ້ອງຍໍ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

ຄວາມປາຖະໜາເພິ່ງເກີດຂຶ້ນແກ່ພິກຂຸເຊັ່ນນີ້ແນວນີ້ວ່າ "ເຮັດແນວໃດ ເພື່ອນພົມມະຈາຣີທັງຫຼາຍຈະສັກກາຣະ ເຄົາລົບ ນັບຖື ບູຊາເຮົາ" ກໍຈິງ ເຖິງແນວນັ້ນ ເພື່ອນພົມມະຈາຣີທັງຫຼາຍກໍບໍ່ສັກກາຣະ ເຄົາລົບ ນັບຖື ບູຊາພິກຂຸນັ້ນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍພິຈາລະນາເຫັນບາບອະກຸສົນທຳທີ່ພິກຂຸນັ້ນຍັງລະບໍ່ໄດ້

ພິກຂຸທັງຫຼາຍ ປຽບຄືຄວາມປາຖະໜາເພິ່ງເກີດຂຶ້ນແກ່ມ້າໂງ່ແນວນີ້ວ່າ "ເຮັດແນວໃດມະນຸດທັງຫຼາຍຈະຕັ້ງເຮົາໄວ້ໃນຕຳແໜ່ງມ້າອາຊາໄນ ໃຫ້ກິນອາຫານສຳລັບມ້າອາຊາໄນ ແລະປະຕິບັດຕໍ່ເຮົາຄືກັບມ້າອາຊາໄນ" ກໍຈິງ ເຖິງແນວນັ້ນ ມະນຸດທັງຫຼາຍກໍບໍ່ຕັ້ງມ້ານັ້ນໄວ້ໃນຕຳແໜ່ງມ້າອາຊາໄນ ບໍ່ໃຫ້ກິນອາຫານສຳລັບມ້າອາຊາໄນ ແລະບໍ່ປະຕິບັດຄືທີ່ປະຕິບັດຕໍ່ມ້າອາຊາໄນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນມະນຸດຜູ້ຮູ້ທັງຫຼາຍພິຈາລະນາເຫັນຄວາມໂອ້ອວດ ຄວາມໂກງ ຄວາມບໍ່ຊື່ກົງ ຄວາມຄົດທີ່ມ້ານັ້ນຍັງລະ ບໍ່ໄດ້ ສັນໃດ ຄວາມປາຖະໜາເພິ່ງເກີດຂຶ້ນແກ່ພິກຂຸເຊັ່ນນີ້ແນວນີ້ວ່າ "ເຮັດແນວໃດ ເພື່ອນພົມມະຈາຣີທັງຫຼາຍຈະສັກກາຣະ ເຄົາລົບ ນັບຖື ບູຊາເຮົາ" ກໍຈິງ ເຖິງແນວນັ້ນ ເພື່ອນພົມມະຈາຣີທັງຫຼາຍກໍບໍ່ສັກກາຣະ ເຄົາລົບ ນັບຖື ບູຊາພິກຂຸນັ້ນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍພິຈາລະນາເຫັນບາບອະກຸສົນທຳທີ່ພິກຂຸນັ້ນຍັງລະບໍ່ໄດ້ ສັນນັ້ນ

## ວ່າດ້ວຍການບໍ່ກໍ່ອະທິກອນ

໑. ສ່ວນພິກຂຸໃນທຳວິໄນນີ້ ບໍ່ເປັນຜູ້ມັກກໍ່ອະທິກອນ ສັນເສີນການລະງັບອະທິກອນ ແມ່ນການທີ່ພິກຂຸບໍ່ເປັນຜູ້ມັກກໍ່ອະທິກອນ ສັນເສີນການລະງັບອະທິກອນ ນີ້ເປັນທຳທີ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍ້ອງຍໍ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

໔. ພິກຂຸເປັນຜູ້ຕ້ອງການຕໍ່ການສຶກສາ ສັນເສີນການສະມາທານການສຶກສາ ແມ່ນການທີ່ພິກຂຸເປັນຜູ້ຕ້ອງການຕໍ່ການສຶກສາ ສັນເສີນການສະມາທານການສຶກສາ ນີ້ເປັນທຳທີ່ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍ້ອງຍໍ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

໖. ພິກຂຸເປັນຜູ້ມັກໜ້ອຍ ສັນເສີນການກຳຈັດຄວາມປາຖະໜາ ແມ່ນການທີ່ພິກຂຸເປັນຜູ້ ມັກໜ້ອຍ ສັນເສີນການກຳຈັດຄວາມປາຖະໜາ ນີ້ເປັນທຳທີ່ເປັນໄປ ຯລຯ ເພື່ອຄວາມເປັນອັນດຽວກັນ

໔. ພິກຂຸເປັນຜູ້ບໍ່ມັກໂກດ ສັນເສີນການກຳຈັດຄວາມໂກດ ແມ່ນການທີ່ພິກຂຸເປັນຜູ້ບໍ່ມັກໂກດ ສັນເສີນການກຳຈັດຄວາມໂກດ ນີ້ເປັນທຳທີ່ເປັນໄປ ຯລຯ ເພື່ອຄວາມເປັນອັນດຽວກັນ

໕. ພິກຂຸເປັນຜູ້ບໍ່ລົບຫຼູ່ ສັນເສີນການກຳຈັດຄວາມລົບຫຼູ່ ແມ່ນການທີ່ພິກຂຸເປັນຜູ້ບໍ່ລົບຫຼູ່ ສັນເສີນການກຳຈັດຄວາມລົບຫຼູ່ ນີ້ເປັນທຳທີ່ເປັນໄປ ຯລຯ ເພື່ອຄວາມເປັນອັນດຽວກັນ

໖. ພິກຂຸເປັນຜູ້ບໍ່ໂອ້ອວດ ສັນເສີນການກຳຈັດຄວາມໂອ້ອວດ ແມ່ນການທີ່ພິກຂຸເປັນຜູ້ບໍ່ໂອ້ອວດ ສັນເສີນການກຳຈັດຄວາມໂອ້ອວດ ນີ້ເປັນທຳທີ່ເປັນໄປ ຯລຯ ເພື່ອຄວາມເປັນອັນດຽວກັນ

໗. ພິກຂຸເປັນຜູ້ບໍ່ມີມາຍາ ສັນເສີນການກຳຈັດມາຍາ ແມ່ນການທີ່ພິກຂຸເປັນຜູ້ບໍ່ມີມາຍາ ສັນເສີນການກຳຈັດມາຍາ ນີ້ເປັນທຳທີ່ເປັນໄປ ຯລຯ ເພື່ອຄວາມເປັນອັນດຽວກັນ

໗. ພິກຂຸເປັນຜູ້ພິຈາລະນາທຳ ສັນເສີນການພິຈາລະນາທຳ ແມ່ນການທີ່ພິກຂຸເປັນຜູ້ພິຈາລະນາທຳ ສັນເສີນການພິຈາລະນາທຳ ນີ້ເປັນທຳທີ່ເປັນໄປ ຯລຯ ເພື່ອຄວາມເປັນອັນດຽວກັນ

໙. ພິກຂຸເປັນຜູ້ຫຼີບຫຼີກ ສັນເສີນການຫຼີບຫຼີກ ແມ່ນການທີ່ພິກຂຸເປັນຜູ້ຫຼີບຫຼີກ ສັນເສີນການຫຼີບຫຼີກ ນີ້ເປັນທຳທີ່ເປັນໄປ ຯລຯ ເພື່ອຄວາມເປັນອັນດຽວກັນ

໑໐. ພິກຂຸເປັນຜູ້ປະຕິສັນຖານເພື່ອນພົມມະຈາຣີທັງຫຼາຍ ສັນເສີນຜູ້ປະຕິສັນຖານ ແມ່ນການທີ່ພິກຂຸເປັນຜູ້ປະຕິສັນຖານ ສັນເສີນຜູ້ປະຕິສັນຖານນີ້ ເປັນທຳທີ່

ເປັນໄປເພື່ອຄວາມເປັນທີ່ຮັກ ເພື່ອຄວາມເປັນທີ່ເຄົາລົບ ເພື່ອຄວາມຍ້ອງຍໍ ເພື່ອຄວາມເປັນສະມະນະ ເພື່ອຄວາມເປັນອັນດຽວກັນ

ຄວາມປາຖະໜາຈະບໍ່ເກີດຂຶ້ນແກ່ພິກຂຸເຊັ່ນນີ້ແນວນີ້ວ່າ "ເຮັດແນວໃດ ເພື່ອນພົມມະຈາຣີທັງຫຼາຍຈະສັກກາຣະ ເຄົາລົບ ນັບຖື ບູຊາເຮົາ" ກໍຈິງ ເຖິງແນວນັ້ນ ເພື່ອນພົມມະຈາຣີທັງຫຼາຍກໍຍັງສັກກາຣະ ເຄົາລົບ ນັບຖື ບູຊາພິກຂຸນັ້ນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍພິຈາລະນາເຫັນບາບອະກຸສົນທຳທີ່ພິກຂຸນັ້ນລະໄດ້ແລ້ວ

ພິກຂຸທັງຫຼາຍ ປຽບຄືຄວາມປາຖະໜາບໍ່ເກີດຂຶ້ນແກ່ມ້າອາຊາໄນໂຕຈະເລີນແນວນີ້ວ່າ "ເຮັດແນວໃດ ມະນຸດທັງຫຼາຍ ຈະຕັ້ງເຮົາໄວ້ໃນຕຳແໜ່ງມ້າອາຊາໄນ ໃຫ້ເຮົາກິນອາຫານສຳລັບມ້າອາຊາໄນ ແລະປະຕິບັດຕໍ່ເຮົາຄືທີ່ປະຕິບັດຕໍ່ມ້າອາຊາໄນ" ກໍຈິງ ເຖິງແນວນັ້ນ ມະນຸດທັງຫຼາຍກໍຕັ້ງມ້ານັ້ນໄວ້ໃນຕຳແໜ່ງມ້າອາຊາໄນ ໃຫ້ກິນອາຫານສຳລັບມ້າອາຊາໄນ ແລະປະຕິບັດຄືທີ່ປະຕິບັດຕໍ່ມ້າອາຊາໄນ ຂໍ້ນັ້ນຍ້ອນເຫດໃດ ຍ້ອນມະນຸດຜູ້ຮູ້ທັງຫຼາຍພິຈາລະນາເຫັນຄວາມໂອ້ອວດ ຄວາມໂກງ ຄວາມບໍ່ຊື່ກົງ ຄວາມຄົດທີ່ມ້ານັ້ນລະໄດ້ແລ້ວ ສັນໃດ ຄວາມປາຖະໜາບໍ່ເກີດຂຶ້ນແກ່ພິກຂຸເຊັ່ນນີ້ແນວນີ້ວ່າ "ເຮັດແນວໃດ ເພື່ອນພົມມະຈາຣີທັງຫຼາຍຈະສັກກາຣະ ເຄົາລົບ ນັບຖື ບູຊາເຮົາ" ກໍຈິງ ເຖິງແນວນັ້ນ ເພື່ອນພົມມະຈາຣີທັງຫຼາຍກໍຍັງສັກກາຣະ ເຄົາລົບ ນັບຖື ບູຊາເຮົາ ຂໍ້ນັ້ນຍ້ອນເຫດໃດ ຍ້ອນເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍພິຈາລະນາເຫັນບາບອະກຸສົນທຳທີ່ພິກຂຸນັ້ນລະໄດ້ແລ້ວ ສັນນັ້ນ

**ນັບປິຍະສູດທີ ໗ ຈົບ**

## ๘. ອັກໂກສະກະສູດ

## ວ່າດ້ວຍໂທດຂອງການດ່າ

[໘໘] ພິກຂຸທັງຫຼາຍ ພິກຂຸໃດດ່າກ່າວໂທດເພື່ອນພົມມະຈາຣີ ກ່າວໂທດພຣະອະຣິຍະເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນຈະບໍ່ເຖິງຄວາມພິນາດຢ່າງ ໑ ໃນ ໑໐ ຢ່າງ

ຄວາມພິນາດ ໑໐ ຢ່າງ ອັນໃດແດ່ ຄື

໑. ບໍ່ບັນລຸທຳທີ່ຍັງບໍ່ບັນລຸ
໒. ເສື່ອມຈາກທຳທີ່ບັນລຸແລ້ວ
໓. ສັດທຳຂອງຍ່ອມບໍ່ຜ່ອງແຜ້ວ
໔. ມີຄວາມສຳຄັນວ່າໄດ້ບັນລຸສັດທຳ

໕. ບໍ່ຍິນດີປະພຶດພົມມະຈັນ
໖. ຕ້ອງອາບັດເສົ້າໝອງກອງໃດກອງໜຶ່ງ
໗. ເປັນພະຍາດຊໍາເຮື້ອ
໘. ເຖິງຄວາມວິກົນຈະລິດມີຈິດຟຸ້ງຊ່ານ
໙. ຫຼົງລືມສະຕິມໍຣະນະພາບ
໑໐. ຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ພິກຂຸທັງຫຼາຍ ພິກຂຸໃດດ່າກ່າວໂທດເພື່ອນພົມມະຈາຣີ ກ່າວໂທດພຣະອະຣິຍະ ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນຈະບໍ່ເຖິງຄວາມພິນາດຢ່າງ ໑ ໃນ ໑໐ ຢ່າງ

**ອັກໂກສະກະສູດທີ ໘ ຈົບ**

## ໙. ໂກກາລິກະສູດ

## ວ່າດ້ວຍພິກຂຸຊື່ວ່າໂກກາລິກະ

[໘໙] ຄັ້ງນັ້ນແລ ໂກກາລິກະພິກຂຸເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

“ຂ້າແດ່ ພຣະອົງຜູ້ຈະເລີນ ພຣະສາຣີບຸດ ແລະພຣະໂມກຄັນລານະເປັນຜູ້ມີຄວາມປາຖະໜາຊົ່ວ ລຸອໍານາດຄວາມປາຖະໜາຊົ່ວ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ໂກກາລິກະ ທ່ານຢ່າກ່າວແນວນັ້ນ ທ່ານຢ່າກ່າວແນວນັ້ນ ທ່ານຈົ່ງເຮັດຈິດໃຫ້ເຫຼື້ອມໃສໃນສາຣີບຸດແລະໂມກຄັນລານະເທີ້ນ ຍ້ອນສາຣີບຸດ ແລະໂມກຄັນລານະ ເປັນຜູ້ມີສີນເປັນທີ່ຮັກ”

ແມ່ນເທື່ອທີ່ ໒ ໂກກາລິກະພິກຂຸກໍຂາບທູນພຣະຜູ້ມີພຣະພາກເຈົ້າວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ແມ່ນພຣະຜູ້ມີພຣະພາກເຈົ້າຊົງເປັນບ່ອນຕັ້ງແຫ່ງສັດທາຂອງຂ້າພຣະອົງ ຊົງມີພຣະພຸດທະພົດທີ່ຂ້າພຣະອົງເຊື່ອຖືໄດ້ກໍຈິງ ເຖິງແນວນັ້ນ ພຣະສາຣີບຸດແລະພຣະໂມກຄັນລານະກໍຍັງເປັນຜູ້ປາຖະໜາຊົ່ວ ລຸອໍານາດຄວາມປາຖະໜາຊົ່ວ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ໂກກາລິກະ ທ່ານຢ່າກ່າວແນວນັ້ນ ທ່ານຢ່າກ່າວແນວນັ້ນ ທ່ານຈົ່ງເຮັດຈິດໃຫ້ເຫຼື້ອມໃສໃນສາຣີບຸດແລະໂມກຄັນລານະເທີ້ນ ຍ້ອນສາຣີບຸດແລະໂມກຄັນລານະເປັນຜູ້ມີສີນເປັນທີ່ຮັກ”

ແມ່ນເທື່ອທີ່ ๓ ໂກກາລິກະພິກຂຸກໍຂາບທູນພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ແມ່ນພຣະຜູ້ມີພຣະພາກເຈົ້າຊົງເປັນບ່ອນຕັ້ງແຫ່ງສັດທາຂອງຂ້າພຣະອົງ ຊົງມີພຣະພຸດທະພົດທີ່ຂ້າພຣະອົງເຊື່ອຖືໄດ້ກໍຈິງ ເຖິງແນວນັ້ນ ພຣະສາຣີບຸດແລະພຣະໂມກຄັນລານະກໍຍັງເປັນຜູ້ມີຄວາມປາຖະໜາຊົ່ວ ລຸອໍານາດຄວາມປາຖະໜາຊົ່ວ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂກກາລິກະ ທ່ານຢ່າກ່າວແນວນັ້ນ ທ່ານຢ່າກ່າວແນວນັ້ນ ທ່ານຈົ່ງເຮັດຈິດໃຫ້ເຫຼື້ອມໃສໃນສາຣີບຸດແລະໂມກຄັນລານະເທີ້ນ ຍ້ອນສາຣີບຸດແລະໂມກຄັນລານະເປັນຜູ້ມີສິນເປັນທີ່ຮັກ"

ຄັ້ງນັ້ນ ໂກກາລິກະພິກຂຸລຸກຂຶ້ນຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າກະທໍາ ປະທັກຂິນແລ້ວຫຼີກໄປ ເມື່ອໂກກາລິກະພິກຂຸຫຼີກໄປບໍ່ດົນ ຮ່າງກາຍກໍມີຕຸ່ມຂະໜາດທໍ່ໄນຜັກກາດເກີດຂຶ້ນທົ່ວຮ່າງ ຕຸ່ມເຫຼົ່ານັ້ນໃຫຍ່ທໍ່ໄນຜັກກາດ ແລ້ວກໍໃຫຍ່ທໍ່ເມັດຖົ່ວຂຽວ ໃຫຍ່ທໍ່ເມັດຖົ່ວດໍາ ໃຫຍ່ທໍ່ເມັດໝາກກະທັນ ໃຫຍ່ທໍ່ເມັດໝາກກະເບົາ ໃຫຍ່ທໍ່ໜ່ວຍໝາກຂາມປ້ອມ ໃຫຍ່ທໍ່ໜ່ວຍໝາກຕູມອ່ອນ ໃຫຍ່ທໍ່ໜ່ວຍໝາກຕູມແກ່ ແລ້ວກໍແຕກເປື່ອຍ ໜອງແລະເລືອດຫລັ່ງໄຫຼອອກມາ ໄດ້ຂ່າວວ່າໂກກາລິກະ ພິກຂຸນັ້ນນອນເທິງໃບຕອງ ຄືປາກິນຢາພິດ

ຄັ້ງນັ້ນແລ ຕຸທິປັດເຈກພົມ[๑]ເຂົ້າໄປຫາໂກກາລິກະພິກຂຸຮອດບ່ອນຢູ່ ຢືນຢູ່ກາງອາກາດກ່າວກັບໂກກາລິກະພິກຂຸວ່າ "ທ່ານໂກກາລິກະ ທ່ານຈົ່ງເຮັດຈິດໃຫ້ເຫຼື້ອມໃສໃນທ່ານພຣະສາຣີບຸດແລະທ່ານພຣະໂມກຄັນລານະເທີ້ນ ຍ້ອນທ່ານພຣະສາຣີບຸດແລະທ່ານພຣະໂມກຄັນລານະເປັນຜູ້ມີສິນເປັນທີ່ຮັກ"

ໂກກາລິກະພິກຂຸຖາມວ່າ "ຜູ້ມີອາຍຸ ທ່ານເປັນໃຜ?"

ຕຸທິປັດເຈກພົມຕອບວ່າ "ເຮົາເປັນຕຸທິປັດເຈກພົມ"

ໂກກາລິກະພິກຂຸຖາມວ່າ "ຜູ້ມີອາຍຸ ທ່ານໄດ້ຮັບພະຍາກອນຈາກພຣະຜູ້ມີພຣະພາກເຈົ້າວ່າ ເປັນອະນາຄາມີແລ້ວບໍ່ແມ່ນບໍ ເມື່ອເປັນແນວນັ້ນ ເປັນຫຍັງທ່ານຈຶ່ງມາບ່ອນນີ້ອີກ ທ່ານຈົ່ງເຫັນວ່າຄວາມຜິດນີ້ຂອງທ່ານມີຢູ່ເທີ້ນ"

ລໍາດັບນັ້ນ ຕຸທິປັດເຈກພົມ ຈຶ່ງໄດ້ກ່າວກັບໂກກາລິກະພິກຂຸດ້ວຍຄາຖາ ວ່າ

ຜະຣຸສະວາຈາ (ຄໍາຫຍາບ) ເປັນຄືຜຶ່ງ (ສໍາລັບຖາກໄມ້)
ເຄື່ອງຕັດຕົນຂອງຄົນພານຜູ້ກ່າວຄໍາຊົ່ວ
ຍ່ອມເກີດທີ່ປາກຂອງຄົນພານ
ຜູ້ໃດສັນເສີນຄົນທີ່ຄວນຕິຕຽນ

ຫຼືຕິຕຽນຄົນທີ່ຄວນສັນເສີນ
ຜູ້ນັ້ນຊື່ວ່າສັ່ງສົມຄວາມຜິດໄວ້ດ້ວຍປາກ
ຍ່ອມບໍ່ປະສົບຄວາມສຸກ ຍ້ອນຄວາມຜິດນັ້ນ
ການປຣາໄຊດ້ວຍຊັບ
ໃນການຫຼິ້ນການພະນັນຈົນໝົດໂຕນີ້
ເປັນຄວາມຜິດພຽງເລັກໜ້ອຍ
ແຕ່ການທີ່ບຸກຄົນມີໃຈປະທຸດສະຮ້າຍ
ໃນບຸກຄົນຜູ້ດຳເນີນໄປດີແລ້ວນີ້ທີ່ນັ້ນ
ເປັນຄວາມຜິດຫຼາຍກວ່າ
ບຸກຄົນຜູ້ຕັ້ງວາຈາແລະໃຈອັນຊົ່ວຕິຕຽນພຣະອະຣິຍະ
ຍ່ອມເຂົ້າເຖິງນະຮົກສິ້ນ ໑໓໖,໐໐໐ ນິຣັບພຸທະກັບ
ກັບອີກ ໕ ອັບພຸທະກັບ

ຄັ້ງນັ້ນ ໂກກາລິກະພິກຂຸໄດ້ມໍຣະນະພາບດ້ວຍອາພາດນັ້ນເອງແລ້ວໄປເກີດໃນປະທຸມະນະຮົກ ຍ້ອນມີຈິດຜູກອາຄາດໃນພຣະສາຣີບຸດແລະພຣະໂມກຄັນລານະ

ເມື່ອປະຖົມມະຍາມຜ່ານໄປແລ້ວ ທ້າວສະຫຳບໍດີພົມມີວັນນະງາມຍິ່ງ ເຮັດພຣະເຊຕະວັນ ວິຫານທັງໝົດໃຫ້ສະຫວ່າງສະໄຫວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ໂກກາລິກະພິກຂຸມໍຣະນະພາບແລ້ວໄປເກີດໃນປະທຸມະນະຮົກ ຍ້ອນມີຈິດຜູກອາຄາດໃນທ່ານພຣະ ສາຣີບຸດແລະທ່ານພຣະໂມກຄັນລານະ ຂ້ານ້ອຍ”

ເມື່ອທ້າວສະຫຳບໍດີພົມຂາບທູນດັ່ງນີ້ແລ້ວ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າກະທຳປະທັກຂິນແລ້ວຫາຍໄປ ໃນບ່ອນນັ້ນເອງ

ເມື່ອຣາຕີນັ້ນຜ່ານໄປ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ “ພິກຂຸທັງຫຼາຍ ຄືນນີ້ເມື່ອປະຖົມມະຍາມຜ່ານໄປແລ້ວ ທ້າວສະຫຳບໍດີພົມມີວັນນະງາມຍິ່ງ ເຮັດພຣະເຊຕະວັນທັງໝົດໃຫ້ສະຫວ່າງສະໄຫວ ເຂົ້າມາຫາເຮົາຮອດບ່ອນຢູ່ ໄຫວ້ແລ້ວຢືນຢູ່ບ່ອນທີ່ສົມຄວນ ໄດ້ກ່າວກັບເຮົາດັ່ງນີ້ວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ໂກກາລິກະພິກຂຸມໍຣະນະພາບແລ້ວໄປເກີດ ໃນປະທຸມະນະຮົກ ຍ້ອນມີຈິດຜູກອາຄາດໃນທ່ານພຣະສາຣີບຸດແລະທ່ານພຣະໂມກຄັນລານະ” ພິກຂຸທັງຫຼາຍ ເມື່ອທ້າວສະຫຳບໍດີພົມກ່າວດັ່ງນີ້ແລ້ວ ໄຫວ້ເຮົາ ກະທຳປະທັກຂິນແລ້ວ ຫາຍໄປໃນບ່ອນນັ້ນເອງ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ພິກຂຸອົງໜຶ່ງໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ປະມານອາຍຸໃນປະທຸມະນະຣົກດົນທໍ່ໃດນໍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸ ປະມານອາຍຸໃນປະທຸມະນະຣົກດົນຫຼາຍ ປະມານອາຍຸໃນປະທຸມະນະຣົກນັ້ນຍາກທີ່ຈະນັບໄດ້ວ່າ "ປະມານທໍ່ນີ້ປີ ປະມານ ໑໐໐ ປີທໍ່ນີ້ ປະມານ ໑,໐໐໐ ປີທໍ່ນີ້ ປະມານ ໑໐໐,໐໐໐ ປີທໍ່ນີ້"

ພິກຂຸທູນຖາມວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ພຣະອົງພໍຈະຍົກອຸປະມາໄດ້ບໍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໄດ້ ພິກຂຸ" ແລ້ວຕັດວ່າ "ພິກຂຸ ໜຶ່ງກວຽນເມັດງາຂອງຊາວໂກສົນມີອັດຕາ ໒໐ ຂາຣີ[໑] ລ່ວງໄປແລ້ວ ໑໐໐,໐໐໐ ປີ ບຸຣຸດຈຶ່ງນຳເມັດງາອອກຈາກກວຽນນັ້ນໜຶ່ງເມັດ ເມັດງາໜຶ່ງກວຽນຂອງຊາວໂກສົນເຊິ່ງມີອັດຕາ ໒໐ ຂາຣີ ນັ້ນຈະເພິ່ງໝົດໄປໂດຍທຳນອງນີ້ໄວກວ່າ ແຕ່ວ່າ ໑ ອັບພຸທະນະຣົກ[໒]ຍັງບໍ່ໝົດໄປ ໒໐ ອັບພຸທະນະຣົກ ເປັນ ໑ ນິຣັບພຸທະນະຣົກ ໒໐ ນິຣັບພຸທະນະຣົກ ເປັນ ໑ ອະພັບພະນະຣົກ ໒໐ ອະພັບພະນະຣົກ ເປັນ ໑ ອຸຫະຫະນະຣົກ ໒໐ ອຸຫະຫະນະຣົກ ເປັນ ໑ ອັດຕະນະຣົກ ໒໐ ອັດຕະນະຣົກ ເປັນ ໑ ກຸມຸທະນະຣົກ ໒໐ ກຸມຸທະນະຣົກ ເປັນ ໑ ໂສຄັນທິກະນະຣົກ ໒໐ ໂສຄັນທິກະນະຣົກ ເປັນ ໑ ອຸບປະລະນະຣົກ ໒໐ ອຸບປະລະນະຣົກ ເປັນ ໑ ປຸນທະຣິກະນະຣົກ ໒໐ ປຸນທະຣິກະນະຣົກ ເປັນ ໑ ປະທຸມະນະຣົກ ພິກຂຸ ໂກກາລິກະພິກຂຸໄປເກີດໃນປະທຸມະນະຣົກ ຍ້ອນມີຈິດຜູກອາຄາດໃນສາຣີບຸດແລະໂມກຄັນລານະ"

ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດສາດສະດາເມື່ອຕັດໄວຍາກອນພາສິດນີ້ແລ້ວ ຈຶ່ງໄດ້ຕັດຄາຖາປະພັນຕໍ່ໄປອີກວ່າ

ຜະຣຸສະວາຈາເປັນຄືຜືງ
ເຄື່ອງຕັດຕົນຂອງຄົນພານຜູ້ກ່າວຄຳຊົ່ວ
ຍ່ອມເກີດທີ່ປາກຂອງຄົນພານ
ຜູ້ໃດສັນເສີນຄົນທີ່ຄວນຕິຕຽນ
ຫຼືຕິຕຽນຄົນທີ່ຄວນສັນເສີນ
ຜູ້ນັ້ນຊື່ວ່າສັ່ງສົມຄວາມຜິດໄວ້ດ້ວຍປາກ
ຍ່ອມບໍ່ປະສົບຄວາມສຸກ ຍ້ອນຄວາມຜິດນັ້ນ
ການປຣາໄຊດ້ວຍຊັບ
ໃນການຫຼິ້ນການພະນັນຈົນໝົດໂຕນີ້
ເປັນຄວາມຜິດພຽງເລັກໜ້ອຍ
ແຕ່ການທີ່ບຸກຄົນມີໃຈປະທຸດສະຮ້າຍ

ໃນບຸກຄົນຜູ້ດຳເນີນໄປດີແລ້ວນີ້ທີ່ນັ້ນ
ເປັນຄວາມຜິດຫຼາຍກວ່າ
　ບຸກຄົນຜູ້ຕັ້ງວາຈາແລະໃຈອັນຊົ່ວຕິຕຽນພຣະອະຣິຍະ
ຍ່ອມເຂົ້າເຖິງນະຣົກສິ້ນ ໑໓໖,໐໐໐ ນິຣັບພຸທະກັບ
ກັບອີກ ໕ ອັບພຸທະກັບ

**ໂກກາລິກະສູດທີ ໗ ຈົບ**

## ໑໐. ຂີນາສະວະພະລະສູດ[๑]

## ວ່າດ້ວຍກຳລັງຂອງພຣະຂີນາສົບ

[໗໐] ຄັ້ງນັ້ນ ທ່ານພຣະສາຣີບຸດ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າ ໄດ້ຕັດຖາມທ່ານພຣະສາຣີບຸດດັ່ງນີ້ ວ່າ

"ສາຣີບຸດ ພິກຂຸຂີນາສົບມີກຳລັງທີ່ໃດ ຈຶ່ງປະຕິຍານຄວາມສິ້ນອາສະວະທັງຫຼາຍວ່າ "ອາສະວະຂອງເຮົາໝົດແລ້ວ"

ທ່ານພຣະສາຣີບຸດຂາບທູນວ່າ ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸຂີນາສົບມີກຳລັງ ໑໐ ປະການ ຈຶ່ງປະຕິຍານຄວາມສິ້ນອາສະວະທັງຫຼາຍວ່າ "ອາສະວະຂອງເຮົາໝົດແລ້ວ"

ກຳລັງ ໑໐ ປະການ ອັນໃດແດ່ ຄື

໑. ສັງຂານທັງປວງເປັນທຳທີ່ພິກຂຸຂີນາສົບໃນພຣະທຳວິໄນນີ້ເຫັນວ່າເປັນສະພາວະບໍ່ທ່ຽງດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ແມ່ນຂໍ້ທີ່ສັງຂານ ທັງປວງເປັນທຳທີ່ພິກຂຸຂີນາສົບເຫັນວ່າເປັນສະພາວະບໍ່ທ່ຽງດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບທີ່ພິກຂຸຂີນາສົບ ອາໄສປະຕິຍານຄວາມສິ້ນອາສະວະທັງຫຼາຍວ່າ "ອາສະວະຂອງເຮົາໝົດແລ້ວ"

໒. ກາມທັງຫຼາຍເປັນທຳທີ່ພິກຂຸຂີນາສົບເຫັນວ່າປຽບດ້ວຍຂຸມຖ່ານໄຟ ດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ແມ່ນຂໍ້ທີ່ກາມທັງຫຼາຍເປັນທຳທີ່ພິກຂຸຂີນາສົບເຫັນວ່າປຽບດ້ວຍຂຸມຖ່ານໄຟດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບທີ່ພິກຂຸຂີນາສົບອາໄສປະຕິຍານຄວາມສິ້ນອາສະວະທັງຫຼາຍວ່າ "ອາສະວະຂອງເຮົາໝົດແລ້ວ"

໓. ຈິດຂອງພິກຂຸຂີນາສົບເປັນທຳມະຊາດນ້ອມໄປ ອຽງໄປ ໂອນໄປ ຕັ້ງຢູ່ໃນວິເວກ ຍິນດີຍິ່ງໃນເນກຂຳມະ ປາສະຈາກເງື່ອນທຳອັນເປັນບ່ອນຕັ້ງແຫ່ງອາສະວະໂດຍປະການທັງປວງ ແມ່ນຂໍ້ທີ່ຈິດຂອງພິກຂຸຂີນາສົບເປັນທຳມະຊາດນ້ອມໄປ ອຽງໄປ ໂອນໄປ ຕັ້ງຢູ່ໃນວິເວກ ຍິນດີຍິ່ງໃນເນກຂຳມະ ປາສະຈາກເງື່ອນທຳອັນເປັນບ່ອນຕັ້ງແຫ່ງອາສະວະໂດຍປະການທັງປວງ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບ ທີ່ພິກຂຸຂີນາສົບອາໄສປະຕິຍານຄວາມສິ້ນອາສະວະທັງຫຼາຍວ່າ "ອາສະວະຂອງເຮົາໝົດແລ້ວ"

໔. ສະຕິປັດຖານ ໔ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ແມ່ນຂໍ້ທີ່ ສະຕິປັດຖານ ໔ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບ ທີ່ພິກຂຸຂີນາສົບອາໄສປະຕິຍານຄວາມສິ້ນອາສະວະທັງຫຼາຍ ວ່າ "ອາສະວະຂອງເຮົາໝົດແລ້ວ"

໕. ສຳມັບປະທານ ໔ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ຯລຯ
໖. ອິດທິບາດ ໔ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ຯລຯ
໗. ອິນຊີ ໕ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ຯລຯ
໘. ພະລະ ໕ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ຯລຯ
໙. ໂພດຊົງ ໗ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ຯລຯ

໑໐. ມັກມີອົງ ໘ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ແມ່ນຂໍ້ທີ່ ມັກມີອົງ ໘ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບ ທີ່ພິກຂຸຂີນາສົບອາໄສປະຕິຍານຄວາມສິ້ນອາສະວະທັງຫຼາຍ ວ່າ "ອາສະວະຂອງເຮົາໝົດແລ້ວ

ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸຂີນາສົບມີກຳລັງ ໑໐ ປະການນີ້ແລ ຈຶ່ງປະຕິຍານຄວາມສິ້ນອາສະວະທັງຫຼາຍວ່າ "ອາສະວະຂອງເຮົາໝົດແລ້ວ"

**ຂີນາສະວະພະລະສູດທີ ໑໐ ຈົບ**

**ເຖຣະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ວາຫຸນະສູດ
໒. ປຸນນິຍະສູດ
໓. ກັດຖີສູດ
໔. ນັບປີຍະສູດ
໕. ໂກກາລິກະສູດ
໖. ອານັນທະສູດ
໗. ພະຍາກະຣະນະສູດ
໘. ອະທິມານະສູດ
໙. ອັກໂກສະກະສູດ
໑໐. ຂີນາສະວະພະລະສູດ

# ໕. ອຸປາສະກະວັກ

## ໝວດວ່າດ້ວຍອຸປາສົກ

## ໑. ກາມະໂພຄີສູດ

### ວ່າດ້ວຍກາມໂພຄີບຸກຄົນ[១]

[໙໑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຮາມຂອງ ອະນາຖະບິນດິກະຄະຫະບໍດີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ອະນາຖະບິນດິກະຄະຫະບໍດີ ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດກັບອະນາຖະບິນດິກະຄະຫະບໍດີດັ່ງນີ້ ວ່າ

ຄະຫະບໍດີ ກາມໂພຄີບຸກຄົນ ໑໐ ຈຳພວກນີ້ ມີຜາກົດຢູ່ໃນໂລກ

ກາມໂພຄີບຸກຄົນ ໑໐ ຈຳພວກໃດແດ່ ຄື

໑. ກາມໂພຄີບຸກຄົນລາງຄົນໃນໂລກນີ້ສະແຫວງຫາໂພຄະຊັບໂດຍບໍ່ຊອບທຳ ດ້ວຍວຽກງານທີ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ບໍ່ບຳລຸງຕົນໃຫ້ເປັນສຸກ ແລະບໍ່ແຈກຈ່າຍ ບໍ່ທຳບຸນ

໒. ກາມໂພຄີບຸກຄົນລາງຄົນໃນໂລກນີ້ສະແຫວງຫາໂພຄະຊັບໂດຍບໍ່ຊອບທຳ ດ້ວຍວຽກງານທີ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ບຳລຸງຕົນໃຫ້ເປັນສຸກ ແຕ່ບໍ່ແຈກຈ່າຍ ບໍ່ທຳບຸນ

໓. ກາມໂພຄີບຸກຄົນລາງຄົນໃນໂລກນີ້ສະແຫວງຫາໂພຄະຊັບໂດຍບໍ່ຊອບທຳ ດ້ວຍວຽກງານທີ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ບຳລຸງຕົນໃຫ້ເປັນສຸກ ແລະ ແຈກຈ່າຍ ທຳບຸນ

໔. ກາມໂພຄີບຸກຄົນລາງຄົນໃນໂລກນີ້ສະແຫວງຫາໂພຄະຊັບທັງໂດຍຊອບທຳ ແລະບໍ່ຊອບທຳ ດ້ວຍວຽກງານທີ່ຜິດແດ່ ບໍ່ຜິດແດ່ ເມື່ອສະແຫວງຫາໄດ້ແລ້ວ ບໍ່ບຳລຸງຕົນໃຫ້ເປັນສຸກ ແລະບໍ່ແຈກຈ່າຍ ບໍ່ທຳບຸນ

໕. ການໂພຄີບຸກຄົນລາງຄົນໃນໂລກນີ້ສະແຫວງຫາໂພຄະຊັບທັງໂດຍຊອບທຳ ແລະບໍ່ຊອບທຳ ດ້ວຍວຽກງານທີ່ຜິດແດ່ ບໍ່ຜິດແດ່ ເມື່ອສະແຫວງຫາໄດ້ແລ້ວ ບຳລຸງຕົນໃຫ້ເປັນສຸກ ແຕ່ບໍ່ແຈກຈ່າຍ ບໍ່ທຳບຸນ

໖. ການໂພຄີບຸກຄົນລາງຄົນໃນໂລກນີ້ສະແຫວງຫາໂພຄະຊັບທັງໂດຍຊອບທຳ ແລະບໍ່ຊອບທຳ ດ້ວຍວຽກງານທີ່ຜິດແດ່ ບໍ່ຜິດແດ່ ເມື່ອສະແຫວງຫາໄດ້ແລ້ວ ບຳລຸງຕົນໃຫ້ເປັນສຸກ ແລະແຈກຈ່າຍ ທຳບຸນ

໗. ການໂພຄີບຸກຄົນລາງຄົນໃນໂລກນີ້ສະແຫວງຫາໂພຄະຊັບໂດຍຊອບທຳ ດ້ວຍວຽກງານທີ່ບໍ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ບໍ່ບຳລຸງຕົນໃຫ້ເປັນສຸກ ແລະບໍ່ແຈກຈ່າຍ ບໍ່ທຳບຸນ

໘. ການໂພຄີບຸກຄົນລາງຄົນໃນໂລກນີ້ສະແຫວງຫາໂພຄະຊັບໂດຍຊອບທຳ ດ້ວຍວຽກງານທີ່ບໍ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ບຳລຸງຕົນໃຫ້ເປັນສຸກ ແຕ່ບໍ່ແຈກຈ່າຍ ບໍ່ທຳບຸນ

໙. ການໂພຄີບຸກຄົນລາງຄົນໃນໂລກນີ້ສະແຫວງຫາໂພຄະຊັບໂດຍຊອບທຳ ດ້ວຍວຽກງານທີ່ບໍ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ບຳລຸງຕົນໃຫ້ເປັນສຸກ ແລະແຈກຈ່າຍ ທຳບຸນ ແຕ່ເປັນຜູ້ມົວເມົາ ໝົກມຸ້ນ ຈົດຈໍ່ ບໍ່ເຫັນໂທດ ບໍ່ມີປັນຍາເປັນເຄື່ອງສະລັດອອກ ໃຊ້ສອຍໂພຄະຊັບເຫຼົ່ານັ້ນ

໑໐. ການໂພຄີບຸກຄົນລາງຄົນໃນໂລກນີ້ສະແຫວງຫາໂພຄະຊັບໂດຍຊອບທຳ ດ້ວຍວຽກງານທີ່ບໍ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ບຳລຸງຕົນໃຫ້ເປັນສຸກ ແລະແຈກຈ່າຍ ທຳບຸນ ທັງເປັນຜູ້ບໍ່ມົວເມົາ ບໍ່ໝົກມຸ້ນ ບໍ່ຈົດຈໍ່ ເຫັນໂທດ ມີປັນຍາ ເປັນເຄື່ອງສະລັດອອກ ໃຊ້ສອຍໂພຄະຊັບເຫຼົ່ານັ້ນ

ບັນດາການໂພຄີບຸກຄົນ ໑໐ ຈຳພວກນັ້ນ ການໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບໂດຍບໍ່ຊອບທຳ ດ້ວຍວຽກງານທີ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ບໍ່ບຳລຸງຕົນໃຫ້ເປັນສຸກ ບໍ່ແຈກຈ່າຍ ບໍ່ທຳບຸນນີ້ ຄວນຕິຕຽນໂດຍ ໓ ສະຖານ ຄື ຄວນຕິຕຽນໂດຍສະຖານທີ ໑ ນີ້ວ່າ "ສະແຫວງຫາໂພຄະຊັບໂດຍບໍ່ຊອບທຳ ດ້ວຍວຽກງານທີ່ຜິດ" ຄວນຕິຕຽນໂດຍສະຖານທີ ໒ ນີ້ວ່າ "ບໍ່ບຳລຸງຕົນໃຫ້ເປັນສຸກ" ຄວນຕິຕຽນໂດຍສະຖານທີ ໓ ນີ້ວ່າ "ບໍ່ແຈກຈ່າຍ ບໍ່ທຳບຸນ" ຄະຫະບໍດີ ການໂພຄີບຸກຄົນນີ້ ຄວນຕິຕຽນໂດຍ ໓ ສະຖານນີ້ (໑)

ການໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບໂດຍບໍ່ຊອບທຳ ດ້ວຍວຽກງານທີ່ຜິດ ເມື່ອສະແຫວງ ຫາໄດ້ແລ້ວ ບຳລຸງຕົນໃຫ້ເປັນສຸກ ແຕ່ບໍ່ແຈກຈ່າຍ ບໍ່ທຳບຸນນີ້ ຄວນຕິຕຽນໂດຍ ໒ ສະຖານ ຄວນສັນເສີນໂດຍສະຖານດຽວ ຄື ຄວນຕິຕຽນໂດຍສະຖານທີ່ ໑ ນີ້ວ່າ "ສະແຫວງຫາໂພຄະຊັບໂດຍບໍ່ຊອບທຳ ດ້ວຍວຽກງານທີ່ຜິດ" ຄວນສັນເສີນໂດຍສະຖານດຽວນີ້ວ່າ "ບຳລຸງຕົນໃຫ້ເປັນສຸກ" ຄວນຕິຕຽນໂດຍສະຖານທີ ໒ ນີ້ວ່າ "ບໍ່ແຈກຈ່າຍ ບໍ່ທຳບຸນ" ຄະຫະບໍດີ ການໂພຄີບຸກຄົນນີ້ ຄວນຕິຕຽນໂດຍ ໒ ສະຖານນີ້ ແຕ່ຄວນສັນເສີນ ໂດຍສະຖານດຽວນີ້ (໒)

ການໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບໂດຍບໍ່ຊອບທຳ ດ້ວຍວຽກງານທີ່ຜິດ ເມື່ອສະແຫວງ ຫາໄດ້ແລ້ວ ບຳລຸງຕົນໃຫ້ເປັນສຸກ ແລະແຈກຈ່າຍ ທຳບຸນນີ້ ຄວນຕິຕຽນໂດຍສະຖານດຽວ ຄວນສັນເສີນໂດຍ ໒ ສະຖານ ຄື ຄວນຕິຕຽນໂດຍສະຖານດຽວນີ້ວ່າ "ສະ ແຫວງຫາໂພຄະຊັບໂດຍບໍ່ຊອບທຳ ດ້ວຍວຽກງານທີ່ຜິດ" ຄວນສັນເສີນໂດຍສະຖານທີ ໑ ນີ້ວ່າ "ບຳລຸງຕົນໃຫ້ເປັນສຸກ" ຄວນສັນເສີນໂດຍສະຖານທີ ໒ ນີ້ວ່າ "ແຈກຈ່າຍ ທຳບຸນ" ຄະຫະບໍດີ ການໂພຄີບຸກຄົນນີ້ ຄວນຕິຕຽນໂດຍສະຖານດຽວນີ້ ຄວນສັນເສີນໂດຍ ໒ ສະຖານນີ້ (໓)

ການໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບທັງໂດຍຊອບທຳແລະບໍ່ຊອບທຳ ດ້ວຍວຽກງານທີ່ຜິດແດ່ ບໍ່ຜິດແດ່ ເມື່ອສະແຫວງຫາໄດ້ແລ້ວ ບໍ່ບຳລຸງຕົນໃຫ້ເປັນສຸກ ແລະບໍ່ແຈກຈ່າຍ ບໍ່ທຳບຸນນີ້ ຄວນສັນເສີນໂດຍສະຖານດຽວ ຄວນຕິຕຽນໂດຍ ໓ ສະຖານ ຄື ຄວນສັນເສີນໂດຍສະຖານດຽວນີ້ວ່າ "ສະແຫວງຫາໂພຄະຊັບໂດຍຊອບທຳ ດ້ວຍວຽກງານທີ່ບໍ່ຜິດ" ຄວນຕິຕຽນໂດຍສະຖານທີ ໑ ນີ້ວ່າ "ສະແຫວງຫາໂພຄະຊັບໂດຍບໍ່ຊອບທຳ ດ້ວຍວຽກງານທີ່ຜິດ" ຄວນຕິຕຽນໂດຍສະຖານທີ ໒ ນີ້ວ່າ "ບໍ່ບຳລຸງຕົນໃຫ້ເປັນສຸກ" ຄວນ ຕິຕຽນໂດຍສະຖານທີ ໓ ນີ້ວ່າ "ບໍ່ແຈກຈ່າຍ ບໍ່ທຳບຸນ" ຄະຫະບໍດີ ການໂພຄີບຸກຄົນນີ້ ຄວນສັນເສີນໂດຍສະຖານດຽວນີ້ ຄວນຕິຕຽນໂດຍ ໓ ສະຖານນີ້ (໔)

ການໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບທັງໂດຍຊອບທຳແລະບໍ່ຊອບທຳ ດ້ວຍວຽກງານທີ່ຜິດແດ່ ບໍ່ຜິດແດ່ ເມື່ອສະແຫວງຫາໄດ້ແລ້ວ ບຳລຸງຕົນໃຫ້ເປັນສຸກ ແຕ່ບໍ່ ແຈກຈ່າຍ ບໍ່ທຳບຸນນີ້ ຄວນສັນເສີນໂດຍ ໒ ສະຖານ ຄວນຕິຕຽນໂດຍ ໒ ສະຖານ ຄື ຄວນສັນເສີນໂດຍສະຖານທີ ໑ ນີ້ວ່າ "ສະແຫວງຫາໂພຄະຊັບໂດຍຊອບທຳ ດ້ວຍວຽກງານທີ່ຜິດ" ຄວນຕິຕຽນໂດຍສະຖານທີ ໑ ນີ້ວ່າ "ສະແຫວງຫາໂພຄະຊັບໂດຍບໍ່ຊອບທຳ ດ້ວຍວຽກງານທີ່ຜິດ" ຄວນສັນເສີນໂດຍສະຖານທີ ໒ ນີ້ວ່າ "ບຳລຸງຕົນໃຫ້ເປັນສຸກ" ຄວນ ຕິຕຽນໂດຍສະຖານທີ ໒ ນີ້ວ່າ "ບໍ່ແຈກຈ່າຍ ບໍ່ທຳບຸນ" ຄະຫະບໍດີ ການໂພຄີບຸກຄົນນີ້ຄວນສັນເສີນໂດຍ ໒ ສະຖານນີ້ ຄວນຕິຕຽນໂດຍ ໒ ສະຖານນີ້ (໕)

ການໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບທັງໂດຍຊອບທຳແລະບໍ່ຊອບທຳ ດ້ວຍວຽກງານທີ່ຜິດແດ່ ບໍ່ຜິດແດ່ ເມື່ອສະແຫວງຫາໄດ້ແລ້ວ ບຳລຸງຕົນໃຫ້ເປັນສຸກ ແລະແຈກຈ່າຍທຳບຸນນີ້ ຄວນສັນເສີນໂດຍ ໓ ສະຖານ ຄວນຕິຕຽນໂດຍສະຖານດຽວ ຄື ຄວນສັນເສີນໂດຍສະຖານທີ ໑ ນີ້ວ່າ "ສະແຫວງຫາໂພຄະຊັບໂດຍຊອບທຳ ດ້ວຍວຽກງານທີ່ບໍ່ຜິດ" ຄວນຕິຕຽນໂດຍສະຖານດຽວນີ້ວ່າ "ສະແຫວງຫາໂພຄະຊັບໂດຍບໍ່ຊອບທຳ ດ້ວຍວຽກງານທີ່ຜິດ" ຄວນສັນເສີນໂດຍສະຖານທີ ໒ ນີ້ວ່າ "ບຳລຸງຕົນໃຫ້ເປັນສຸກ" ຄວນສັນເສີນໂດຍສະຖານທີ ໓ ນີ້ວ່າ "ແຈກຈ່າຍ ທຳບຸນ" ຄະຫະບໍດີ ການໂພຄີບຸກຄົນຜູ້ບໍຣິໂພກກາມມະຄຸນນີ້ ຄວນສັນເສີນ ໂດຍ ໓ ສະຖານນີ້ ຄວນຕິຕຽນໂດຍສະຖານດຽວນີ້ (໕)

ການໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບໂດຍຊອບທຳ ດ້ວຍວຽກງານທີ່ບໍ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ບໍ່ບຳລຸງຕົນໃຫ້ເປັນສຸກ ແລະບໍ່ແຈກຈ່າຍ ບໍ່ທຳບຸນນີ້ ຄວນສັນເສີນ ໂດຍສະຖານດຽວ ຄວນຕິຕຽນໂດຍ ໒ ສະຖານ ຄື ຄວນສັນເສີນໂດຍສະຖານດຽວນີ້ວ່າ "ສະແຫວງຫາໂພຄະຊັບໂດຍຊອບທຳ ດ້ວຍວຽກງານທີ່ບໍ່ຜິດ" ຄວນຕິຕຽນໂດຍສະຖານທີ ໑ ນີ້ວ່າ "ບໍ່ບຳລຸງຕົນໃຫ້ເປັນສຸກ" ຄວນຕິຕຽນໂດຍສະຖານທີ ໒ ນີ້ວ່າ "ບໍ່ແຈກຈ່າຍ ບໍ່ທຳບຸນ" ຄະຫະບໍດີ ການໂພຄີບຸກຄົນນີ້ ຄວນສັນເສີນໂດຍສະຖານດຽວນີ້ ຄວນຕິຕຽນ ໂດຍ ໒ ສະຖານນີ້ (໗)

ການໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບໂດຍຊອບທຳ ດ້ວຍວຽກງານທີ່ບໍ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ບຳລຸງຕົນໃຫ້ເປັນສຸກ ແຕ່ບໍ່ແຈກຈ່າຍ ບໍ່ທຳບຸນນີ້ ຄວນສັນເສີນ ໂດຍ ໒ ສະຖານ ຄວນຕິຕຽນໂດຍສະຖານດຽວ ຄື ຄວນສັນເສີນໂດຍສະຖານທີ ໑ ນີ້ວ່າ "ສະແຫວງຫາໂພຄະຊັບໂດຍຊອບທຳ ດ້ວຍວຽກງານທີ່ບໍ່ຜິດ" ຄວນສັນເສີນໂດຍສະຖານທີ ໒ ນີ້ວ່າ "ບຳລຸງຕົນໃຫ້ເປັນສຸກ" ຄວນຕິຕຽນໂດຍສະຖານດຽວນີ້ວ່າ "ບໍ່ແຈກຈ່າຍ ບໍ່ທຳບຸນ" ຄະຫະບໍດີ ການໂພຄີບຸກຄົນນີ້ ຄວນສັນເສີນໂດຍ ໒ ສະຖານນີ້ ຄວນຕິຕຽນ ໂດຍສະຖານດຽວນີ້ (໘)

ການໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບໂດຍຊອບທຳ ດ້ວຍວຽກງານທີ່ບໍ່ຜິດ ເມື່ອສະແຫວງ ຫາໄດ້ແລ້ວ ບຳລຸງຕົນໃຫ້ເປັນສຸກ ແລະແຈກຈ່າຍ ທຳບຸນ ທັງເປັນຜູ້ມົວເມົາ ໝົກມຸ້ນ ຈົດຈໍ່ ບໍ່ເຫັນໂທດ ບໍ່ມີປັນຍາເປັນເຄື່ອງສະລັດອອກ ໃຊ້ສອຍໂພຄະຊັບເຫຼົ່ານັ້ນນີ້ ຄວນສັນເສີນໂດຍ ໓ ສະຖານ ຄວນຕິຕຽນໂດຍສະຖານດຽວ ຄື ຄວນສັນເສີນໂດຍສະຖານທີ ໑ ນີ້ວ່າ "ສະແຫວງຫາໂພຄະຊັບໂດຍຊອບທຳ ດ້ວຍວຽກງານທີ່ບໍ່ຜິດ" ຄວນສັນເສີນໂດຍສະຖານທີ ໒ ນີ້ວ່າ "ບຳລຸງຕົນໃຫ້ເປັນສຸກ" ຄວນສັນເສີນໂດຍສະຖານທີ ໓ ນີ້ວ່າ "ແຈກຈ່າຍ ທຳບຸນ" ຄວນຕິຕຽນໂດຍສະຖານດຽວນີ້ວ່າ "ເປັນຜູ້ມົວເມົາ ໝົກມຸ້ນ ຈົດຈໍ່ ບໍ່ເຫັນໂທດ ບໍ່ມີປັນຍາເປັນເຄື່ອງສະລັດອອກ ໃຊ້ສອຍໂພຄະຊັບ ເຫຼົ່ານັ້ນ" ຄະຫະບໍດີ ການໂພຄີບຸກຄົນນີ້ ຄວນສັນເສີນໂດຍ ໓ ສະຖານນີ້ ຄວນຕິຕຽນໂດຍສະຖານດຽວນີ້ (໙)

ກາມໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບໂດຍຊອບທຳ ດ້ວຍວຽກງານທີ່ບໍ່ຜິດ ເມື່ອສະແຫວງ ຫາໄດ້ແລ້ວ ບຳລຸງຕົນໃຫ້ເປັນສຸກ ແລະແຈກຈ່າຍ ທຳບຸນ ທັງເປັນຜູ້ບໍ່ມົວເມົາ ບໍ່ໝົກມຸ້ນ ບໍ່ຈົດຈໍ່ ເຫັນໂທດ ມີປັນຍາເປັນເຄື່ອງສະລັດອອກ ໃຊ້ສອຍໂພຄະຊັບ ເຫຼົ່ານັ້ນນີ້ ຄວນສັນເສີນໂດຍ ໔ ສະຖານ ຄື ຄວນສັນເສີນໂດຍສະຖານທີ ໑ ນີ້ວ່າ "ສະແຫວງຫາໂພຄະຊັບໂດຍຊອບທຳ ດ້ວຍວຽກງານທີ່ບໍ່ຜິດ" ຄວນສັນເສີນໂດຍສະຖານທີ ໔ ນີ້ວ່າ "ບຳລຸງຕົນໃຫ້ເປັນສຸກ" ຄວນສັນເສີນໂດຍສະຖານທີ ໓ ນີ້ວ່າ "ແຈກຈ່າຍ ທຳບຸນ" ຄວນສັນເສີນໂດຍສະຖານທີ ໔ ນີ້ວ່າ "ບໍ່ມົວເມົາ ບໍ່ໝົກມຸ້ນ ບໍ່ຈົດຈໍ່ ເຫັນໂທດ ມີປັນຍາເປັນເຄື່ອງສະລັດອອກ ໃຊ້ສອຍໂພຄະຊັບເຫຼົ່ານັ້ນ" ຄະຫະບໍດີ ກາມໂພຄີບຸກຄົນນີ້ ຄວນສັນເສີນໂດຍ ໔ ສະຖານນີ້ (໑໐)

ຄະຫະບໍດີ ກາມໂພຄີບຸກຄົນ ໑໐ ຈຳພວກນີ້ແລ ມີຜາກົດຢູ່ໃນໂລກ

ບັນດາກາມໂພຄີບຸກຄົນ ໑໐ ຈຳພວກນີ້ ກາມໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບໂດຍຊອບທຳ ດ້ວຍວຽກງານທີ່ບໍ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ບຳລຸງຕົນໃຫ້ເປັນສຸກ ແລະ ແຈກຈ່າຍ ທຳບຸນ ທັງເປັນຜູ້ບໍ່ມົວເມົາ ບໍ່ໝົກມຸ້ນ ບໍ່ຈົດຈໍ່ ເຫັນໂທດ ມີປັນຍາເປັນເຄື່ອງສະລັດອອກ ໃຊ້ສອຍໂພຄະຊັບເຫຼົ່ານັ້ນນີ້ ເປັນຜູ້ເລີດ ປະເສີດ ເປັນຫົວໜ້າ ສູງສົ່ງ ລ້ຳເລີດ ປຽບຄືນົມສົດທີ່ເກີດຈາກແມ່ງົວ ນົມສົ້ມເກີດຈາກນົມສົດ ເນີຍຂຸ້ນເກີດຈາກນົມສົ້ມ ເນີຍໃສເກີດຈາກເນີຍຂຸ້ນ ຫົວເນີຍໃສເກີດຈາກເນີຍໃສ ຊາວໂລກຮຽກວ່າ ເລີດກວ່ານົມສົ້ມເປັນຕົ້ນ ເຫຼົ່ານັ້ນ ສັນໃດ ບັນດາກາມໂພຄີບຸກຄົນ ໑໐ ຈຳພວກນີ້ ກາມໂພຄີບຸກຄົນທີ່ສະແຫວງຫາໂພຄະຊັບໂດຍຊອບທຳ ດ້ວຍວຽກງານທີ່ບໍ່ຜິດ ເມື່ອສະແຫວງຫາໄດ້ແລ້ວ ບຳລຸງຕົນໃຫ້ເປັນສຸກ ແລະແຈກຈ່າຍ ທຳບຸນ ທັງເປັນຜູ້ບໍ່ມົວເມົາ ບໍ່ໝົກມຸ້ນ ບໍ່ຈົດຈໍ່ ເຫັນໂທດ ມີປັນຍາເປັນເຄື່ອງສະລັດອອກ ໃຊ້ສອຍໂພຄະຊັບເຫຼົ່ານັ້ນນີ້ ເປັນຜູ້ເລີດ ປະເສີດ ເປັນຫົວໜ້າສູງສົ່ງ ລ້ຳເລີດ ຄືກັນສັນນັ້ນ

**ກາມໂພຄີສູດທີ ໑ ຈົບ**

## ໔. ພະຍະສູດ

## ວ່າດ້ວຍໄພເວນ

[໙໔] ຄັ້ງນັ້ນແລ ອະນາຖະບິນດິກະຄະຫະບໍດີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດກັບອະນາຖະບິນດິກະຄະຫະບໍດີ ດັ່ງນີ້ ວ່າ

ຄະຫະບໍດີ ເມື່ອໃດ ອະຣິຍະສາວົກລະງັບໄພເວນ ໕ ປະການໄດ້ແລ້ວ ປະກອບດ້ວຍອົງເຄື່ອງບັນລຸໂສດາ[໑] ໔ ປະການ ແລະເຫັນແຈ້ງແທງຕະຫຼອດອະຣິຍະຍາຍະທຳ[໒]ດ້ວຍປັນຍາ

ແລ້ວ ເມື່ອນັ້ນ ອະຣິຍະສາວົກນັ້ນ ເມື່ອຫວັງຢູ່ເພິ່ງພະຍາກອນຕົນເອງວ່າ "ເຮົາມີນະຣົກໝົດແລ້ວ ມີກຳເນີດສັດເດຍຣັດສານໝົດແລ້ວ ມີພູມແຫ່ງເຜດໝົດແລ້ວ ມີອະບາຍ ທຸກຄະຕິ ແລະວິນິບາດ[৩]ໝົດແລ້ວ ເປັນໂສດາບັນ[৫] ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິ[৬] ໃນມື້ທາງໜ້າ"

ອະຣິຍະສາວົກລະງັບໄພເວນ ໕ ປະການ ອັນໃດແດ່ ຄື

໑. ບຸກຄົນຜູ້ຂ້າສັດ ຍ້ອນການຂ້າສັດເປັນປັດໄຈ ຈຶ່ງປະສົບໄພເວນທີ່ເປັນໄປໃນປັດຈຸບັນແດ່ ໃນສຳປະຣາຍະພົບແດ່ ສະເຫວີຍທຸກໂທມະນັດທາງໃຈແດ່ ບຸກຄົນຜູ້ເວັ້ນຂາດຈາກການຂ້າສັດ ຍ່ອມບໍ່ປະສົບໄພເວນທີ່ເປັນໄປໃນປັດຈຸບັນ ທີ່ເປັນໄປໃນສຳປະຣາຍະພົບ ທັງບໍ່ຕ້ອງສະເຫວີຍທຸກໂທມະນັດທາງໃຈ ບຸກຄົນຜູ້ເວັ້ນຂາດຈາກການຂ້າສັດແລ້ວ ຍ່ອມລະງັບໄພເວນນັ້ນໄດ້ ແນວນີ້

໒. ບຸກຄົນຜູ້ລັກຊັບ ຯລຯ
໓. ບຸກຄົນຜູ້ປະພຶດຜິດໃນກາມ ຯລຯ
໔. ບຸກຄົນຜູ້ເວົ້າຕົວະ ຯລຯ

໕. ບຸກຄົນຜູ້ເສບຂອງມຶນເມົາຄືສຸຣາແລະເມໄຣ[໗]ອັນເປັນເຫດແຫ່ງຄວາມຜະໝາດ ຍ້ອນການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດເປັນປັດໄຈ ຈຶ່ງປະສົບໄພເວນທີ່ເປັນໄປໃນປັດຈຸບັນແດ່ ໃນສຳປະຣາຍະພົບແດ່ ຕ້ອງສະເຫວີຍທຸກໂທມະນັດທາງໃຈແດ່ ບຸກຄົນຜູ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣອັນເປັນເຫດແຫ່ງຄວາມຜະໝາດແລ້ວ ຍ່ອມບໍ່ປະສົບໄພເວນທີ່ເປັນໄປໃນປັດຈຸບັນ ທີ່ເປັນໄປໃນສຳປະຣາຍະພົບ ທັງບໍ່ຕ້ອງສະເຫວີຍທຸກໂທມະນັດທາງໃຈ ບຸກຄົນຜູ້ເວັ້ນຂາດຈາກການເສບຂອງມຶນເມົາຄືສຸຣາແລະເມໄຣ ອັນເປັນເຫດແຫ່ງຄວາມຜະໝາດແລ້ວ ຍ່ອມລະງັບໄພເວນນັ້ນໄດ້ ແນວນີ້

ອະຣິຍະສາວົກລະງັບໄພເວນ ໕ ປະການ ເປັນແນວນີ້ແລ

ອະຣິຍະສາວົກປະກອບດ້ວຍອົງເຄື່ອງບັນລຸໂສດາ ໔ ປະການ ອັນໃດແດ່ ຄື

ອະຣິຍະສາວົກໃນທຳວິໄນນີ້

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະພຸດທະເຈົ້າວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດ

ສະຮູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ"

໘. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະທຳວ່າ "ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ"

໑. ປະກອບດ້ວຍຄວາມເຫຼື້ອມໃສອັນບໍ່ຫວັ່ນໄຫວໃນພຣະສົງວ່າ "ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ປະຕິບັດດີ ປະຕິບັດກົງ ປະຕິບັດຖືກທາງ ປະຕິບັດສົມຄວນ ໄດ້ແກ່ ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ ເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ"

໔. ປະກອບດ້ວຍສີນທີ່ພຣະອະຣິຍະຕ້ອງການ ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນອິດສະຫຼະ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາແລະທິດຖິຄອບງຳ ເປັນໄປເພື່ອສະມາທິ

ອະຣິຍະສາວົກປະກອບດ້ວຍອົງເຄື່ອງບັນລຸໂສດາ ໔ ປະການ ເປັນແນວນີ້ແລ

ອະຣິຍະສາວົກນັ້ນເຫັນແຈ້ງແທງຕະຫຼອດອະຣິຍະຍາຍະທຳດ້ວຍປັນຍາ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້ພິຈານາເຫັນແນວນີ້ວ່າ "ຍ້ອນເຫດນີ້ ເມື່ອສິ່ງນີ້ມີ ສິ່ງນີ້ຈຶ່ງມີ ຍ້ອນສິ່ງນີ້ເກີດຂຶ້ນ ສິ່ງນີ້ຈຶ່ງເກີດຂຶ້ນ ເມື່ອສິ່ງນີ້ບໍ່ມີ ສິ່ງນີ້ຈຶ່ງບໍ່ມີ ຍ້ອນສິ່ງນີ້ດັບໄປ ສິ່ງນີ້ຈຶ່ງດັບໄປ" ຄື

| | | |
|---|---|---|
| ຍ້ອນອະວິດຊາ | ເປັນປັດໄຈ | ສັງຂານຈຶ່ງມີ |
| ຍ້ອນສັງຂານ | ເປັນປັດໄຈ | ວິນຍານຈຶ່ງມີ |
| ຍ້ອນວິນຍານ | ເປັນປັດໄຈ | ນາມຮູບຈຶ່ງມີ |
| ຍ້ອນນາມຮູບ | ເປັນປັດໄຈ | ສະລາຍະຕະນະຈຶ່ງມີ |
| ຍ້ອນສະລາຍະຕະນະ | ເປັນປັດໄຈ | ຜັດສະຈຶ່ງມີ |
| ຍ້ອນຜັດສະ | ເປັນປັດໄຈ | ເວທະນາຈຶ່ງມີ |

| | | |
|---|---|---|
| ຍ້ອນເວທະນາ | ເປັນປັດໄຈ | ຕັນຫາຈຶ່ງມີ |
| ຍ້ອນຕັນຫາ | ເປັນປັດໄຈ | ອຸປາທານຈຶ່ງມີ |
| ຍ້ອນອຸປາທານ | ເປັນປັດໄຈ | ພົບຈຶ່ງມີ |
| ຍ້ອນພົບ | ເປັນປັດໄຈ | ຊາດຈຶ່ງມີ |

ຍ້ອນຊາດ ເປັນປັດໄຈ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຈຶ່ງມີ ກອງທຸກທັງມວນນີ້ມີຄວາມເກີດຂຶ້ນດ້ວຍອາການແນວນີ້

| | |
|---|---|
| ຍ້ອນອະວິດຊາດັບໄປບໍ່ເຫຼືອ | ສັງຂານຈຶ່ງດັບ |
| ຍ້ອນສັງຂານດັບ | ວິນຍານຈຶ່ງດັບ |
| ຍ້ອນວິນຍານດັບ | ນາມຮູບຈຶ່ງດັບ |
| ຍ້ອນນາມຮູບດັບ | ສະລາຍະຕະນະຈຶ່ງດັບ |
| ຍ້ອນສະລາຍະຕະນະດັບ | ຜັດສະຈຶ່ງດັບ |
| ຍ້ອນຜັດສະດັບ | ເວທະນາຈຶ່ງດັບ |
| ຍ້ອນເວທະນາດັບ | ຕັນຫາຈຶ່ງດັບ |
| ຍ້ອນຕັນຫາດັບ | ອຸປາທານຈຶ່ງດັບ |
| ຍ້ອນອຸປາທານດັບ | ພົບຈຶ່ງດັບ |
| ຍ້ອນພົບດັບ | ຊາດຈຶ່ງດັບ |

ຍ້ອນຊາດດັບ ຊະຣາ ມໍລະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຈຶ່ງດັບ ກອງທຸກທັງມວນນີ້ມີຄວາມດັບດ້ວຍອາການແນວນີ້"

ອະຣິຍະສາວົກນັ້ນ ເຫັນແຈ້ງແທງຕະຫຼອດອະຣິຍະຍາຍະທຳດ້ວຍປັນຍາອັນຍິ່ງ ເປັນແນວນີ້ແລ

ເມື່ອໃດ ອະຣິຍະສາວົກລະງັບໄພເວນ ໕ ປະການນີ້ ປະກອບດ້ວຍອົງເຄື່ອງບັນລຸໂສດາ ໔ ປະການນີ້ ແລະເຫັນແຈ້ງແທງຕະຫຼອດອະຣິຍະຍາຍະທຳນີ້ແລ ດ້ວຍປັນຍາແລ້ວ ເມື່ອນັ້ນ ອະຣິຍະສາວົກນັ້ນ ເມື່ອຫວັງຢູ່ເພິ່ງພະຍາກອນຕົນເອງວ່າ "ເຮົາມີນະຣົກໝົດແລ້ວ ມີກຳເນີດສັດເດຍຣັດສານໝົດແລ້ວ ມີພູມແຫ່ງເຜດໝົດແລ້ວ ມີອະບາຍ ທຸກຄະຕິ ແລະວິນິບາດໝົດແລ້ວ ເປັນໂສດາບັນ ບໍ່ມີທາງຕົກຕ່ຳ ມີຄວາມແນ່ນອນທີ່ຈະສຳເລັດສຳໂພທິໃນມື້ທາງໜ້າ"

**ພະຍະສູດທີ ໘ ຈົບ**

## ໙. ກິງທິດທິກະສູດ

## ວ່າດ້ວຍຄຳຖາມກ່ຽວກັບທິດຖິ[១]

[໕໓] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງ ອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ທ່ານອະນາຖະບິນດິກະຄະຫະບໍດີ ໄດ້ອອກຈາກນະຄອນສາວັດຖີແຕ່ຍັງເວັນ ເພື່ອເຝົ້າພຣະຜູ້ມີພຣະພາກເຈົ້າ ຂະນະນັ້ນແລ ອະນາຖະບິນດິກະຄະຫະບໍດີໄດ້ມີຄວາມຄິດວ່າ "ຍັງບໍ່ແມ່ນເວລາທີ່ຈະເຝົ້າພຣະຜູ້ມີພຣະພາກເຈົ້າ ຍ້ອນພຣະອົງຍັງຊົງຫຼີບຫຼີກ໔ ຢູ່ ຍັງບໍ່ແມ່ນເວລາທີ່ຈະຢ້ຽມຢາມພິກຂຸທັງຫຼາຍຜູ້ອົບຮົມຈິດ ຍ້ອນພິກຂຸເຫຼົ່ານັ້ນ ຍັງຫຼີບຫຼີກຢູ່ ທາງທີ່ດີ ເຮົາຄວນຈະເຂົ້າໄປສູ່ອາຣາມຂອງອັນຍະເດຍຣະຖີປະຣິພາຊົກ"

ຄັ້ງນັ້ນແລ ອະນາຖະບິນດິກະຄະຫະບໍດີເຂົ້າໄປສູ່ອາຣາມຂອງພວກອັນຍະເດຍຣະຖີປະຣິພາຊົກ ສະໄໝນັ້ນແລ ພວກອັນຍະເດຍຣະຖີປະຣິພາຊົກ ກຳລັງຮ່ວມປະຊຸມກັນ ສົ່ງສຽງເອັດອຶງ ນັ່ງສົນທະນາກັນເຖິງຕິຣັດສານະກະຖາມີປະການຕ່າງ ໆ ໄດ້ເຫັນທ່ານອະນາຖະບິນດິກະຄະຫະບໍດີຜູ້ກຳລັງ ຍ່າງມາແຕ່ໄກ ຈຶ່ງຊວນກັນໃຫ້ຢຸດວ່າ "ຈົ່ງງຽບສຽງເທີ້ນ ທ່ານທັງຫຼາຍຢ່າໄດ້ສົ່ງສຽງເລີຍ ອະນາຖະບິນດິກະຄະຫະບໍດີຄົນນີ້ ເປັນສາວົກຂອງພຣະສະມະນະໂຄດົມກຳລັງຍ່າງມາຍັງອາຣາມ ອະນາຖະບິນດິກະຄະຫະບໍດີນີ້ເປັນສາວົກຄົນໜຶ່ງບັນດາຄະລືຫັດຜູ້ນຸ່ງຫົ່ມຜ້າຂາວຂອງພຣະສະມະນໂຄດົມ ເຊິ່ງອາໄສຢູ່ໃນນະຄອນສາວັດຖີ ພວກເຂົາມັກສຽງເບົາ ຖືກເຝິກໃຫ້ມີສຽງເບົາ ກ່າວຊົມຜູ້ເວົ້າສຽງເບົາ ເຮັດແນວໃດ ເຂົາຮູ້ວ່າບໍລິສັດ[៦] ງຽບສຽງ ກໍຈະສຳຄັນວ່າຄວນເຂົ້າຫາ"

ບາດແລ້ວ ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນຈຶ່ງພາກັນມິດງຽບ ລຳດັບນັ້ນ ອະນາຖະບິນດິກະຄະຫະບໍດີເຂົ້າໄປຫາອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນຈຶ່ງຖາມວ່າ "ຄະຫະບໍດີ ຂໍທ່ານຈົ່ງບອກເທີ້ນ ພຣະສະມະນະໂຄດົມມີທິດຖິແນວໃດ"

ອະນາຖະບິນດິກະຄະຫະບໍດີຕອບວ່າ "ທ່ານຜູ້ຈະເລີນ ຂ້າພະເຈົ້າບໍ່ຮູ້ທິດຖິທັງໝົດຂອງພຣະຜູ້ມີພຣະພາກເຈົ້າເລີຍ"

"ຖ້າຈັ່ງຊັ້ນທ່ານຄະຫະບໍດີ ຕາມທີ່ທ່ານວ່າ ທ່ານບໍ່ຮູ້ທິດຖິທັງໝົດຂອງພຣະສະມະນະໂຄດົມ ຂໍທ່ານຈົ່ງບອກເທີ້ນ ພວກພິກຂຸມີທິດຖິແນວໃດ"

"ທ່ານຜູ້ຈະເລີນ ຂ້າພະເຈົ້າບໍ່ຮູ້ທິດຖິທັງໝົດຂອງພິກຂຸທັງຫຼາຍເລີຍ"

“ຖ້າຈັ່ງຊັ້ນທ່ານຄະຫະບໍດີ ຕາມທີ່ທ່ານວ່າ ທ່ານບໍ່ຮູ້ທິດຖິທັງໝົດຂອງພຣະສະມະນະໂຄດົມ ທັງບໍ່ຮູ້ທິດຖິທັງໝົດຂອງພວກພິກຂຸແນວນີ້ ທ່ານຈົ່ງບອກເທີ້ນ ທ່ານມີທິດຖິແນວໃດ”

“ທ່ານຜູ້ຈະເລີນ ບໍ່ຍາກທີ່ຂ້າພະເຈົ້າຈະບອກທິດຖິຂອງຂ້າພະເຈົ້າວ່າມີທິດຖິແນວໃດ ເຊີນທ່ານທັງຫຼາຍບອກທິດຖິຂອງຕົນກ່ອນເທີ້ນ ບໍ່ຍາກທີ່ຂ້າພະເຈົ້າຈັກບອກທິດຖິຂອງຂ້າພະເຈົ້າວ່າມີທິດຖິແນວໃດໃນພາຍຫຼັງ”

ເມື່ອອະນາຖະບິນດິກະຄະຫະບໍດີກ່າວແນວນີ້ແລ້ວ ປະຣິພາຊົກຄົນໜຶ່ງໄດ້ກ່າວກັບອະນາຖະບິນດິກະຄະຫະບໍດີວ່າ “ຄະຫະບໍດີ ເຮົາມີທິດຖິແນວນີ້ວ່າ “ໂລກທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ”

ປະຣິພາຊົກຄົນໜຶ່ງກ່າວກັບອະນາຖະບິນດິກະຄະຫະບໍດີວ່າ “ຄະຫະບໍດີ ເຮົາມີທິດຖິແນວນີ້ວ່າ “ໂລກບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ”

ແມ່ນປະຣິພາຊົກອີກຄົນໜຶ່ງກໍ່ກ່າວກັບອະນາຖະບິນດິກະຄະຫະບໍດີວ່າ “ໂລກມີບ່ອນສຸດຯລຯ” ອີກຄົນໜຶ່ງກ່າວວ່າ “ໂລກບໍ່ມີບ່ອນສຸດຯລຯ” ອີກຄົນໜຶ່ງກ່າວວ່າ “ຊີວະ°ກັບສະຣີຣະເປັນແນວດຽວກັນຯລຯ” ອີກຄົນໜຶ່ງກ່າວວ່າ “ຊີວະກັບສະຣີຣະເປັນຄົນລະແນວກັນຯລຯ” ອີກຄົນໜຶ່ງກ່າວວ່າ “ຫຼັງຈາກຕາຍແລ້ວຕະຖາຄົດ໌ເກີດອີກຯລຯ” ອີກຄົນໜຶ່ງກ່າວວ່າ “ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກຯລຯ” ອີກຄົນໜຶ່ງກ່າວວ່າ “ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍ່ມີ ບໍ່ເກີດອີກກໍ່ມີຯລຯ” ອີກຄົນໜຶ່ງກ່າວວ່າ “ຄະຫະບໍດີ ເຮົາມີທິດຖິແນວນີ້ວ່າ “ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍ່ບໍ່ແມ່ນ ບໍ່ເກີດອີກກໍ່ບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ”

ເມື່ອປະຣິພາຊົກກ່າວແນວນີ້ແລ້ວ ອະນາຖະບິນດິກະຄະຫະບໍດີຈຶ່ງໄດ້ກ່າວວ່າ “ຂ້າແດ່ພຣະຜູ້ເປັນເຈົ້າຜູ້ຈະເລີນ ທ່ານຜູ້ໃດກ່າວຢັ້ງຢືນແນວນີ້ວ່າ “ຄະຫະບໍດີ ເຮົາມີທິດຖິແນວນີ້ວ່າໂລກທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ” ທິດຖິຂອງທ່ານຜູ້ນີ້ເກີດຂຶ້ນຍ້ອນການມະນະສິການໂດຍບໍ່ແຍບຄາຍຂອງຕົນເປັນເຫດ ຫຼືຍ້ອນຄຳເວົ້າຂອງຜູ້ອື່ນເປັນເຫດ ກໍ່ທິດຖິນີ້ແລ ເກີດຂຶ້ນ ຖືກປັດໄຈປຸງແຕ່ງຂຶ້ນ ກໍ່ຂຶ້ນ ອີງອາໄສປັດໄຈເກີດຂຶ້ນ ກໍ່ສິ່ງໃດສິ່ງໜຶ່ງທີ່ເກີດຂຶ້ນ ຖືກປັດໄຈປຸງແຕ່ງຂຶ້ນ ກໍ່ຂຶ້ນ ອີງອາໄສປັດໄຈເກີດຂຶ້ນ ສິ່ງນັ້ນບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກສິ່ງນັ້ນທໍ່ນັ້ນທີ່ທ່ານຜູ້ນີ້ຕິດແລ້ວ ເຂົ້າເຖິງແລ້ວ

ແມ່ນທ່ານຜູ້ໃດກ່າວແນວນີ້ວ່າ “ຄະຫະບໍດີ ເຮົາມີທິດຖິແນວນີ້ວ່າ ໂລກບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ” ທິດຖິຂອງທ່ານຜູ້ນີ້ເກີດຂຶ້ນຍ້ອນການມະນະສິການໂດຍບໍ່ແຍບຄາຍຂອງຕົນເປັນເຫດ ຫຼື ຍ້ອນຄຳເວົ້າຂອງຜູ້ອື່ນເປັນເຫດ ກໍ່ທິດຖິນີ້ແລ ເກີດຂຶ້ນ ຖືກປັດໄຈປຸງແຕ່ງຂຶ້ນ ກໍ່ຂຶ້ນ ອີງອາໄສປັດໄຈເກີດຂຶ້ນ ກໍ່ສິ່ງໃດສິ່ງໜຶ່ງເກີດຂຶ້ນ ຖືກປັດໄຈປຸງແຕ່ງຂຶ້ນ ກໍ່ຂຶ້ນ ອີງອາໄສ

ປັດໄຈເກີດຂຶ້ນ ສິ່ງນັ້ນບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນທໍ່ນັ້ນທີ່ທ່ານຜູ້ນີ້ຕິດແລ້ວ ເຂົ້າເຖິງແລ້ວ

ແມ່ນທ່ານຜູ້ໃດກ່າວແບບນີ້ວ່າ "ຄະຫະບໍດີ ເຮົາມີທິດຖິແບບນີ້ວ່າ ໂລກມີບ່ອນສຸດ ໂລກບໍ່ມີບ່ອນສຸດ ຯລຯ ຊີວະກັບສະຣີຣະເປັນແບບດຽວກັນ ຯລຯ ຊີວະກັບສະຣີຣະເປັນຄົນລະແບບກັນ ຯລຯ ຫຼັງຈາກ ຕາຍແລ້ວຕະຖາຄົດເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກກໍມີ ບໍ່ເກີດອີກກໍມີ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແບບອື່ນບໍ່ຈິງ" ທິດຖິຂອງທ່ານຜູ້ນີ້ເກີດຂຶ້ນຍ້ອນການມະນະສິການໂດຍບໍ່ແຍບຄາຍເປັນເຫດ ຫຼືຍ້ອນຄຳເວົ້າຂອງຜູ້ອື່ນເປັນເຫດ ກໍທິດຖິນີ້ແລ ເກີດຂຶ້ນ ຖືກປັດໄຈປຸງແຕ່ງຂຶ້ນ ກໍ່ຂຶ້ນ ອີງອາໄສປັດໄຈເກີດຂຶ້ນ ກໍສິ່ງໃດສິ່ງໜຶ່ງເກີດຂຶ້ນຖືກປັດໄຈປຸງແຕ່ງຂຶ້ນ ກໍ່ຂຶ້ນ ອີງອາໄສປັດໄຈເກີດຂຶ້ນ ສິ່ງນັ້ນບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນທໍ່ນັ້ນທີ່ທ່ານຜູ້ນີ້ຕິດແລ້ວ ເຂົ້າເຖິງແລ້ວ"

ເມື່ອອະນາຖະບິນດິກະຄະຫະບໍດີກ່າວແບບນີ້ແລ້ວ ປະຣິພາຊົກເຫຼົ່ານັ້ນຈຶ່ງໄດ້ກ່າວວ່າ "ຄະຫະບໍດີ ເຮົາທັງໝົດບອກທິດຖິຂອງຕົນແລ້ວ ຂໍທ່ານຈົ່ງບອກເທີ້ນ ທ່ານມີທິດຖິແບບໃດ?"

"ທ່ານຜູ້ຈະເລີນ ສິ່ງໃດສິ່ງໜຶ່ງເກີດຂຶ້ນ ຖືກປັດໄຈປຸງແຕ່ງຂຶ້ນ ກໍ່ຂຶ້ນ ອີງອາໄສປັດໄຈເກີດຂຶ້ນ ສິ່ງນັ້ນບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນຂ້າພະເຈົ້າ ມີທິດຖິແບບນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ"

"ຄະຫະບໍດີ ສິ່ງໃດສິ່ງໜຶ່ງເກີດຂຶ້ນ ຖືກປັດໄຈປຸງແຕ່ງຂຶ້ນ ກໍ່ຂຶ້ນ ອີງອາໄສປັດໄຈ ເກີດຂຶ້ນ ສິ່ງນັ້ນບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນທໍ່ນັ້ນ ທີ່ທ່ານເອງຕິດແລ້ວ ເຂົ້າເຖິງແລ້ວ"

"ທ່ານຜູ້ຈະເລີນ ສິ່ງໃດສິ່ງໜຶ່ງເກີດຂຶ້ນ ຖືກປັດໄຈປຸງແຕ່ງຂຶ້ນ ກໍ່ຂຶ້ນ ອີງອາໄສ ປັດໄຈເກີດຂຶ້ນ ສິ່ງນັ້ນບໍ່ທ່ຽງ ສິ່ງໃດບໍ່ທ່ຽງ ສິ່ງນັ້ນເປັນທຸກ ສິ່ງໃດເປັນທຸກ ສິ່ງນັ້ນຂ້າພະເຈົ້າໄດ້ເຫັນດີແລ້ວດ້ວຍປັນຍາອັນຖືກຕ້ອງຕາມຄວາມເປັນຈິງແບບນີ້ວ່າ "ນັ້ນບໍ່ແມ່ນຂອງເຮົາ ເຮົາບໍ່ເປັນນັ້ນ ນັ້ນບໍ່ແມ່ນອັດຕາຂອງເຮົາ" ແລະຮູ້ແຈ້ງອຸບາຍເປັນເຄື່ອງສະລັດອອກເຊິ່ງສິ່ງນັ້ນແບບປະເສີດຕາມຄວາມເປັນຈິງ"

ເມື່ອອະນາຖະບິນດິກະຄະຫະບໍດີກ່າວແບບນີ້ແລ້ວ ປະຣິພາຊົກເຫຼົ່ານັ້ນພາກັນນັ່ງມິດເກີ້ເຂີນ ຄໍຕົກ ກົ້ມໜ້າ ຈຸກເຈົ່າ ໂຕ້ຕອບບໍ່ໄດ້ ອະນາຖະບິນດິກະຄະຫະບໍດີຮູ້ວ່າປະຣິພາຊົກເຫຼົ່ານັ້ນພາກັນນັ່ງມິດ ເກີ້ເຂີນ ຄໍຕົກ ກົ້ມໜ້າ ຈຸກເຈົ່າ ໂຕ້ຕອບບໍ່ໄດ້ ຈຶ່ງລຸກຈາກບ່ອນນັ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນ

ເລື້ອງທີ່ສົນທະນາປາໄສກັບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແດ່ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮູ້ທຸກປະການ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ແນວນັ້ນແລ ຄະຫະບໍດີ ທ່ານສາມາດຂົ່ມໂມຄະບຸຣຸດເຫຼົ່ານັ້ນ ໄດ້ຢ່າງແນບນຽນຕາມການອັນຄວນ ໂດຍຊອບທຳ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຊົງຊີ້ແຈ່ງໃຫ້ອະນາຖະບິນດິກະຄະຫະບໍດີເຫັນແຈ້ງນ້ອມໃຈ ໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮຳໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ອະນາຖະບິນດິກະຄະຫະບໍດີກໍລຸກຈາກບ່ອນນັ່ງ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າກະທຳປະທັກຂິນແລ້ວຫຼີກໄປ

ເມື່ອອະນາຖະບິນດິກະຄະຫະບໍດີຫຼີກໄປບໍ່ດົນ ພຣະຜູ້ມີພຣະພາກເຈົ້າຈຶ່ງຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ ພິກຂຸໃດບວດໄດ້ ໑໐໐ ພັນສາ ໃນທຳວິໄນນີ້ ແມ່ນພິກຂຸນັ້ນ ກໍເພິ່ງຂົ່ມພວກອັນຍະເດຍຣະຖີປະຣິພາຊົກໄດ້ຢ່າງແນບນຽນ ໂດຍຊອບທຳແນວນີ້ ຄືອະນາຖະບິນດິກະຄະຫະບໍດີຂົ່ມໄດ້ແລ້ວ"

**ກົງທິດທິກະສູດທີ ໓ ຈົບ**

## ໔. ວັດຊິຍະມາຫິຕະສູດ

## ວ່າດ້ວຍວັດຊິຍະມາຫິຕະຄະຫະບໍດີ

[໙໔] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ແຄມຝັ່ງສະຄັກຄະຣາໂບກຂະຣະນີເຂດນະຄອນຈຳປາ ຄັ້ງນັ້ນ ວັດຊິຍະມາຫິຕະຄະຫະບໍດີອອກຈາກນະຄອນຈຳປາແຕ່ຍັງເວັນເພື່ອເຝົ້າ ພຣະຜູ້ມີພຣະພາກເຈົ້າ ໄດ້ມີຄວາມຄິດວ່າ "ຍັງບໍ່ແມ່ນເວລາທີ່ຈະເຝົ້າພຣະຜູ້ມີພຣະພາກເຈົ້າ ຍ້ອນພຣະອົງຍັງຊົງຫຼີບຫຼີກຢູ່ ຍັງບໍ່ແມ່ນເວລາທີ່ຈະຢ້ຽມຢາມພິກຂຸທັງຫຼາຍຜູ້ອົບຮົມຈິດ ຍ້ອນພິກຂຸເຫຼົ່ານັ້ນຍັງຫຼີບຫຼີກຢູ່ ທາງທີ່ດີ ເຮົາຄວນຈະເຂົ້າໄປສູ່ອາຣາມຂອງອັນຍະເດຍຣະຖີ ປະຣິພາຊົກ"

ຄັ້ງນັ້ນແລ ວັດຊິຍະມາຫິຕະຄະຫະບໍດີເຂົ້າໄປສູ່ອາຣາມຂອງພວກອັນຍະເດຍຣະຖີປະຣິພາຊົກ ສະໄໝນັ້ນແລ ພວກອັນຍະເດຍຣະຖີປະຣິພາຊົກກຳລັງຮ່ວມປະຊຸມກັນ ສົ່ງສຽງເອັດອຶງນັ່ງສົນທະນາກັນເຖິງຕິຣັດສານະກະຖາ¹ມີປະການຕ່າງ ໆ ໄດ້ເຫັນວັດຊິຍະມາຫິຕະຄະຫະບໍດີຜູ້ກຳລັງຍ່າງມາແຕ່ໄກ ຈຶ່ງຊວນກັນໃຫ້ຢຸດວ່າ "ຈົ່ງງຽບສຽງເທີ້ນ ທ່ານທັງຫຼາຍຢ່າໄດ້ສົ່ງສຽງເລີຍວັດຊິຍະມາຫິຕະຄະຫະບໍດີຄົນນີ້ເປັນສາວົກຂອງພຣະສະມະນະໂຄດົມກຳລັງຍ່າງມາຍັງອາຣາມ

ວັດຊິຍະມາຫິຕະຄະຫະບໍດີນີ້ ເປັນສາວົກຄົນໜຶ່ງບັນດາຄະລິຫັດຜູ້ນຸ່ງຫົ່ມຜ້າຂາວຂອງພຣະສະມະນະໂຄດົມ ເຊິ່ງອາໄສຢູ່ໃນນະຄອນຈຳປາ ພວກເຂົາມັກສຽງເບົາ ຖືກເຝິກໃຫ້ມີສຽງເບົາ ກ່າວຊົມຜູ້ເວົ້າສຽງເບົາ ເຮັດແນວໃດ ເຂົາຮູ້ວ່າບໍລິສັດ໌ ງຽບສຽງ ກໍຈະສຳຄັນວ່າຄວນເຂົ້າຫາ"

ບັດແລ້ວ ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນຈຶ່ງພາກັນມິດງຽບ ລຳດັບນັ້ນ ວັດຊິຍະມາຫິຕະຄະຫະບໍດີເຂົ້າໄປຫາອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ຮອດບ່ອນຢູ່ໄດ້ສົນທະນາປາສັຍພໍເປັນທີ່ ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນ ຈຶ່ງຖາມ ວ່າ

"ຄະຫະບໍດີ ໄນຍະວ່າ ພຣະສະມະນະໂຄດົມຊົງຕິຕຽນຕະບະທັງໝົດ ກ່າວໂທດຜູ້ມີຕະບະລັງງຊີບເສົ້າໝອງ໑ໂດຍສ່ວນດຽວ ແມ່ນບໍ?"

ວັດຊິຍະມາຫິຕະຄະຫະບໍດີຕອບວ່າ "ທ່ານຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຈະໄດ້ຊົງຕິຕຽນຕະບະທັງໝົດກໍເປັນໄປບໍ່ໄດ້ ຈະໄດ້ກ່າວໂທດຜູ້ມີຕະບະທຸກຄົນຜູ້ລັງງຊີບເສົ້າໝອງໂດຍສ່ວນດຽວກໍເປັນໄປບໍ່ໄດ້ ພຣະຜູ້ມີພຣະພາກເຈົ້າຊົງຕິຕຽນຕະບະທີ່ຄວນຕິຕຽນ ສັນເສີນຕະບະທີ່ຄວນສັນເສີນ ເມື່ອຊົງຕິຕຽນສິ່ງທີ່ຄວນຕິຕຽນ ສັນເສີນສິ່ງທີ່ຄວນສັນເສີນ ຈຶ່ງຊື່ວ່າວິພັດຊະວາທີ (ມີປົກກະຕິ ຕັດຈຳແນກ) ໃນເລື້ອງນີ້ພຣະຜູ້ມີພຣະພາກເຈົ້າບໍ່ແມ່ນເອກັງສະວາທີ(ມີປົກກະຕິຕັດໂດຍສ່ວນດຽວ)"

ເມື່ອວັດຊິຍະມາຫິຕະຄະຫະບໍດີກ່າວແນວນີ້ແລ້ວ ປະຣິພາຊົກຄົນໜຶ່ງຈຶ່ງໄດ້ກ່າວກັບວັດຊິຍະມາຫິຕະຄະຫະບໍດີດັ່ງນີ້ວ່າ "ດ່ງວກ່ອນ ຄະຫະບໍດີ ພຣະສະມະນະໂຄດົມຜູ້ທີ່ທ່ານສັນເສີນເປັນຜູ້ແນະນຳໃນທາງສູນຫາຍ໑ ເປັນຜູ້ບໍ່ມີບັນຍັດ໌"

"ທ່ານຜູ້ຈະເລີນ ແມ່ນໃນເລື້ອງນີ້ ຂ້າພະເຈົ້າກ່າວກັບທ່ານທັງຫຼາຍໂດຍຊອບທຳ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດວ່າ "ນີ້ກຸສົນ ນີ້ອະກຸສົນ" ພຣະຜູ້ມີພຣະພາກເຈົ້າເມື່ອຊົງບັນຍັດກຸສົນແລະອະກຸສົນແນວນີ້ ຈຶ່ງຊື່ວ່າຊົງມີບັນຍັດ ບໍ່ແມ່ນຜູ້ຊົງແນະນຳໃນທາງສູນຫາຍ ບໍ່ແມ່ນຜູ້ບໍ່ມີບັນຍັດ"

ເມື່ອວັດຊິຍະມາຫິຕະຄະຫະບໍດີກ່າວແນວນີ້ແລ້ວ ປະຣິພາຊົກທັງຫຼາຍພາກັນນັ່ງມິດ ເກີ້ເຂີນ ຄໍຕົກ ກົ້ມໜ້າ ຈຸກເຈົ່າ ໂຕ້ຕອບບໍ່ໄດ້ ວັດຊິຍະມາຫິຕະຄະຫະບໍດີຮູ້ວ່າປະຣິພາຊົກເຫຼົ່ານັ້ນນັ່ງມິດ ເກີ້ເຂີນ ຄໍຕົກ ກົ້ມໜ້າ ຈຸກເຈົ່າ ໂຕ້ຕອບບໍ່ໄດ້ ຈຶ່ງລຸກຈາກບ່ອນນັ່ງ ເຂົ້າໄປເຝົ້າພຣະຜູ້ມີພຣະພາກຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນເລື້ອງທີ່ສົນ ທະນາ ປາສັຍກັບອັນຍະເດຍຣະຖີປະຣິພາຊົກເຫຼົ່ານັ້ນແດ່ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮູ້ທຸກປະການ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ແນວນັ້ນແລ ຄະຫະບໍດີ ທ່ານສາມາດຂົ່ມໂມຄະບຸຣຸດເຫຼົ່ານັ້ນ ໄດ້ຢ່າງແນບນຽນຕາມການອັນຄວນ ໂດຍຊອບທຳ ເຮົາບໍ່ກ່າວຕະບະທັງໝົດວ່າ "ຄວນພ່ຳເພັງ ບໍ່ຄວນພ່ຳເພັງ" ເຮົາບໍ່ກ່າວການສະມາທານທັງໝົດວ່າ "ຄວນສະມາທານ ບໍ່ຄວນສະມາທານ" ເຮົາບໍ່ກ່າວຄວາມມຸ້ງໝັ້ນທັງໝົດວ່າ "ຄວນມຸ້ງໝັ້ນ ບໍ່ຄວນມຸ້ງໝັ້ນ" ເຮົາບໍ່ກ່າວການສະລະຄືນທັງໝົດວ່າ "ຄວນສະລະຄືນ ບໍ່ຄວນສະລະຄືນ" ເຮົາບໍ່ກ່າວຄວາມລຸດພົ້ນທັງໝົດວ່າ "ຄວນລຸດພົ້ນ ບໍ່ຄວນລຸດພົ້ນ"

ຕະບະໃດ ເມື່ອບຸກຄົນພ່ຳເພັງຢູ່ ອະກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມໄປ ຕະບະເຊັ່ນນັ້ນ ເຮົາກ່າວວ່າ "ບໍ່ຄວນພ່ຳເພັງ" ສ່ວນຕະບະໃດ ເມື່ອບຸກຄົນພ່ຳເພັງຢູ່ ອະກຸສົນທຳທັງຫຼາຍເສື່ອມໄປ ກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ຕະບະເຊັ່ນນັ້ນ ເຮົາກ່າວວ່າ "ຄວນພ່ຳເພັງ"

ການສະມາທານໃດ ເມື່ອບຸກຄົນສະມາທານຢູ່ ອະກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມໄປ ການສະມາທານເຊັ່ນນັ້ນ ເຮົາກ່າວວ່າ "ບໍ່ຄວນສະມາທານ" ສ່ວນການສະມາທານໃດ ເມື່ອບຸກຄົນສະມາທານຢູ່ ອະກຸສົນທຳທັງຫຼາຍເສື່ອມໄປ ກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ການສະມາທານເຊັ່ນນັ້ນ ເຮົາກ່າວວ່າ "ຄວນສະມາທານ"

ຄວາມມຸ້ງໝັ້ນໃດ ເມື່ອບຸກຄົນມຸ້ງໝັ້ນຢູ່ ອະກຸສົນທຳທັງຫຼາຍຈະເລີນຍິ່ງຂຶ້ນ ກຸສົນທຳທັງຫຼາຍເສື່ອມໄປ ຄວາມມຸ້ງໝັ້ນເຊັ່ນນັ້ນ ເຮົາກ່າວວ່າ "ບໍ່ຄວນມຸ້ງໝັ້ນ" ສ່ວນຄວາມມຸ້ງໝັ້ນໃດ ເມື່ອບຸກຄົນມຸ້ງໝັ້ນຢູ່ ອະກຸສົນທຳເສື່ອມໄປ ກຸສົນທຳຈະເລີນຍິ່ງຂຶ້ນ ຄວາມມຸ້ງໝັ້ນເຊັ່ນນັ້ນ ເຮົາກ່າວວ່າ "ຄວນມຸ້ງໝັ້ນ"

ການສະລະຄືນໃດ ເມື່ອບຸກຄົນສະລະຄືນຢູ່ ອະກຸສົນທຳຈະເລີນຍິ່ງຂຶ້ນ ກຸສົນທຳເສື່ອມໄປ ການສະລະຄືນເຊັ່ນນັ້ນ ເຮົາກ່າວວ່າ "ບໍ່ຄວນສະລະຄືນ" ສ່ວນການສະລະຄືນໃດ ເມື່ອບຸກຄົນສະລະຄືນຢູ່ ອະກຸສົນທຳເສື່ອມໄປ ກຸສົນທຳຈະເລີນຍິ່ງຂຶ້ນ ການສະລະຄືນເຊັ່ນນັ້ນ ເຮົາກ່າວວ່າ "ຄວນສະລະຄືນ"

ຄວາມລຸດພົ້ນໃດ ເມື່ອບຸກຄົນລຸດພົ້ນຢູ່ ອະກຸສົນທຳຈະເລີນຍິ່ງຂຶ້ນ ກຸສົນທຳເສື່ອມໄປ ຄວາມລຸດພົ້ນເຊັ່ນນັ້ນ ເຮົາກ່າວວ່າ "ບໍ່ຄວນລຸດພົ້ນ" ສ່ວນຄວາມລຸດພົ້ນໃດ ເມື່ອບຸກຄົນລຸດພົ້ນຢູ່ ອະກຸສົນທຳເສື່ອມໄປ ກຸສົນທຳຈະເລີນຍິ່ງຂຶ້ນ ຄວາມລຸດພົ້ນເຊັ່ນນັ້ນ ເຮົາກ່າວວ່າ "ຄວນລຸດພົ້ນ"

ລຳດັບນັ້ນແລ ວັດຊິຍະມາຫິຕະຄະຫະບໍດີຜູ້ອັນພຣະຜູ້ມີພຣະພາກເຈົ້າ ຊີ້ງຊີ້ແຈ່ງໃຫ້ເຫັນແຈ້ງ ນ້ອມໃຈໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ຮວຍຮ່ຳໃຈໃຫ້ສົດ

ຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວຈຶ່ງລຸກຈາກບ່ອນນັ່ງ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນ ແລ້ວຫຼີກໄປ

ເມື່ອວັດຊິຍະມາຫິຕະຄະຫະບໍດີຫຼີກໄປບໍ່ດົນ ພຣະຜູ້ມີພຣະພາກເຈົ້າຈຶ່ງຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ "ພິກຂຸທັງຫຼາຍ ພິກຂຸໃດໃນທຳວິໄນນີ້ເປັນຜູ້ມີທຸລີຕິກິເລດໃນໜ່ອຍຕາໜ້ອຍ ຕະຫຼອດການລະນານ ແມ່ນພິກຂຸນັ້ນກໍເພິ່ງຂົ່ມອັນຍະເດຍຣະຖີປະຣິພາຊິກາທັງຫຼາຍໄດ້ຢ່າງແນບນຽນ ໂດຍຊອບທຳແນວນີ້ຄືວັດຊິຍະມາຫິຕະຄະຫະບໍດີຂົ່ມໄດ້ແລ້ວ"

**ວັດຊິຍະມາຫິດສູດທີ ໔ ຈົບ**

## ໕. ອຸດຕິຍະສູດ

## ວ່າດ້ວຍອຸດຕິຍະປະຣິພາຊົກທູນຖາມພຣະຜູ້ມີພຣະພາກເຈົ້າ

[໙໕] ຄັ້ງນັ້ນແລ ອຸດຕິຍະປະຣິພາຊົກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສ ພໍເປັນທີ່ບັນເທີງໃຈພໍເປັນທີ່ຣະນຶກເຖິງກັນແລ້ວ ຈຶ່ງນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມ ພຣະຜູ້ມີພຣະພາກເຈົ້າວ່າ "ທ່ານພຣະໂຄດົມ ໂລກທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງບໍນໍ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອຸດຕິຍະ ຂໍ້ວ່າ "ໂລກທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ນີ້ເຮົາບໍ່ຕອບ"

"ທ່ານພຣະໂຄດົມ ໂລກບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ແມ່ນບໍ?"

"ອຸດຕິຍະ ແມ່ນຂໍ້ວ່າ "ໂລກບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ນີ້ເຮົາກໍບໍ່ຕອບ"

"ທ່ານພຣະໂຄດົມ ໂລກມີບ່ອນສຸດ ฯລฯ ໂລກບໍ່ມີບ່ອນສຸດ ฯລฯ ຊີວະກັບສະຣີຣະເປັນແນວດຽວກັນ ฯລฯ ຊີວະກັບສະຣີຣະເປັນຄົນລະແນວກັນ ฯລฯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ฯລฯ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ฯລฯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ບໍ່ເກີດອີກກໍມີ ฯລฯ ຫຼັງຈາກ ຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ແມ່ນບໍ?໑"

"ອຸດຕິຍະ ແມ່ນຂໍ້ວ່າ "ໂລກມີບ່ອນສຸດ ฯລฯ ໂລກບໍ່ມີບ່ອນສຸດ ฯລฯ ຊີວະກັບສະຣີຣະເປັນແນວດຽວກັນ ฯລฯ ຊີວະກັບສະຣີຣະເປັນຄົນລະແນວກັນ ฯລฯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ฯລฯ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ฯລฯ ຫຼັງຈາກຕາຍແລ້ວຕະຖາ

ຄົດເກີດອີກກໍມີ ບໍ່ເກີດອີກກໍມີ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ນີ້ເຮົາກໍບໍ່ຕອບ"

"ທ່ານຖືກຂ້າພະເຈົ້າຖາມວ່າ "ທ່ານພຣະໂຄດົມ ໂລກທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງບໍນໍ?" ກໍກ່າວວ່າ "ອຸດຕິຍະ ຂໍ້ວ່າ "ໂລກທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ນີ້ເຮົາບໍ່ຕອບ"

ເມື່ອຖືກຖາມວ່າ "ທ່ານພຣະໂຄດົມ ໂລກບໍ່ທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ແມ່ນບໍ?" ກໍກ່າວວ່າ "ອຸດຕິຍະ ແມ່ນຂໍ້ວ່າ "ໂລກບໍ່ທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ນີ້ເຮົາກໍບໍ່ຕອບ"

ເມື່ອຖືກຖາມວ່າ "ທ່ານພຣະໂຄດົມ ໂລກມີບ່ອນສຸດ ຯລຯ ໂລກບໍ່ມີບ່ອນສຸດ ຯລຯ ຊີວະກັບສະຣີຣະເປັນແນວດຽວກັນ ຯລຯ ຊີວະກັບສະຣີຣະເປັນຄົນລະແນວກັນ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດ ເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ບໍ່ເກີດອີກກໍມີ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ແມ່ນບໍ?" ກໍກ່າວວ່າ "ອຸດຕິຍະ ແມ່ນຂໍ້ວ່າ "ໂລກມີບ່ອນສຸດ ຯລຯ ໂລກບໍ່ມີບ່ອນສຸດ ຯລຯ ຊີວະກັບສະຣີຣະເປັນແນວດຽວກັນ ຯລຯ ຊີວະກັບສະຣີຣະເປັນຄົນລະແນວກັນ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ບໍ່ເກີດອີກກໍມີ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ນີ້ເຮົາກໍບໍ່ຕອບ" ທ່ານພຣະໂຄດົມຈະຕອບໃນທາງໃດ"

"ອຸດຕິຍະ ເຮົາສະແດງທຳແກ່ສາວົກທັງຫຼາຍເພື່ອຄວາມຮູ້ຍິ່ງ ເພື່ອຄວາມມົດຈິດແຫ່ງສັດທັງຫຼາຍ ເພື່ອກ້າວລ່ວງໂສກະ ແລະປະຣິເທວະ ເພື່ອດັບທຸກແລະໂທມະນັດ ເພື່ອບັນລຸຍາຍະທັມ ເພື່ອເຮັດນິບພານໃຫ້ແຈ້ງ"

"ຂໍ້ທີ່ທ່ານພຣະໂຄດົມໄດ້ຊົງສະແດງທຳແກ່ສາວົກທັງຫຼາຍເພື່ອຄວາມຮູ້ຍິ່ງ ເພື່ອຄວາມມົດຈິດແຫ່ງສັດທັງຫຼາຍ ເພື່ອກ້າວລ່ວງໂສກະແລະປະຣິເທວະ ເພື່ອດັບທຸກແລະ ໂທມະນັດ ເພື່ອບັນລຸຍາຍະທັມ ເພື່ອເຮັດນິບພານໃຫ້ແຈ້ງນັ້ນ ກໍຈັກເປັນເຫດໃຫ້ສັດໂລກທັງໝົດຫຼືເຄິ່ງໜຶ່ງຫຼືສາມສ່ວນອອກໄປຈາກທຸກໄດ້ບໍ"

ເມື່ອອຸດຕິຍະປະຣິພາຊົກທູນຖາມແນວນີ້ແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ຊົງມິດຢູ່

ລຳດັບນັ້ນແລ ທ່ານພຣະອານົນມີຄວາມຄິດແນວນີ້ວ່າ "ອຸດຕິຍະປະຣິພາຊົກຢ່າໄດ້ມີມິດສາທິດຖິແນວນີ້ເລີຍວ່າ "ພຣະສະມະນະໂຄດົມຖືກເຮົາຖາມບັນຫາສະເພາະໜ້າທັງໝົດ ຍ່ອມ

ຫຼືບ ບໍ່ຊຶ່ງວິສັດຊະນາ ບໍ່ສາມາດວິສັດຊະນາແນ່ນອນ" ຍ້ອນມິດສາທິດຖິນັ້ນ ຈະເພິ່ງ ເປັນໄປເພື່ອບໍ່ແມ່ນປະໂຫຍດເກື້ອກູນ ເພື່ອທຸກຕະຫຼອດການລະນານແກ່ທ່ານ"

ລຳດັບນັ້ນ ທ່ານພຣະອານົນຈຶ່ງກ່າວກັບອຸດຕິຍະປະຣິພາຊົກວ່າ "ອຸດຕິຍະຜູ້ມີອາຍຸ ຖ້າເປັນແນວນັ້ນ ເຮົາຈັກອຸປະມາແກ່ທ່ານ ບຸກຄົນຜູ້ຮູ້ລາງພວກໃນໂລກນີ້ ຍ່ອມຮູ້ອັດຖະແຫ່ງພາສິດໄດ້ດ້ວຍອຸປະມາ ປຽບຄືນະຄອນຂອງພຣະຣາຊາທີ່ຕັ້ງຢູ່ຊາຍແດນ ນະຄອນນັ້ນມີປ້ອມໝັ້ນຄົງ ມີກຳແພງແລະປະຕູໝັ້ນຄົງ ມີປະຕູດຽວ ນາຍປະຕູໃນນະຄອນນັ້ນ ເປັນບັນດິດ ສະຫຼາດ ມີປັນຍາຫ້າມຄົນທີ່ບໍ່ຮູ້ຈັກ ໃຫ້ຄົນທີ່ຮູ້ຈັກເຂົ້າໄປໄດ້ ເຂົາຍ່າງລຽບໄປຕາມທາງລຽບກຳແພງໂດຍຮອບນະຄອນນັ້ນ ບໍ່ເຫັນຮອຍຕໍ່ກຳແພງຫຼືປ່ອງກຳແພງໂດຍທີ່ສຸດແມ່ນພຽງປ່ອງທີ່ແມວອອກໄດ້ ແລະເຂົາກໍບໍ່ມີຄວາມຮູ້ແນວນີ້ວ່າ "ສັດມີຈຳນວນທໍ່ນີ້ເຂົ້າມາຍັງນະຄອນນີ້ ຫຼືອອກໄປຈາກນະຄອນນີ້" ໂດຍແທ້ທີ່ຈິງ ເຂົາມີຄວາມຮູ້ໃນເລື້ອງນີ້ແນວນີ້ວ່າ "ສັດໃຫຍ່ ໆ ບາງເຫຼົ່າ ທີ່ເຂົ້າມາຍັງນະຄອນນີ້ ຫຼືອອກໄປຈາກນະຄອນນີ້ທັງໝົດ ເຂົ້າມາຫຼືອອກໄປທາງປະຕູນີ້" ແມ່ນສັນໃດ

ພຣະຕະຖາຄົດເຈົ້າກໍຄືກັນສັນນັ້ນແລ ບໍ່ໄດ້ຊົງມີຄວາມຂົນຂວາຍແນວນີ້ວ່າ "ສັດໂລກທັງໝົດ ຫຼືເຄິ່ງໜຶ່ງ ຫຼືສາມສ່ວນຈັກອອກຈາກທຸກໄດ້" ໂດຍແທ້ທີ່ຈິງ ພຣະຕະຖາຄົດເຈົ້າຊົງມີພຣະຍານໃນເລື້ອງນີ້ແນວນີ້ວ່າ "ສັດເຫຼົ່າໃດເຫຼົ່າໜຶ່ງທີ່ອອກໄປແລ້ວ ກຳລັງອອກໄປ ຫຼືຈັກອອກໄປຈາກໂລກ ສັດເຫຼົ່ານັ້ນທັງໝົດລະນິວອນ ໕ ປະການທີ່ເປັນເຄື່ອງເສົ້າໝອງແຫ່ງໃຈ ເປັນເຄື່ອງທອນກຳລັງປັນຍາ ເປັນຜູ້ມີຈິດຕັ້ງໝັ້ນດີໃນສະຕິປັດຖານ ໔ ຈະເລີນໂພດຊົງ ໗ ຕາມຄວາມເປັນຈິງແລ້ວຈຶ່ງອອກໄປ ກຳລັງອອກໄປ ຫຼືຈັກອອກໄປຈາກໂລກ ແນວນີ້" ທ່ານອຸດຕິຍະກໍຍ້ອນທ່ານໄດ້ທູນຖາມບັນຫານັ້ນກັບພຣະຜູ້ມີພຣະພາກເຈົ້າດ້ວຍເຫດແນວອື່ນ ດັ່ງນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງບໍ່ຊົງຕອບບັນຫານັ້ນແກ່ທ່ານ"

**ອຸດຕິຍະສູດທີ ໕ ຈົບ**

# ໖. ໂກກະນຸດສູດ

## ວ່າດ້ວຍໂກກະນຸດປະຣິພາຊົກຖາມພຣະອານົນ

[໙໖] ສະໄໝໜຶ່ງ ທ່ານພຣະອານົນຢູ່ ຕະໂປທາຣາມ ເຂດນະຄອນຣາດຊະຄືໄດ້ລຸກຂຶ້ນໃນເວລາໃກ້ຮຸ່ງ ເຂົ້າໄປຢູ່ແມ່ນ້ຳຕະໂປທາເພື່ອເອົານ້ຳລູບໂຕ ສຳເລັດແລ້ວກັບຂຶ້ນມາ ຄອງຜ້າຜືນດຽວ ຍືນຕາກໂຕຢູ່ ແມ່ນໂກກະນຸດປະຣິພາຊົກກໍລຸກຂຶ້ນໃນເວລາໃກ້ຮຸ່ງ ໄດ້ໄປສູ່ແມ່ນ້ຳຕະໂປທາເພື່ອເອົານ້ຳລູບໂຕ ເຫັນທ່ານພຣະອານົນຍ່າງມາແຕ່ທີ່ໄກຈຶ່ງຖາມວ່າ "ທ່ານເປັນໃຜຢູ່ທີ່ນີ້"

ທ່ານພຣະອານົນຕອບວ່າ "ຜູ້ມີອາຍຸ ເຮົາເປັນພິກຂຸ"

"ເປັນພິກຂຸພວກໃດ"

"ພວກສະມະນະສາກະຍະບຸດ"

"ຫາກທ່ານຈະໃຫ້ໂອກາດແກ້ບັນຫາ ຂ້າພະເຈົ້າຈະຂໍຖາມຂໍ້ຂ້ອງໃຈບາງຢ່າງກັບທ່ານ"

"ເຊີນຖາມເທີ້ນ ເຮົາຟັງແລ້ວຈັກແກ້"

"ທ່ານມີທິດຖິ°ແນວນີ້ບໍວ່າ "ໂລກທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

"ຜູ້ມີອາຍຸ ເຮົາບໍ່ໄດ້ມີທິດຖິແນວນັ້ນເລີຍ ວ່າ "ໂລກທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

"ທ່ານມີທິດຖິແນວນີ້ບໍວ່າ "ໂລກບໍ່ທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

"ເຮົາບໍ່ໄດ້ມີທິດຖິແນວນັ້ນເລີຍວ່າ "ໂລກບໍ່ທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

"ທ່ານມີທິດຖິແນວນີ້ບໍວ່າ "ໂລກມີບ່ອນສຸດ ຯລຯ ໂລກບໍ່ມີບ່ອນສຸດ ຯລຯ ຊີວະກັບສະຣີຣະເປັນແນວດຽວກັນ ຯລຯ ຊີວະກັບສະຣີຣະເປັນຄົນລະແນວກັນ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກຯລຯ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ບໍ່ເກີດອີກ ກໍມີ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

"ຜູ້ມີອາຍຸ ເຮົາບໍ່ໄດ້ມີທິດຖິແນວນັ້ນເລີຍວ່າ "ໂລກມີບ່ອນສຸດ ຯລຯ ໂລກບໍ່ມີບ່ອນສຸດ ຯລຯ ຊີວະກັບ ສະຣີຣະເປັນແນວດຽວກັນ ຯລຯ ຊີວະກັບສະຣີຣະເປັນຄົນລະແນວກັນ ຯລຯ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ບໍ່ເກີດອີກກໍມີ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

"ຖ້າເປັນແນວນັ້ນ ທ່ານກໍບໍ່ຮູ້ ບໍ່ເຫັນຕິບໍ"

"ຜູ້ມີອາຍຸ ເຮົາບໍ່ຮູ້ ບໍ່ເຫັນ ກໍເປັນໄປບໍ່ໄດ້ ເຮົາຮູ້ຢູ່ ເຫັນຢູ່"

"ທ່ານເມື່ອຖືກຂ້າພະເຈົ້າຖາມວ່າ "ທ່ານມີທິດຖິແນວນີ້ບໍວ່າ "ໂລກທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ກໍກ່າວວ່າ "ຜູ້ມີອາຍຸ ເຮົາບໍ່ໄດ້ມີທິດຖິແນວນັ້ນເລີຍວ່າ "ໂລກທ່ຽງ ນີ້ ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

ເມື່ອຖືກຖາມວ່າ "ທ່ານມີທິດຖິແນວນີ້ບໍວ່າ "ໂລກບໍ່ທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ" ກໍກ່າວວ່າ "ຜູ້ມີອາຍຸ ເຮົາບໍ່ໄດ້ມີທິດຖິແນວນັ້ນເລີຍວ່າ "ໂລກບໍ່ທ່ຽງ ນີ້ທີ່ນັ້ນຈິງ ແນວອື່ນບໍ່ຈິງ"

ເມື່ອຖືກຖາມວ່າ "ທ່ານມີທິດຖິແນວນີ້ບໍວ່າ "ໂລກມີບ່ອນສຸດ ຯລຯ ໂລກບໍ່ມີບ່ອນສຸດ ຯລຯ ຊີວະກັບສະຣີຣະເປັນແນວດຽວກັນ ຯລຯ ຊີວະກັບສະຣີຣະເປັນຄົນລະແນວກັນ ຯລຯ

ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ບໍ່ເກີດອີກກໍມີ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ກໍກ່າວວ່າ "ຜູ້ມີອາຍຸ ເຮົາບໍ່ໄດ້ມີທິດຖິແນວນັ້ນເລີຍ "ໂລກມີບ່ອນສຸດ ຯລຯ ໂລກບໍ່ມີບ່ອນສຸດ ຯລຯ ຊີວະກັບສະຣີຣະເປັນແນວດຽວກັນ ຯລຯ ຊີວະກັບສະຣີຣະເປັນຄົນ ລະແນວກັນ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ບໍ່ເກີດອີກກໍມີ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ"

ເມື່ອຖືກຖາມວ່າ "ຖ້າເປັນແນວນັ້ນ ທ່ານກໍບໍ່ຮູ້ບໍ່ເຫັນຕິບໍ" ກໍກ່າວວ່າ "ຜູ້ມີອາຍຸ ເຮົາບໍ່ຮູ້ ບໍ່ເຫັນ ກໍເປັນໄປບໍ່ໄດ້ ເຮົາຮູ້ຢູ່ ເຫັນຢູ່" ຜູ້ມີອາຍຸ ກໍເນື້ອຄວາມແຫ່ງພາສິດນີ້ ຈະເພິ່ງເຂົ້າໃຈໄດ້ແນວໃດ"

ທ່ານພຣະອານົນຕອບວ່າ "ຜູ້ມີອາຍຸ ຂໍ້ວ່າ "ໂລກທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນ ບໍ່ຈິງ" ນີ້ເປັນທິດຖິແນວໜຶ່ງ ຂໍ້ວ່າ "ໂລກບໍ່ທ່ຽງ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ນີ້ເປັນທິດຖິແນວໜຶ່ງ ຂໍ້ວ່າ "ໂລກມີບ່ອນສຸດ ຯລຯ ໂລກບໍ່ມີບ່ອນສຸດ ຯລຯ ຊີວະກັບສະຣີຣະເປັນແນວດຽວກັນ ຯລຯ ຊີວະກັບສະຣີຣະເປັນຄົນລະແນວກັນ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ບໍ່ເກີດອີກກໍມີ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ນີ້ທໍ່ນັ້ນຈິງ ແນວອື່ນບໍ່ຈິງ" ນີ້ເປັນທິດຖິແນວໜຶ່ງ ຜູ້ມີອາຍຸ ທິດຖິ[໑] ມູນເຫດແຫ່ງທິດຖິ[໒] ທິດຖິທີ່ຢຶດໝັ້ນ[໓] ທິດຖິທີ່ກຸ້ມລຸມ[໔] ຄວາມເພີກຖອນທິດຖິ[໕] ມີປະມານທໍ່ໃດ ເຮົາຮູ້ ເຮົາເຫັນທິດຖິເປັນຕົ້ນນັ້ນປະມານທໍ່ນັ້ນ ເຮົາຮູ້ທິດຖິເປັນຕົ້ນນັ້ນຈຶ່ງກ່າວວ່າ "ຮູ້ຢູ່" ເຮົາເຫັນທິດຖິເປັນຕົ້ນນັ້ນຈຶ່ງກ່າວວ່າ "ເຫັນຢູ່" ເຮົາຈະກ່າວວ່າ "ບໍ່ຮູ້ ບໍ່ເຫັນ" ໄດ້ແນວໃດ ຜູ້ມີອາຍຸ ເຮົາຮູ້ຢູ່ ເຫັນຢູ່"

"ທ່ານຊື່ອັນໃດ ແລະເພື່ອນພົມມະຈາຣີທັງຫຼາຍຮຽກທ່ານວ່າແນວໃດ"

"ຜູ້ມີອາຍຸ ເຮົາຊື່ "ອານົນ" ແລະເພື່ອນພົມມະຈາຣີທັງຫຼາຍກໍຮຽກເຮົາວ່າ "ອານົນ"

"ທ່ານຜູ້ຈະເລີນ ຂ້າພະເຈົ້າສົນທະນາຢູ່ກັບອາຈານໃຫຍ່ ແຕ່ບໍ່ຮູ້ເລີຍວ່າເປັນ "ທ່ານອານົນ" ຖ້າຂ້າພະເຈົ້າຈະເພິ່ງຮູ້ວ່າ "ທ່ານຜູ້ນີ້ຄືທ່ານອານົນ" ຂ້າພະເຈົ້າກໍຈະບໍ່ກ່າວຕອບໂຕ້ ເຖິງພຽງນີ້ ຂໍທ່ານອານົນຈົ່ງຍົກໂທດໃຫ້ຂ້າພະເຈົ້າເທີ້ນ"

**ໂກກະນຸດສູດທີ ໕ ຈົບ**

# ໗. ອາຫຸເນີຍະສູດ

## ວ່າດ້ວຍພິກຂຸຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ

[໙໗] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໑໐ ປະການ ເປັນຜູ້ຄວນແກ່ ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ ທຳ ໑໐ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ

໒. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທັງຫຼາຍທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດ ບໍລິບູນຄົບຖ້ວນ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ

໓. ເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ

໔. ເປັນສຳມາທິດຖິ ປະກອບດ້ວຍຄວາມເຫັນຖືກ

໕. ສະແດງລິດໄດ້ຫຼາຍແບວ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດຫຼືໃຫ້ຫາຍໄປກໍໄດ້ ຊອດຝາ ກຳແພງ ແລະພູ ໄປໄດ້ບໍ່ຕິດຂັດຄືໄປໃນບ່ອນວ່າງກໍໄດ້ ໂປ່ໂລ່ຂຶ້ນຫຼືມຸດລົງໃນແຜ່ນດິນຄືໄປໃນນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ແຍກຄືຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດຄືນົກບິນໄປກໍໄດ້ ໃຊ້ຝາມືລູບຄຳດວງຈັນແລະດວງອາທິດອັນມີລິດຫຼາຍ ມີອານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້

໖. ໄດ້ຍິນສຽງ ໒ ຊະນິດ ຄື ສຽງທິບແລະສຽງມະນຸດ ທັງທີ່ຢູ່ໄກແລະໃກ້ ດ້ວຍຫູທິບອັນບໍລິສຸດເໜືອມະນຸດ

໗. ກຳນົດຮູ້ຈິດຂອງສັດແລະບຸກຄົນອື່ນໄດ້ດ້ວຍຈິດຂອງຕົນ ຄື ຈິດມີຣາຄະກໍຮູ້ວ່າມີຣາຄະ ຫຼືປາສະຈາກຣາຄະກໍຮູ້ວ່າປາສະຈາກຣາຄະ ຈິດມີໂທສະ ຯລຯ ຫຼືປາສະຈາກໂທສະ ຯລຯ ຈິດມີໂມຫະ ຯລຯ ຫຼືປາສະຈາກໂມຫະ ຯລຯ ຈິດຫົດຫູ່ ຯລຯ ຫຼື ຟຸ້ງຊ່ານ ຯລຯ ຈິດເປັນມະ

ທັກຄະຕະ໊ ຯລຯ ບໍເປັນມະທັກຄະຕະ ຯລຯ ຈິດມີຈິດອື່ນຍິ່ງກວ່າ ຯລຯ ບໍມີຈິດອື່ນຍິ່ງກວ່າ ຯລຯ ຈິດເປັນສະມາທິ ຯລຯ ບໍເປັນສະມາທິ ຯລຯ ຈິດລຸດພົ້ນ ຯລຯ ບໍລຸດພົ້ນກໍຮູ້ວ່າບໍ່ລຸດພົ້ນ

໘. ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດ ແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບຫຼວງຫຼາຍແດ່ ຕະຫຼອດວິວັດຕະກັບເປັນຫຼວງຫຼາຍແດ່ ຕະຫຼອດສັງວັດຕະກັບແລະວິວັດຕະກັບຫຼວງຫຼາຍແດ່ວ່າ "ໃນພົບນັ້ນ ເຮົາມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນ ເຮົາກໍມີຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນແລ້ວຈຶ່ງມາເກີດໃນພົບນີ້" ຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້

໙. ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງໝູ່ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຜິດ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກແລະຊັກຊວນຜູ້ອື່ນໃຫ້ເຮັດກຳຕາມຄວາມເຫັນຖືກ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ" ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແນວນີ້ແລ

໑໐. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໑໐ ປະການນີ້ແລ ຈຶ່ງເປັນຜູ້ຄວນແກ່ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ

**ອາຫຸເນີຍຍະສູດທີ ໗ ຈົບ**

# ๙. ເຖຣະສູດ

## ວ່າດ້ວຍຄຸນນະທຳຂອງພຣະເຖຣະ

[໘๙] ພິກຂຸທັງຫຼາຍ ພິກຂຸເຖຣະປະກອບດ້ວຍທຳ ໑໐ ປະການ ຈະຢູ່ໃນທິດໃດ ໆ ຍ່ອມຢູ່ສຸກສະບາຍໂດຍແທ້ ທຳ ໑໐ ປະການ ອັນໃດແດ່ ຄື

ພິກຂຸເຖຣະ

໑. ເປັນຣັດຕັນຍູ° ບວດມາດົນ
໔. ເປັນຜູ້ມີສີນ ໆລໆ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ
໓. ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທັງຫຼາຍທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດ ບໍລິບູນ ຄົບຖ້ວນ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈ ແທງຕະຫຼອດດີດ້ວຍທິດຖິ
໔. ຊົງຈຳປາຕິໂມກທັງສອງໄດ້°ດີ ຈຳແນກໄດ້ດີ ໃຫ້ເປັນໄປໄດ້ດີໂດຍພິດສະດານ ວິນິດໄສໄດ້ດີໂດຍສູດ ໂດຍອະນຸພະຍັນຊະນະ
໕. ເປັນຜູ້ສະຫຼາດໃນການລະງັບອະທິກອນທີ່ເກີດຂຶ້ນ
໖. ເປັນຜູ້ຕ້ອງການທຳ ເປັນຜູ້ຟັງແລະສະແດງທຳເປັນທີ່ພໍໃຈ ມີປາໂມດຢ່າງຍິ່ງໃນອະພິທຳ ແລະອະພິວິໄນ
໗. ເປັນຜູ້ສັນໂດດດ້ວຍຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດຊະບໍຣິຂານຕາມແຕ່ຈະໄດ້
໘. ເປັນຜູ້ໜ້າເຫຼື້ອມໃສໃນການກ້າວໄປແລະຖອຍກັບ ເປັນຜູ້ສັງລວມດີໃນການນັ່ງໃນບໍລິເວນບ້ານ
໙. ເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະ ໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ
໑໐. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ພິກຂຸເຖຣະປະກອບດ້ວຍທຳ ໑໐ ປະການນີ້ແລ ຈະຢູ່ໃນທິດໃດ ໆ ຍ່ອມຢູ່ສຸກສະບາຍໂດຍແທ້

**ເຖຣະສູດທີ ๙ ຈົບ**

# ໙. ອຸປາລິສູດ

## ວ່າດ້ວຍພຣະອຸປາລິຂໍອະນຸຍາດຢູ່ປ່າ

[໙໙] ຄັ້ງນັ້ນ ທ່ານພຣະອຸປາລິເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ຂ້າພຣະອົງປາຖະໜາຈະອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າທຶບຢູ່[໑]"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸປາລິ ເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າທຶບຢູ່ລຳບາກ ເຮັດວິເວກ[໒]ໄດ້ຍາກ ໃນການຢູ່ໂດດດ່ຽວກໍອະພິຣົມໄດ້ຍາກ ປ່າທັງຫຼາຍເຫັນຈະຊັກນຳຈິດຂອງພິກຂຸຜູ້ຍັງບໍ່ໄດ້ສະມາທິ[໓]ໃຫ້ຫວາດຫວັ່ນ ອຸປາລິ ຜູ້ໃດເພິ່ງກ່າວແນວນີ້ວ່າ "ເຮົາຍັງບໍ່ໄດ້ສະມາທິ ຈັກອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າທຶບຢູ່" ຜູ້ນັ້ນເພິ່ງຫວັງຂໍ້ນີ້ໄດ້ວ່າ "ຈັກຈົມລົງ[໔]ຫຼືຈັກຟຸ້ງຊ່ານ[໕]"

ປຽບຄືມີແມ່ນ້ຳໃຫຍ່ ຖ້າມີຊ້າງໃຫຍ່ສູງ ໗ ສອກ ຫຼື ໗ ສອກເຄິ່ງມາເຖິງແລ້ວ ຊ້າງນັ້ນເພິ່ງຄິດແນວນີ້ວ່າ "ທາງທີ່ດີ ເຮົາຄວນຈະລົງສູ່ແມ່ນ້ຳນີ້ແລ້ວລ້າງຫູຫຼິ້ນແດ່ ລ້າງຫຼັງຫຼິ້ນແດ່ ອາບ ດື່ມ ຂຶ້ນມາແລ້ວຫຼີກໄປຕາມປາຖະໜາ" ຊ້າງນັ້ນລົງສູ່ແມ່ນ້ຳນັ້ນແລ້ວ ເພິ່ງລ້າງຫູຫຼິ້ນແດ່ ລ້າງຫຼັງຫຼິ້ນແດ່ ອາບ ດື່ມ ຂຶ້ນມາແລ້ວຫຼີກໄປຕາມປາຖະໜາ ຂໍ້ນັ້ນຍ້ອນເຫດໃດ ຍ້ອນຊ້າງນັ້ນມີຮ່າງກາຍໃຫຍ່ ຈຶ່ງຕ້ອງລົງນ້ຳເລິກ

ເມື່ອກະຕ່າຍຫຼືເສືອປາມາເຖິງແມ່ນ້ຳນັ້ນເຂົ້າ ກະຕ່າຍຫຼືເສືອປານັ້ນເພິ່ງຄິດແນວນີ້ວ່າ "ເຮົາເປັນອັນໃດແລະຊ້າງໃຫຍ່ເປັນອັນໃດ ທາງທີ່ດີ ເຮົາຄວນຈະລົງສູ່ແມ່ນ້ຳນີ້ແລ້ວ ລ້າງຫູຫຼິ້ນແດ່ ລ້າງຫຼັງຫຼິ້ນແດ່ ອາບ ດື່ມ ຂຶ້ນມາແລ້ວຫຼີກໄປຕາມປາຖະໜາ" ກະຕ່າຍຫຼືເສືອປານັ້ນລົງສູ່ແມ່ນ້ຳນັ້ນໂດຍທັນທີ ບໍ່ທັນໄດ້ພິຈາລະນາ ຈະຕ້ອງຫວັງຂໍ້ນີ້ໄດ້ວ່າ "ຈັກຈົມລົງຫຼືຈັກລອຍຂຶ້ນ" ຂໍ້ນັ້ນຍ້ອນເຫດໃດ ຍ້ອນກະຕ່າຍຫຼືເສືອປານັ້ນ ມີຮ່າງກາຍນ້ອຍ ລົງໃນແມ່ນ້ຳເລິກບໍ່ໄດ້ ສັນໃດ

ຜູ້ໃດເພິ່ງກ່າວແນວນີ້ວ່າ "ເຮົາເມື່ອຍັງບໍ່ໄດ້ສະມາທິ ຈັກອາໄສເສນາສະນະອັນງຽບສະຫງັດ ຄື ປ່າໂລ່ງແລະປ່າທຶບຢູ່ ຜູ້ນັ້ນຈະຕ້ອງຫວັງຂໍ້ນີ້ໄດ້ວ່າ "ຈັກຈົມລົງຫຼືຈັກຟຸ້ງຊ່ານ" ຄືກັນສັນນັ້ນ

ປຽບຄື ເດັກອ່ອນຍັງນອນຫງາຍ ຫຼິ້ນມູດແລະຄູດຂອງຕົນ ທ່ານເຂົ້າໃຈເລື່ອງນັ້ນແນວໃດ ການຫຼິ້ນນີ້ເປັນການຫຼິ້ນຂອງເດັກອ່ອນໂດຍທົ່ວໄປບໍ?"

ພຣະອຸປາລິຂາບທູນວ່າ “ແນວນັ້ນ ຂ້ານ້ອຍ”

“ອຸປາລີ ສະໄໝຕໍ່ມາ ເດັກນ້ອຍນັ້ນເອງຈະເລີນເຕີບໃຫຍ່ຂຶ້ນ ມີອິນຊີແກ່ກ້າຂຶ້ນ ຫຼິ້ນເຄື່ອງຫຼິ້ນສໍາລັບເດັກ ຄືຫຼິ້ນໄຖນ້ອຍ ໆ ຫຼິ້ນຕີໄມ້ໝາກອີ່ ຫຼິ້ນໝາກປິ່ນໄມ້ ຫຼິ້ນໝາກປິ່ນໃບໄມ້ ຫຼິ້ນຜອງຊາຍ ຫຼິ້ນລົດນ້ອຍ ໆ ຫຼິ້ນທະນູນ້ອຍ ໆ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ການຫຼິ້ນນີ້ ຍິ່ງກວ່າ ປະນີດກວ່າການຫຼິ້ນທີ່ມີມາກ່ອນບໍ”

“ແນວນັ້ນ ຂ້ານ້ອຍ”

“ອຸປາລີ ສະໄໝຕໍ່ມາ ເດັກນ້ອຍນັ້ນເອງຈະເລີນເຕີບໃຫຍ່ຂຶ້ນອີກ ມີອິນຊີແກ່ກ້າເຕັມທີ່ ອີ່ມເອີບພ້ອມພຽງດ້ວຍກາມມະຄຸນ ໕ ປິ່ນເປີຕົນຢູ່ດ້ວຍຮູບທີ່ເພິ່ງຮູ້ແຈ້ງທາງຕາ ອັນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ນ້ອມໃຈໃຫ້ກໍາໜັດ ດ້ວຍສຽງທີ່ເພິ່ງຮູ້ແຈ້ງທາງຫູ ฯລฯ ດ້ວຍກິ່ນທີ່ເພິ່ງຮູ້ແຈ້ງທາງດັງ ฯລฯ ດ້ວຍຣົດທີ່ເພິ່ງຮູ້ແຈ້ງທາງລີ້ນ ฯລฯ ດ້ວຍໂຜດຖັບພະທີ່ເພິ່ງຮູ້ແຈ້ງທາງກາຍ ອັນໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ຊວນໃຫ້ຮັກ ດຶງໃຫ້ຕ້ອງການ ນ້ອມໃຈໃຫ້ກໍາ ໜັດ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ການຫຼິ້ນນີ້ຍິ່ງກວ່າ ປະນີດກວ່າການຫຼິ້ນທີ່ມີມາກ່ອນບໍ”

“ແນວນັ້ນ ຂ້ານ້ອຍ”

“ອຸປາລີ ຕະຖາຄົດອຸບັດຂຶ້ນມາໃນໂລກນີ້ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍຕົນເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງຍອດຢ້ຽມ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ[໑] ເປັນພຣະຜູ້ມີພຣະພາກເຈົ້າ[໒] ຕະຖາຄົດຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດດ້ວຍຕົນເອງແລ້ວ ປະກາດໃຫ້ຜູ້ອື່ນຮູ້ຕາມ ສະແດງທໍາມີຄວາມງາມໃນເບື້ອງຕົ້ນ[໓] ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນ[໔]ພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນ[໕] ຄົບຖ້ວນ”

ຄະຫະບໍດີ ຫຼືບຸດຄະຫະບໍດີຜູ້ເກີດພາຍຫຼັງໃນຕະກູນໃດຕະກູນໜຶ່ງ ຟັງທໍານັ້ນແລ້ວໄດ້ສັດທາໃນຕະຖາຄົດ ໄດ້ສັດທາແລ້ວພິຈາລະນາເຫັນວ່າ “ຄະຣາວາດຄັບແຄບ ເປັນທາງມາແຫ່ງທຸລີ ບັນພະຊາປອດໂປ່ງ ການທີ່ບຸກຄົນຜູ້ຢູ່ຄອງເຮືອນ ຈະປະພຶດພົມມະຈັນໃຫ້ບໍລິສຸດ ບໍລິບູນຄົບຖ້ວນຄືຫອຍສັງທີ່ຂັດແລ້ວນີ້ ບໍ່ແມ່ນເຮັດໄດ້ງ່າຍ ທາງທີ່ດີ ເຮົາຄວນຈະແຖຜົມ ແລະໜວດຄອງຜ້າກາສາຍະ ອອກຈາກເຮືອນບວດເປັນບັນພະຊິດ”

ສະໄໝຕໍ່ມາ ເຂົາໄດ້ລະກອງໂພຄະຊັບນ້ອຍໃຫຍ່ ເຄືອຍາດນ້ອຍໃຫຍ່ແລ້ວ ແຖຜົມ ແລະໜວດ ຄອງຜ້າກາສາຍະ ອອກຈາກເຮືອນບວດເປັນບັນພະຊິດ

ເມື່ອບວດແລ້ວ ເປັນຜູ້ເຖິງພ້ອມດ້ວຍສິກຂາແລະສາຊີບ[၅]ສະເໝີດ້ວຍພິກຂຸທັງຫຼາຍ ລະເວັ້ນຂາດຈາກການຂ້າສັດ ວາງທັນດາວຸດ ແລະສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງຫວັງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່

ເປັນຜູ້ລະເວັ້ນຂາດຈາກການລັກຊັບ ຄື ຮັບເອົາແຕ່ຂອງທີ່ເຂົາໃຫ້ ມຸ້ງຫວັງແຕ່ຂອງທີ່ເຂົາໃຫ້ ບໍ່ເປັນຂີ້ລັກ ເປັນຄົນສະອາດຢູ່

ເປັນຜູ້ລະພຶດຕິກຳອັນເປັນຂ້າເສິກຕໍ່ພົມມະຈັນ ປະພຶດພົມມະຈັນ ເວັ້ນຫ່າງໄກຈາກເມຖຸນທຳອັນເປັນກິດຂອງຊາວບ້ານ

ເປັນຜູ້ລະເວັ້ນຂາດຈາກການເວົ້າຕົວະ ຄື ເວົ້າແຕ່ຄຳສັດ ດຳລົງຄຳສັດ ມີຄຳເວົ້າ ເປັນຫຼັກ ເຊື່ອຖືໄດ້ ບໍ່ຫຼອກລວງຊາວໂລກ

ເປັນຜູ້ລະເວັ້ນຂາດຈາກການເວົ້າສັບສໍ່ ຄື ຟັງຄວາມຈາກຝ່າຍນີ້ແລ້ວບໍ່ໄປບອກຝ່າຍນັ້ນເພື່ອທຳລາຍຝ່າຍນີ້ ຫຼືຟັງຄວາມຝ່າຍນັ້ນແລ້ວບໍ່ມາບອກຝ່າຍນີ້ເພື່ອທຳລາຍ ຝ່າຍນັ້ນ ສະມານຄົນທີ່ແຕກກັນ ສົ່ງເສີມຄົນທີ່ປອງດອງກັນ ຊົມຊື່ນຍິນດີເພີດເພີນຕໍ່ຜູ້ທີ່ສາມັກຄີກັນ ເວົ້າແຕ່ຄຳເວົ້າທີ່ສ້າງສັນຄວາມສາມັກຄີ

ເປັນຜູ້ລະເວັ້ນຂາດຈາກການເວົ້າຄຳຫຍາບ ຄື ກ່າວແຕ່ຄຳທີ່ບໍ່ມີໂທດ ມ່ວນ ໜ້າຮັກ ຈັບໃຈ ເປັນຄຳຂອງຊາວເມືອງ ຄົນສ່ວນຫຼາຍຮັກແພງພໍໃຈ

ເປັນຜູ້ລະເວັ້ນຂາດຈາກການເວົ້າບໍ່ມີສາຣະ ຄື ເວົ້າຖືກເວລາ ເວົ້າຄຳຈິງ ເວົ້າອີງປະໂຫຍດ ເວົ້າອີງທຳ ເວົ້າອີງວິໄນ ເວົ້າຄຳທີ່ມີຫຼັກຖານ ມີບ່ອນອ້າງອີງ ມີທີ່ກຳນົດ ປະກອບດ້ວຍປະໂຫຍດເໝາະແກ່ເວລາ

ພິກຂຸນັ້ນເປັນຜູ້ເວັ້ນຂາດຈາກການພາກພີຊະຄາມແລະພູຕະຄາມ ສັນຄາບດຽວ ບໍ່ສັນຕອນກາງຄືນ ເວັ້ນຂາດຈາກການສັນໃນເວລາວິການ[၅] ເວັ້ນຂາດຈາກການຟ້ອນລຳ ຂັບຮ້ອງເສບດົນຕີ ແລະເບິ່ງການລະຫຼິ້ນທີ່ເປັນຂ້າເສິກແກ່ກຸສົນ ເວັ້ນຂາດຈາກການທັດຊົງ ປະດັບຕົກແຕ່ງຮ່າງກາຍດ້ວຍພວງດອກໄມ້ຂອງຫອມ ແລະເຄື່ອງຕົກແຕ່ງຜິວອັນເປັນລັກສະນະແຫ່ງການແຕ່ງໂຕ ເວັ້ນຂາດຈາກບ່ອນນອນສູງໃຫຍ່ ເວັ້ນຂາດຈາກການຮັບຄຳແລະເງິນ ເວັ້ນຂາດຈາກການຮັບທັນຍາຫານດິບ[၆] ເວັ້ນຂາດຈາກການຮັບຊີ້ນດິບ ເວັ້ນຂາດຈາກການຮັບສະຕີແລະກຸມາຣີ ເວັ້ນຂາດຈາກການຮັບຂ້າທາດຍິງແລະຂ້າທາດຊາຍ ເວັ້ນຂາດຈາກການຮັບແບ້ແລະແກະ

ເວັ້ນຂາດຈາກການຮັບໄກ່ແລະໝູ ເວັ້ນຂາດຈາກການຮັບຊ້າງ ງົວ ມ້າ ແລະລາ ເວັ້ນຂາດຈາກການຮັບຮົ້ວສວນໄຮ່ນາແລະທີ່ດິນ ເວັ້ນຂາດຈາກການຮັບເຮັດໜ້າທີ່ເປັນໂຕແທນແລະຜູ້ສື່ສານ ເວັ້ນຂາດຈາກການຊື້ຂາຍ ເວັ້ນຂາດຈາກການໂກງດ້ວຍຕາຊິງ ດ້ວຍຂອງປອມ ແລະດ້ວຍເຄື່ອງຕວງວັດ ເວັ້ນຂາດຈາກການຮັບສິນບົນ ການລໍ້ລວງ ແລະການຕະລົບຕະແລງ ເວັ້ນຂາດຈາກການຕັດ(ອະໄວຍະວະ) ການຂ້າ ການຄຸມຂັງ ການຕີຊິງ ການປຸ້ນ ແລະການຂົ່ມຂູ່ເອົາຊັບ

ພິກຂຸນັ້ນເປັນຜູ້ສັນໂດດດ້ວຍຈີວອນພໍຄຸ້ມຮ່າງກາຍ ແລະບິນທະບາດພໍອີ່ມທ້ອງ ຈະໄປໃນບ່ອນໃດ ໆ ກໍໄປໄດ້ທັນທີຄືນົກບິນໄປ ໃນບ່ອນໃດ ໆ ກໍມີແຕ່ປີກເປັນພາຣະ ພິກຂຸນັ້ນຜູ້ປະກອບດ້ວຍອະຣິຍະສີນຂັນແນວນີ້ ຊື່ວ່າສະເຫວີຍສຸກອັນບໍ່ມີໂທດພາຍໃນ

ພິກຂຸນັ້ນເຫັນຮູບທາງຕາແລ້ວບໍ່ໂຮມຖື[๑] ບໍ່ແຍກຖື[๒] ປະຕິບັດເພື່ອສັງລວມໃນຈັກຂຸນຊີເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ບາບອະກຸສົນທຳຄືອະພິດຊາ(ຄວາມເພ່ງເລັງຢາກໄດ້ຂອງເຂົາ)ແລະໂທມະນັດ(ຄວາມທຸກໃຈ)ຄອບງຳໄດ້ ຈຶ່ງຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງທາງຫູ ฯລฯ ດົມກິ່ນທາງດັງ ฯລฯ ຊີມຣົດທາງລີ້ນ ฯລฯ ຖືກຕ້ອງໂຜດຖັບພະ ທາງກາຍ ฯລฯ ຮູ້ທຳມາຣົມທາງໃຈແລ້ວບໍ່ໂຮມຖື ບໍ່ແຍກຖື ປະຕິບັດເພື່ອສັງລວມໃນ ມະນິນຊີເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາແລະ ໂທມະນັດຄອບງຳໄດ້ ຈຶ່ງຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ພິກຂຸນັ້ນຜູ້ປະກອບ ດ້ວຍອະຣິຍະອິນຊີສັງວອນແນວນີ້ ຈຶ່ງຊື່ວ່າສະເຫວີຍສຸກອັນບໍ່ຜະສົມດ້ວຍກິເລດພາຍໃນ

ພິກຂຸນັ້ນເປັນຜູ້ທຳຄວາມຮູ້ສຶກໂຕໃນການກ້າວໄປ ການຖອຍກັບ ການແລເບິ່ງ ການຫລຽວເບິ່ງ ການຄູ້ເຂົ້າ ການຢຽດອອກ ການຄອງສັງຄາຕິ ບາດແລະຈີວອນ ການສັນ ການດື່ມ ການຫຍໍ້າ ການກິນ ການຖ່າຍອຸດຈາຣະປັດສາວະ ການຍ່າງ ການຢືນ ການນັ່ງ ການນອນ ການຕື່ນ ການເວົ້າ ການມິດ

ພິກຂຸນັ້ນປະກອບດ້ວຍອະຣິຍະສີນຂັນ ອະຣິຍະອິນຊີສັງວອນ ແລະອະຣິຍະສະຕິສຳປະຊັນຍະ ແນວນີ້ແລ້ວ ພັກຢູ່ ເສນາສະນະອັນງຽບສະຫງັດ ຄືປ່າ ເຫງົ້າໄມ້ ພູ ຮ່ອມພູ ຖໍ້າ ປ່າຊ້າ ປ່າທຶບ ກາງແຈ້ງ ກອງເຟືອງ ພິກຂຸນັ້ນໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ກໍນັ່ງຄູ້ບັນລັງຕັ້ງກາຍກົງ ດຳລົງສະຕິໄວ້ສະເພາະໜ້າ

ພິກຂຸນັ້ນລະອະພິດຊາໃນໂລກ[๓]ແລ້ວມີໃຈປາສະຈາກອະພິດຊາຢູ່ ຊຳຣະຈິດໃຫ້ບໍລິສຸດຈາກອະພິດຊາ ລະຄວາມມຸ້ງຮ້າຍຄືພະຍາບາດ ມີຈິດບໍ່ພະຍາບາດ ມຸ້ງປະໂຫຍດເກື້ອກູນສັບພະສັດຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຄວາມມຸ້ງຮ້າຍຄືພະຍາບາດລະຖີນະມິດທະ(ຄວາມຫົດຫູ່ແລະງ່ວມເຫງົາ)ປາສະຈາກ ຖີນະມິດທະ ກຳນົດແສງສະຫວ່າງ ມີສະຕິສຳປະຊັນຍະຢູ່ ຊຳຣະຈິດໃຫ້ບໍລິສຸດຈາກຖີນະມິດທະ ລະອຸດທັດຈະກຸກກຸດຈະ(ຄວາມຟຸ້ງຊ່ານແລະຮ້ອນໃຈ) ເປັນຜູ້ບໍ່

ຟຸ້ງຊ່ານ ມີຈິດສະງົບຢູ່ພາຍໃນ ຊຳຣະຈິດໃຫ້ບໍລິສຸດຈາກອຸດທັດຈະກຸກກຸດຈະ ລະວິຈິກິດສາ (ຄວາມລັງເລສົງໄສ) ຂ້າມວິຈິກິດສາໄດ້ແລ້ວ ບໍ່ມີວິຈິກິດສາໃນກຸສົນທຳທັງຫຼາຍຢູ່ ຊຳຣະຈິດໃຫ້ບໍລິສຸດຈາກວິຈິກິດສາ

ພິກຂຸນັ້ນເມື່ອລະນິວອນ ໕ ປະການນີ້ທີ່ເປັນເຄື່ອງເສົ້າໝອງໃຈ ເປັນເຄື່ອງທອນກຳລັງປັນຍາແລ້ວ ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍແລ້ວ ບັນລຸປະຖົມຊານທີ່ມີ ວິຕົກວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ ອຸປາລີ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ການຢູ່ນີ້ຍິ່ງກວ່າແລະປະນີດກວ່າການຢູ່ທັງຫຼາຍທີ່ມີມາກ່ອນບໍ"

"ແນວນັ້ນ ຂ້ານ້ອຍ"

"ອຸປາລີ ສາວົກທັງຫຼາຍຂອງເຮົາເມື່ອພິຈາລະນາເຫັນທຳແມ່ນນີ້ແລໃນຕົນ ຈຶ່ງອາໄສເສນາສະນະອັນງຽບສະຫງັດ ຄືປ່າໂລ່ງແລະປ່າທຶບຢູ່ ແຕ່ສາວົກຂອງເຮົາເຫຼົ່ານັ້ນຍັງບໍ່ບັນລຸປະໂຫຍດຂອງຕົນກ່ອນ

ອີກປະການໜຶ່ງ ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານ ຯລຯ ຢູ່ ອຸປາລີ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ການຢູ່ນີ້ຍິ່ງກວ່າ ແລະປະນີດກວ່າການຢູ່ທັງຫຼາຍທີ່ມີມາກ່ອນບໍ"

"ແນວນັ້ນ ຂ້ານ້ອຍ"

"ອຸປາລີ ສາວົກທັງຫຼາຍຂອງເຮົາເມື່ອພິຈາລະນາເຫັນທຳແມ່ນນີ້ໃນຕົນ ຈຶ່ງອາໄສ ເສນາສະນະອັນງຽບສະຫງັດ ຄືປ່າໂລ່ງແລະປ່າທຶບຢູ່ ແຕ່ສາວົກຂອງເຮົາເຫຼົ່ານັ້ນຍັງບໍ່ບັນລຸປະໂຫຍດຂອງຕົນກ່ອນ

ອີກປະການໜຶ່ງ ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ຯລຯ ຢູ່ ອຸປາລີ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ການຢູ່ນີ້ຍິ່ງກວ່າ ແລະ ປະນີດກວ່າການຢູ່ທັງຫຼາຍທີ່ມີມາກ່ອນບໍ?"

"ແນວນັ້ນ ຂ້ານ້ອຍ"

"ອຸປາລີ ສາວົກທັງຫຼາຍຂອງເຮົາເມື່ອພິຈາລະນາເຫັນທຳແມ່ນນີ້ໃນຕົນ ຈຶ່ງອາໄສ ເສນາສະນະອັນງຽບສະຫງັດ ຄືປ່າໂລ່ງແລະປ່າທຶບຢູ່ ແຕ່ສາວົກຂອງເຮົາເຫຼົ່ານັ້ນຍັງບໍ່ບັນລຸປະໂຫຍດຂອງຕົນກ່ອນ

ອີກປະການໜຶ່ງ ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນ ພິກຂຸບັນລຸຈະຕຸດຖະຊານ ຯລຯ ຢູ່ ອຸປາລີ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ການຢູ່ນີ້ຍິ່ງກວ່າ ແລະປະນີດກວ່າການຢູ່ທັງຫຼາຍທີ່ມີມາກ່ອນບໍ"

"ແນວນັ້ນ ຂ້ານ້ອຍ"

"ອຸປາລີ ສາວົກທັງຫຼາຍຂອງເຮົາເມື່ອພິຈາລະນາເຫັນທຳແມ່ນນີ້ໃນຕົນ ຈຶ່ງອາໄສ ເສນາສະນະອັນງຽບສະຫງັດ ຄືປ່າໂລ່ງແລະປ່າທຶບຢູ່ ແຕ່ສາວົກຂອງເຮົາເຫຼົ່ານັ້ນຍັງບໍ່ບັນລຸປະໂຫຍດ ຂອງຕົນກ່ອນ

ອີກປະການໜຶ່ງ ພິກຂຸບັນລຸອາກາສາດນັນຈາຍະຕະນະຊານໂດຍກຳນົດວ່າ "ອາກາດຫາບ່ອນສຸດບໍ່ໄດ້" ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາໂດຍປະການທັງປວງ ອຸປາລີ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ການຢູ່ນີ້ຍິ່ງກວ່າແລະປະນີດກວ່າການຢູ່ທັງຫຼາຍທີ່ມີມາກ່ອນບໍ"

"ແນວນັ້ນ ຂ້ານ້ອຍ"

"ອຸປາລີ ສາວົກທັງຫຼາຍຂອງເຮົາເມື່ອພິຈາລະນາເຫັນທຳແມ່ນນີ້ໃນຕົນ ຈຶ່ງອາໄສ ເສນາສະນະອັນງຽບສະຫງັດ ຄືປ່າໂລ່ງແລະປ່າທຶບຢູ່ ແຕ່ສາວົກຂອງເຮົາເຫຼົ່ານັ້ນຍັງບໍ່ບັນລຸປະໂຫຍດ ຂອງຕົນກ່ອນ

ອີກປະການໜຶ່ງ ພິກຂຸລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງບັນລຸ ວິນຍານັນຈາຍະຕະນະຊານໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ຢູ່ ຯລຯ ພິກຂຸລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດ ວ່າ "ບໍ່ມີອັນໃດ" ຢູ່ ຯລຯ ພິກຂຸລ່ວງອາກິນຈັນຍາຍະຕະນະຊານໂດຍປະການທັງປວງ ບັນລຸ ເນວະສັນຍານາສັນຍາຍະຕະນະຊານໂດຍກຳນົດວ່າ "ທຳມະຊາດນີ້ສະງົບ ທຳມະຊາດນີ້ປະນີດ" ຢູ່ ຯລຯ ອຸປາລີ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ການຢູ່ນີ້ຍິ່ງກວ່າແລະປະນີດກວ່າການຢູ່ ທັງຫຼາຍທີ່ມີມາກ່ອນບໍ"

"ແນວນັ້ນ ຂ້ານ້ອຍ"

"ອຸປາລີ ອີກປະການໜຶ່ງ ສາວົກທັງຫຼາຍຂອງເຮົາເມື່ອພິຈາລະນາເຫັນທຳແມ່ນນີ້ ໃນຕົນ ຈຶ່ງອາໄສເສນາສະນະອັນງຽບສະຫງັດຄືປ່າໂລ່ງ ແລະປ່າທຶບຢູ່ແຕ່ສາວົກຂອງເຮົາເຫຼົ່ານັ້ນຍັງບໍ່ບັນລຸປະໂຫຍດ ຂອງຕົນກ່ອນ

ອີກປະການໜຶ່ງ ພິກຂຸລ່ວງເນວະສັນຍານາສັນຍາຍະຕະນະຊານໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣດຢູ່ ແລະອາສະວະທັງຫຼາຍຂອງພິກຂຸນັ້ນເປັນອັນສິ້ນໄປແລ້ວ ຍ້ອນເຫັນດ້ວຍປັນຍາ ອຸປາລີ ທ່ານເຂົ້າໃຈເລື້ອງນັ້ນແນວໃດ ການຢູ່ນີ້ຍິ່ງກວ່າແລະປະນີດກວ່າການຢູ່ທັງຫຼາຍທີ່ມີມາກ່ອນບໍ"

"ແນວນັ້ນ ຂ້ານ້ອຍ"

"ອຸປາລີ ສາວົກທັງຫຼາຍຂອງເຮົາເມື່ອພິຈາລະນາເຫັນທຳແມ່ນນີ້ໃນຕົນ ຈຶ່ງອາໄສ ເສນາສະນະອັນງຽບສະຫງັດຄືປ່າໂລ່ງແລະປ່າທຶບຢູ່ ແຕ່ສາວົກຂອງເຮົາເຫຼົ່ານັ້ນຍັງບໍ່ບັນລຸປະໂຫຍດຂອງຕົນກ່ອນ ອຸປາລີ ທ່ານຈົ່ງຢູ່ໃນສົງເທີ້ນ ເມື່ອທ່ານຢູ່ໃນສົງ ຄວາມສຸກສະບາຍຈັກມີ"

**ອຸປາລີສູດທີ ໙ ຈົບ**

## ໑໐. ອະພັບພະສູດ

## ວ່າດ້ວຍບຸກຄົນຜູ້ບໍ່ອາດເຮັດໃຫ້ແຈ້ງອະຣະຫັດຕະຜົນ

[໑໐໐] ພິກຂຸທັງຫຼາຍ ບຸກຄົນຍັງລະທຳ ໑໐ ປະການນີ້ບໍ່ໄດ້ ກໍບໍ່ອາດເຮັດໃຫ້ແຈ້ງ ອະຣະຫັດຕະຜົນໄດ້

ທຳ ໑໐ ປະການ ອັນໃດແດ່ ຄື

| | | | |
|---|---|---|---|
| ໑. ຣາຄະ | (ຄວາມກຳໜັດ) | ໒. ໂທສະ | (ຄວາມຄິດປະທຸດສະຮ້າຍ) |
| ໓. ໂມຫະ | (ຄວາມຫຼົງ) | ໔. ໂກທະ | (ຄວາມໂກດ) |
| ໕. ອຸປະນາຫະ | (ຄວາມຜູກໂກດ) | ໖. ມັກຂະ | (ຄວາມລົບຫຼູ່ຄຸນທ່ານ) |
| ໗. ປະລາສະ | (ຄວາມຕີສະເໝີ) | ໘. ອິດສາ | (ຄວາມຣິດສະຫຍາ) |
| ໙. ມັດສະຣິຍະ | (ຄວາມຂີ້ຖີ່) | ໑໐. ມານະ | (ຄວາມຖືໂຕ) |

ບຸກຄົນຍັງລະທຳ ໑໐ ປະການນີ້ແລບໍ່ໄດ້ ກໍບໍ່ອາດເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້

ບຸກຄົນລະທຳ ໑໐ ປະການນີ້ໄດ້ແລ້ວ ຈຶ່ງອາດເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້

ທຳ ໑໐ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ຣາຄະ | ໒. ໂທສະ |
| ໓. ໂມຫະ | ໔. ໂກທະ |

໕. ອຸປະນາຫະ
໖. ມັກຂະ
໗. ປະລາສະ
໘. ອິດສາ
໙. ມັດສະຣິຍະ
໑໐. ມານະ

ພິກຂຸທັງຫຼາຍ ບຸກຄົນລະທຳ ໑໐ ປະການນີ້ແລໄດ້ແລ້ວ ຈຶ່ງອາດເຮັດໃຫ້ແຈ້ງອະຣະຫັດຕະຜົນໄດ້

**ອະພັບພະສູດທີ ໑໐ ຈົບ**

**ອຸປາສະກະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



**ທຸຕິຍະປັນນາດ ຈົບບໍລິບູນ**

# ໓. ຕະຕິຍະປັນນາດ

## ໑. ສະມະນະສັນຍາວັກ

### ໝວດວ່າດ້ວຍສະມະນະສັນຍາ[1]

## ໑. ສະມະນະສັນຍາສູດ

### ວ່າດ້ວຍສະມະນະສັນຍາ

[໑໐໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ສະມະນະສັນຍາ ໓ ປະການນີ້ ທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວຍ່ອມເຮັດໃຫ້ທຳ ໗ ປະການບໍລິບູນ ສະມະນະສັນຍາ ໓ ປະການອັນໃດແດ່ ຄື

ສະມະນະສັນຍາ ວ່າ

໑. ເຮົາມີເພດຕ່າງຈາກຄະລຶຫັດ
໒. ຊີວິດຂອງເຮົາເນື່ອງດ້ວຍຜູ້ອື່ນ
໓. ມາຣະຍາດແນວອື່ນທີ່ເຮົາຄວນເຮັດມີຢູ່

ສະມະນະສັນຍາ ໓ ປະການນີ້ແລ ທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດໃຫ້ທຳ ໗ ປະການບໍລິບູນ ທຳ ໗ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ເປັນຜູ້ມີປົກກະຕິເຮັດຕໍ່ເນື່ອງ ປະພຶດຕໍ່ເນື່ອງເປັນປະຈຳໃນສິນທັງຫຼາຍ
໒. ເປັນຜູ້ບໍ່ມີອະພິດຊາ (ຄວາມເພ່ງເລັງຢາກໄດ້ຂອງເຂົາ)
໓. ເປັນຜູ້ບໍ່ມີພະຍາບາດ (ຄວາມຄິດຮ້າຍ)
໔. ເປັນຜູ້ບໍ່ມີມານະ (ຄວາມຖືໂຕ)
໕. ເປັນຜູ້ຕ້ອງການຕໍ່ການສຶກສາ
໖. ເປັນຜູ້ມີການພິຈາລະນາປັດໄຈທັງຫຼາຍອັນເປັນບໍຣິຂານແຫ່ງຊີວິດວ່າ “ປັດໄຈເຫຼົ່ານີ້ມີປະໂຫຍດແນວນີ້” ແລ້ວຈຶ່ງບໍຣິໂພກ
໗. ເປັນຜູ້ຜາຣົບຄວາມພຽນ

ພິກຂຸທັງຫຼາຍ ສະມະນະສັນຍາ ໓ ປະການນີ້ແລ ທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມໃຫ້ທໍາ ໗ ປະການນີ້ບໍລິບູນ

**ສະມະນະສັນຍາສູດທີ ໑ ຈົບ**

# ໒. ໂພດຊັງຄະສູດ[1]

## ວ່າດ້ວຍໂພດຊົງ

[໑໐໒] ພິກຂຸທັງຫຼາຍ ໂພດຊົງ(ທໍາທີ່ເປັນອົງແຫ່ງການຕັດສະຣູ້) ໗ ປະການນີ້ ທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດໃຫ້ວິດຊາ ໓ ປະການບໍລິບູນ

ໂພດຊົງ ໗ ປະການ ອັນໃດແດ່ ຄື

໑. ສະຕິສໍາໂພດຊົງ (ທໍາທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມຣະນຶກໄດ້)
໒. ທໍາມະວິຈະຍະສໍາໂພດຊົງ (ທໍາທີ່ເປັນອົງແຫ່ງການຕັດສະຣູ້ຄືການເຟັ້ນທໍາ)
໓. ວິຣິຍະສໍາໂພດຊົງ (ທໍາທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມພຽນ)
໔. ປີຕິສໍາໂພດຊົງ (ທໍາທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມອີ່ມໃຈ)
໕. ປັດສັດທິສໍາໂພດຊົງ (ທໍາທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມສະງົບກາຍສະງົບໃຈ)
໖. ສະມາທິສໍາໂພດຊົງ (ທໍາທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມຕັ້ງຈິດໝັ້ນ)
໗. ອຸເປກຂາສໍາໂພດຊົງ (ທໍາທີ່ເປັນອົງແຫ່ງການຕັດສະຣູ້ຄືຄວາມມີໃຈເປັນກາງຍ້ອນເຫັນຕາມເປັນຈິງ)

ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ແລ ທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດໃຫ້ວິດຊາ ໓ ປະການບໍລິບູນ ວິດຊາ ໓ ປະການ ອັນໃດແດ່ ຄື

ພິກຂຸໃນທໍາວິໄນນີ້

໑. ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ຯລຯ ເຂົາຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້

໒. ເຫັນໝູ່ສັດຜູ້ກໍາລັງຈຸຕິ ກໍາລັງເກີດ ທັງຊັ້ນຕໍ່າແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງໝູ່ສັດຜູ້ເປັນ

ໄປຕາມກຳວ່າ ຯລຯ ແນວນີ້ແລ໑

໑. ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ

ພິກຂຸທັງຫຼາຍ ໂພດຊົງ ໗ ປະການນີ້ແລ ທີ່ພິກຂຸຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດໃຫ້ ວິດຊາ ໑ ປະການນີ້ບໍລິບູນ

**ໂພດຊັງຄະສູດທີ ໘ ຈົບ**

## ໑. ມິດສັດຕະສູດ

## ວ່າດ້ວຍມິດສັດຕະທຳ

[໑໐໑] ພິກຂຸທັງຫຼາຍ ຍ້ອນອາໄສມິດສັດຕະທຳ (ທຳທີ່ຜິດ) ຈຶ່ງມີການພາດຈາກສະຫວັນແລະມັກຜົນ ບໍ່ມີການບັນລຸສະຫວັນແລະມັກຜົນ

ຍ້ອນອາໄສມິດສັດຕະທຳແນວໃດ ຈຶ່ງມີການພາດຈາກສະຫວັນແລະມັກຜົນ ບໍ່ມີການບັນລຸສະຫວັນແລະມັກຜົນ

| | | |
|---|---|---|
| ຄື ຜູ້ມີມິດສາທິດຖິ (ເຫັນຜິດ) | ຍ່ອມມີມິດສາສັງກັບປະ | (ດຳຣິຜິດ) |
| ຜູ້ມີມິດສາສັງກັບປະ | ຍ່ອມມີມິດສາວາຈາ | (ເຈລະຈາຜິດ) |
| ຜູ້ມີມິດສາວາຈາ | ຍ່ອມມີມິດສາກຳມັນຕະ | (ກະທຳຜິດ) |
| ຜູ້ມີມິດສາກຳມັນຕະ | ຍ່ອມມີມິດສາອາຊີວະ | (ລ້ຽງຊີບຜິດ) |
| ຜູ້ມີມິດສາອາຊີວະ | ຍ່ອມມີມິດສາວາຍາມະ | (ພະຍາຍາມຜິດ) |
| ຜູ້ມີມິດສາວາຍາມະ | ຍ່ອມມີມິດສາສະຕິ | (ຣະນຶກຜິດ) |
| ຜູ້ມີມິດສາສະຕິ | ຍ່ອມມີມິດສາສະມາທິ | (ຕັ້ງຈິດໝັ້ນຜິດ) |
| ຜູ້ມີມິດສາສະມາທິ | ຍ່ອມມີມິດສາຍານະ | (ຮູ້ຜິດ) |
| ຜູ້ມີມິດສາຍານະ | ຍ່ອມມີມິດສາວິມຸດຕິ | (ລຸດພົ້ນຜິດ) |

ພິກຂຸທັງຫຼາຍ ຍ້ອນອາໄສມິດສັດຕະທຳແນວນີ້ແລ ຈຶ່ງມີການພາດຈາກສະຫວັນແລະມັກຜົນ ບໍ່ມີການບັນລຸສະຫວັນແລະມັກຜົນ

ພິກຂຸທັງຫຼາຍ ຍ້ອນອາໄສສຳມັດຕະທຳ (ທຳທີ່ຖືກ) ຈຶ່ງມີການບັນລຸສະຫວັນ ແລະມັກຜົນ ບໍ່ມີການພາດຈາກສະຫວັນ ແລະມັກຜົນ

ຍ້ອນອາໄສສຳມັດຕະທຳແນວໃດ ຈຶ່ງມີການບັນລຸສະຫວັນແລະມັກຜົນ ບໍ່ມີການພາດຈາກສະຫວັນແລະມັກຜົນ

| | | |
|---|---|---|
| ຄື ຜູ້ມີສຳມາທິດຖິ(ເຫັນຖືກ) | ຍ່ອມມີສຳມາສັງກັບປະ | (ຄິດຖືກ) |
| ຜູ້ມີສຳມາສັງກັບປະ | ຍ່ອມມີສຳມາວາຈາ | (ເຈຣະຈາຖືກ) |
| ຜູ້ມີສຳມາວາຈາ | ຍ່ອມມີສຳມາກຳມັນຕະ | (ການງານຖືກ) |
| ຜູ້ມີສຳມາກຳມັນຕະ | ຍ່ອມມີສຳມາອາຊີວະ | (ລ້ຽງຊີວິດຖືກ) |
| ຜູ້ມີສຳມາອາຊີວະ | ຍ່ອມມີສຳມາວາຍາມະ | (ພະຍາຍາມຖືກ) |
| ຜູ້ມີສຳມາວາຍາມະ | ຍ່ອມມີສຳມາສະຕິ | (ຣະນຶກຖືກ) |
| ຜູ້ມີສຳມາສະຕິ | ຍ່ອມມີສຳມາສະມາທິ | (ຕັ້ງຈິດໝັ້ນຖືກ) |
| ຜູ້ມີສຳມາສະມາທິ | ຍ່ອມມີສຳມາຍານະ | (ຮູ້ຖືກ) |
| ຜູ້ມີສຳມາຍານະ | ຍ່ອມມີສຳມາວິມຸດຕິ | (ລຸດພົ້ນຖືກ) |

ພິກຂຸທັງຫຼາຍ ຍ້ອນອາໄສສຳມັດຕະທຳແນວນີ້ແລ ຈຶ່ງມີການບັນລຸສະຫວັນແລະມັກຜົນ ບໍ່ມີການພາດຈາກສະຫວັນແລະມັກຜົນ

**ມິດສັດຕະສູດທີ ໓ ຈົບ**

## ໔. ພີຊະສູດ

## ວ່າດ້ວຍບຸກຄົນປຽບຄືເມັດພືດ

[໑໐໔] ພິກຂຸທັງຫຼາຍ ກາຍຍະກຳທີ່ປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ (ຄວາມເຫັນ) ວະຈີກຳທີ່ປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ມະໂນກຳທີ່ປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ເຈຕະນາ ຄວາມປາຖະໜາ ຄວາມຕັ້ງໃຈ ແລະສັງຂານທັງຫຼາຍຂອງບຸກຄົນຜູ້ມີມິດສາທິດຖິ ມິດສາສັງກັບປະ ມິດສາວາຈາ ມິດສາກຳມັນຕະ ມິດສາອາຊີວະ ມິດສາວາຍາມະ ມິດສາສະຕິ ມິດສາສະມາທິ ມິດສາຍານະ ແລະມິດສາວິມຸດຕິ ທຳທັງໝົດນັ້ນ ຍ່ອມເປັນໄປເພື່ອຜົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ບໍ່ເກື້ອກູນ ເປັນທຸກ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນທິດຖິຊົ່ວຊາມ

ກາຍຍະກຳທີ່ປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ຯລຯ ຂໍ້ນັ້ນຍ້ອນເຫດໃດ ຍ້ອນທິດຖິຊົ່ວຊາມ ປຽບຄືເມັດກະເດົາ ເມັດບວບຂົມ ຫຼືເມັດນ້ຳເຕົ້າຂົມທີ່ບຸກຄົນປູກໄວ້ໃນດິນຊຸ່ມຊື້ນ ຣົດດິນ ແລະຣົດນ້ຳທີ່ມັນດູດຊັບເອົາໄວ້ທັງໝົດຍ່ອມເປັນໄປເພື່ອຄວາມເປັນຂອງຂົມ ເຜັດຮ້ອນ ບໍ່ໜ້າຍິນດີ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນເມັດກະເດົາເປັນຕົ້ນນັ້ນຊົ່ວ

ກາຍຍະກຳທີ່ປະຕິບັດ ໃຫ້ບໍລິບູນຕາມສົມຄວນ ແກ່ທິດຖິວະຈີກຳທີ່ປະຕິບັດ ໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ມະໂນກຳທີ່ປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ເຈຕະນາ ຄວາມປາຖະໜາ ຄວາມຕັ້ງໃຈ ແລະສັງຂານທັງຫຼາຍຂອງບຸກຄົນຜູ້ມີສຳມາທິດຖິ ສຳມາສັງກັບປະ ສຳມາວາຈາ ສຳມາກຳມັນຕະ ສຳມາອາຊີວະ ສຳມາວາຍາມະ ສຳມາສະຕິ ສຳມາສະມາທິ ສຳມາຍານະ ແລະສຳມາວິມຸດຕິ ທຳທັງໝົດນັ້ນ ຍ່ອມເປັນໄປເພື່ອຜົນທີ່ໜ້າປາຖະໜາ ໜ້າຕ້ອງການ ໜ້າພໍໃຈ ເກື້ອກູນ ເປັນສຸກ ຂໍ້ນັ້ນຍ້ອນເຫດໃດ ຍ້ອນທິດຖິດີ

ກາຍຍະກຳທີ່ປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ៷ລ៷ ຂໍ້ນັ້ນຍ້ອນເຫດໃດ ຍ້ອນທິດຖິດີ ປຽບຄືພັນອ້ອຍ ພັນເຂົ້າສາລີ ຫຼືເມັດຈັນທີ່ບຸກຄົນປູກໄວ້ໃນດິນຊຸ່ມຊື້ນ ຣົດດິນແລະຣົດນ້ຳທີ່ມັນດູດຊັບເອົາໄວ້ທັງໝົດຍ່ອມເປັນໄປເພື່ອຄວາມເປັນຂອງຫວານ ເປັນຕາແຊບ ໜ້າຊື່ນໃຈ ຂໍ້ນັ້ນຍ້ອນເຫດໃດ ຍ້ອນພັນອ້ອຍເປັນຕົ້ນນັ້ນດີ

**ພີຊະສູດທີ ໔ ຈົບ**

# ໕. ວິດຊາສູດ

## ວ່າດ້ວຍວິດຊາ

[໑໐໕] ພິກຂຸທັງຫຼາຍ ອະວິດຊາ(ຄວາມບໍ່ຮູ້ແຈ້ງ)ເປັນປະທານແຫ່ງການເຂົ້າເຖິງອະກຸສົນທຳ ອະຫິຣິ(ຄວາມບໍ່ອາຍບາບ) ອະໂນດຕັບປະ(ຄວາມບໍ່ຢ້ານບາບ) ກໍມີຕາມມາດ້ວຍ

| | |
|---|---|
| ໑. ຜູ້ມີອະວິດຊາບໍ່ເຫັນແຈ້ງ | ຍ່ອມມີມິດສາທິດຖິ |
| ໒. ຜູ້ມີມິດສາທິດຖິ | ຍ່ອມມີມິດສາສັງກັບປະ |
| ໓. ຜູ້ມີມິດສາສັງກັບປະ | ຍ່ອມມີມິດສາວາຈາ |
| ໔. ຜູ້ມີມິດສາວາຈາ | ຍ່ອມມີມິດສາກຳມັນຕະ |
| ໕. ຜູ້ມີມິດສາກຳມັນຕະ | ຍ່ອມມີມິດສາອາຊີວະ |
| ໖. ຜູ້ມີມິດສາອາຊີວະ | ຍ່ອມມີມິດສາວາຍາມະ |
| ໗. ຜູ້ມີມິດສາວາຍາມະ | ຍ່ອມມີມິດສາສະຕິ |
| ໘. ຜູ້ມີມິດສາສະຕິ | ຍ່ອມມີມິດສາສະມາທິ |
| ໙. ຜູ້ມີມິດສາສະມາທິ | ຍ່ອມມີມິດສາຍານະ |
| ໑໐. ຜູ້ມີມິດສາຍານະ | ຍ່ອມມີມິດສາວິມຸດຕິ |

ພິກຂຸທັງຫຼາຍ ວິດຊາ (ຄວາມຮູ້ແຈ້ງ) ເປັນປະທານແຫ່ງການເຂົ້າເຖິງກຸສົນທຳທັງຫຼາຍ ຫິຣິ (ຄວາມອາຍບາບ) ແລະໂອດຕັບປະ (ຄວາມຢ້ານບາບ) ກໍມີຕາມມາດ້ວຍ

| | |
|---|---|
| ໑. ຜູ້ມີວິດຊາເຫັນແຈ້ງ | ຍ່ອມມີສຳມາທິດຖິ |
| ໒. ຜູ້ມີສຳມາທິດຖິ | ຍ່ອມມີສຳມາສັງກັບປະ |
| ໓. ຜູ້ມີສຳມາສັງກັບປະ | ຍ່ອມມີສຳມາວາຈາ |
| ໔. ຜູ້ມີສຳມາວາຈາ | ຍ່ອມມີສຳມາກຳມັນຕະ |
| ໕. ຜູ້ມີສຳມາກຳມັນຕະ | ຍ່ອມມີສຳມາອາຊີວະ |
| ໖. ຜູ້ມີສຳມາອາຊີວະ | ຍ່ອມມີສຳມາວາຍາມະ |
| ໗. ຜູ້ມີສຳມາວາຍາມະ | ຍ່ອມມີສຳມາສະຕິ |
| ໘. ຜູ້ມີສຳມາສະຕິ | ຍ່ອມມີສຳມາສະມາທິ |
| ໙. ຜູ້ມີສຳມາສະມາທິ | ຍ່ອມມີສຳມາຍານະ |
| ໑໐. ຜູ້ມີສຳມາຍານະ | ຍ່ອມມີສຳມາວິມຸດຕິ |

**ວິດຊາສູດທີ ໕ ຈົບ**

## ໖. ນິດຊະຣະສູດ
## ວ່າດ້ວຍເຫດແຫ່ງຄວາມເສື່ອມ

[໑໐໖] ພິກຂຸທັງຫຼາຍ ເຫດແຫ່ງຄວາມເສື່ອມ ໑໐ ປະການນີ້
ເຫດແຫ່ງຄວາມເສື່ອມ ໑໐ ປະການ ອັນໃດແດ່ ຄື

໑. ເມື່ອມີສຳມາທິດຖິ ມິດສາທິດຖິຍ່ອມເສື່ອມໄປ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນ ມິດສາທິດຖິເປັນປັດໄຈຍ່ອມເສື່ອມໄປ ແລະກຸສົນທຳຫຼວງຫຼາຍຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາທິດຖິເປັນປັດໄຈ

໒. ເມື່ອມີສຳມາສັງກັບປະ ມິດສາສັງກັບປະຍ່ອມເສື່ອມໄປ ບາບອະກຸສົນທຳເປັນ ຈຳນວນຫຼາຍທີ່ເກີດຂຶ້ນຍ້ອນມິດສາສັງກັບປະເປັນປັດໄຈຍ່ອມເສື່ອມໄປ ແລະກຸສົນທຳຫຼວງຫຼາຍຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາສັງກັບປະເປັນປັດໄຈ

໓. ເມື່ອມີສຳມາວາຈາ ມິດສາວາຈາຍ່ອມເສື່ອມໄປ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາວາຈາເປັນປັດໄຈຍ່ອມເສື່ອມໄປ ແລະກຸສົນທຳຫຼວງຫຼາຍຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາວາຈາເປັນປັດໄຈ

໔. ເມື່ອມີສຳມາກຳມັນຕະ ມິດສາກຳມັນຕະຍ່ອມເສື່ອມໄປ ບາບອະກຸສົນທຳເປັນຈຳນວນຫຼາຍທີ່ເກີດຂຶ້ນຍ້ອນມິດສາກຳມັນຕະເປັນປັດໄຈຍ່ອມເສື່ອມໄປ

ແລະກຸສົນທຳຫຼວງຫຼາຍຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາກຳມັນຕະເປັນປັດໄຈ

໕. ເມື່ອມີສຳມາອາຊີວະເປັນປັດໄຈ ມິດສາອາຊີວະຍ່ອມເສື່ອມໄປ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາອາຊີວະເປັນປັດໄຈຍ່ອມເສື່ອມໄປ ແລະກຸສົນທຳຫຼວງຫຼາຍ ຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາອາຊີວະເປັນປັດໄຈ

໖. ເມື່ອມີສຳມາວາຍາມະ ມິດສາວາຍາມະຍ່ອມເສື່ອມໄປ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາວາຍາມະເປັນປັດໄຈຍ່ອມເສື່ອມໄປ ແລະກຸສົນທຳ ຫຼວງຫຼາຍຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາວາຍາມະເປັນປັດໄຈ

໗. ເມື່ອມີສຳມາສະຕິ ມິດສາສະຕິຍ່ອມເສື່ອມໄປ ບາບອະກຸສົນທຳຫຼວງຫຼາຍ ທີ່ເກີດຂຶ້ນຍ້ອນມິດສາສະຕິເປັນປັດໄຈຍ່ອມເສື່ອມໄປ ແລະກຸສົນທຳຫຼວງຫຼາຍຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາສະຕິເປັນປັດໄຈ

໘. ເມື່ອມີສຳມາສະມາທິ ມິດສາສະມາທິຍ່ອມເສື່ອມໄປ ບາບອະກຸສົນທຳຫຼວງຫຼາຍ ທີ່ເກີດຂຶ້ນຍ້ອນມິດສາສະມາທິເປັນປັດໄຈຍ່ອມເສື່ອມໄປ ແລະກຸສົນທຳຫຼວງຫຼາຍຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາສະມາທິເປັນປັດໄຈ

໙. ເມື່ອມີສຳມາຍານະ ມິດສາຍານະຍ່ອມເສື່ອມໄປ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາຍານະເປັນປັດໄຈຍ່ອມເສື່ອມໄປ ແລະກຸສົນທຳຫຼວງຫຼາຍຍ່ອມ ເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາຍານະເປັນປັດໄຈ

໑໐. ເມື່ອມີສຳມາວິມຸດຕິ ມິດສາວິມຸດຕິຍ່ອມເສື່ອມໄປ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາວິມຸດຕິເປັນປັດໄຈຍ່ອມເສື່ອມໄປ ແລະກຸສົນທຳຫຼວງຫຼາຍ ຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາວິມຸດຕິເປັນປັດໄຈ

ພິກຂຸທັງຫຼາຍ ເຫດແຫ່ງຄວາມເສື່ອມ ໑໐ ປະການນີ້ແລ

**ນິດຊະຣະສູດທີ່ ໖ ຈົບ**

# ໗. ໂທວະນະສູດ

## ວ່າດ້ວຍທຳນຽມການລ້າງກະດູກຜູ້ຕາຍ

[໑໐໗] ພິກຂຸທັງຫຼາຍ ໃນທັກຂິນາຊົນນະບົດ ມີທຳນຽມການລ້າງກະດູກຂອງຍາດຜູ້ຕາຍ ໃນທຳນຽມການລ້າງກະດູກນັ້ນ ມີເຂົ້າແດ່ ນ້ຳແດ່ ຂອງຫຍ້ຳແດ່ ຂອງບໍຣິໂພກແດ່ ເຄື່ອງຊົມແດ່ ເຄື່ອງດື່ມແດ່ ການຟ້ອນລຳແດ່ ເພງຂັບແດ່ ການເສບດົນຕີແດ່ ທຳນຽມການລ້າງນີ້ມີຢູ່ ເຮົາບໍ່ໄດ້ກ່າວວ່າບໍ່ມີ ແຕ່ການລ້າງນັ້ນແລເປັນຂອງຊົ່ວ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ເປັນຂອງພຣະອະຣິຍະ ບໍ່ມີປະໂຫຍດ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ

ເຮົາຈັກສະແດງການລ້າງອັນເປັນຂອງພຣະອະຣິຍະທີ່ເປັນໄປເພື່ອຄວາມເບື່ອໜ່າຍຢ່າງທີ່ສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານທີ່ສັດທັງຫຼາຍຜູ້ມີຊາດ (ຄວາມເກີດ) ເປັນທຳມະດາອາໄສແລ້ວຍ່ອມພົ້ນຈາກຊາດ ຜູ້ມີຊະຣາ (ຄວາມແກ່) ເປັນທຳມະດາຍ່ອມພົ້ນຈາກຊະຣາ ຜູ້ມີມໍລະນະ(ຄວາມຕາຍ)ເປັນທຳມະດາຍ່ອມພົ້ນຈາກມໍລະນະ ຜູ້ມີໂສກະ (ຄວາມໂສກ) ປະຣິເທວະ (ຄວາມຮ່ຳໄຮ) ທຸກ (ຄວາມທຸກກາຍ) ໂທມະນັດ (ຄວາມທຸກໃຈ) ແລະອຸປາຍາດ (ຄວາມຄັບແຄ້ນໃຈ) ເປັນທຳມະດາ ຍ່ອມພົ້ນຈາກໂສກະປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ຕັດເລື້ອງນີ້ວ່າ

ການລ້າງອັນເປັນຂອງພຣະອະຣິຍະທີ່ເປັນໄປ ເພື່ອຄວາມເບື່ອໜ່າຍຢ່າງທີ່ສຸດເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານທີ່ສັດທັງຫຼາຍ ຜູ້ມີຊາດເປັນທຳມະດາອາໄສແລ້ວຍ່ອມພົ້ນຈາກຊາດ ຜູ້ມີຊະຣາເປັນທຳມະດາຍ່ອມພົ້ນຈາກຊະຣາ ຜູ້ມີມໍລະນະເປັນທຳມະດາຍ່ອມພົ້ນຈາກມໍລະນະ ຜູ້ມີໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດເປັນທຳມະດາ ຍ່ອມພົ້ນຈາກໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ ເປັນແນວໃດ ຄື

໑. ຜູ້ມີສຳມາທິດຖິ ຍ່ອມລ້າງມິດສາທິດຖິໄດ້ ລ້າງບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາທິດຖິເປັນປັດໄຈໄດ້ ແລະ ກຸສົນທຳຫຼວງຫຼາຍຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາທິດຖິເປັນປັດໄຈ

໒. ຜູ້ມີສຳມາສັງກັບປະ ຍ່ອມລ້າງມິດສາສັງກັບປະໄດ້ ຯລຯ

໓. ຜູ້ມີສຳມາວາຈາ ຍ່ອມລ້າງມິດສາວາຈາໄດ້ ຯລຯ

໔. ຜູ້ມີສຳມາກຳມັນຕະ ຍ່ອມລ້າງມິດສາກຳມັນຕະໄດ້ ฯລฯ
໕. ຜູ້ມີສຳມາອາຊີວະ ຍ່ອມລ້າງມິດສາອາຊີວະໄດ້ ฯລฯ
໖. ຜູ້ມີສຳມາວາຍາມະ ຍ່ອມລ້າງມິດສາວາຍາມະໄດ້ ฯລฯ
໗. ຜູ້ມີສຳມາສະຕິ ຍ່ອມລ້າງມິດສາສະຕິໄດ້ ฯລฯ
໘. ຜູ້ມີສຳມາສະມາທິ ຍ່ອມລ້າງມິດສາສະມາທິໄດ້ ฯລฯ
໙. ຜູ້ມີສຳມາຍານະ ຍ່ອມລ້າງມິດສາຍານະໄດ້ ฯລฯ
໑໐. ຜູ້ມີສຳມາວິມຸດຕິ ຍ່ອມລ້າງມິດສາວິມຸດຕິໄດ້ ລ້າງບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາວິມຸດຕິເປັນປັດໄຈໄດ້ ແລະກຸສົນທຳຫຼວງຫຼາຍ ຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາວິມຸດຕິເປັນປັດໄຈ

ພິກຂຸທັງຫຼາຍ ການລ້າງອັນເປັນຂອງພຣະອະຣິຍະນີ້ແລ ທີ່ເປັນໄປເພື່ອຄວາມເບື່ອໜ່າຍຢ່າງທີ່ສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະຫງົບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານທີ່ສັດທັງຫຼາຍ ຜູ້ມີຊາດເປັນທຳມະດາອາໄສແລ້ວຍ່ອມພົ້ນຈາກຊາດ ຜູ້ມີຊະຣາເປັນທຳມະດາຍ່ອມພົ້ນຈາກຊະຣາ ຜູ້ມີມໍລະນະເປັນທຳມະດາຍ່ອມພົ້ນຈາກມໍລະນະ ຜູ້ມີໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດເປັນທຳມະດາຍ່ອມພົ້ນຈາກໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດ

**ໂທວະນະສູດທີ ໗ ຈົບ**

## ໘. ຕິກິດສະກະສູດ
## ວ່າດ້ວຍໝໍໃຫ້ຢາລະບາຍ

[໑໐໘] ພິກຂຸທັງຫຼາຍ ໝໍທັງຫຼາຍຍ່ອມໃຫ້ຢາລະບາຍ ເພື່ອບຳບັດອາພາດອັນມີປິເປັນສະມຸດຖານແດ່ ມີສະເລດເປັນສະມຸດຖານແດ່ ມີລົມເປັນສະມຸດຖານແດ່ ຢາລະບາຍນີ້ມີຢູ່ ເຮົາບໍ່ໄດ້ກ່າວວ່າບໍ່ມີ ແຕ່ຢາລະບາຍນີ້ແລ ໃຊ້ໄດ້ຜົນແດ່ ບໍ່ໄດ້ຜົນແດ່

ເຮົາຈັກສະແດງຢາລະບາຍອັນເປັນຂອງພຣະອະຣິຍະທີ່ໃຊ້ໄດ້ຜົນແນ່ນອນ ບໍ່ແມ່ນຂາດຜົນ ທີ່ສັດທັງຫຼາຍ ຜູ້ມີຊາດເປັນທຳມະດາອາໄສແລ້ວ ຍ່ອມພົ້ນຈາກຊາດ ຜູ້ມີຊະຣາເປັນທຳມະດາ ຍ່ອມພົ້ນຈາກຊະຣາ ຜູ້ມີມໍລະນະເປັນທຳມະດາຍ່ອມພົ້ນຈາກມໍລະນະ ຜູ້ມີໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດເປັນທຳມະດາຍ່ອມພົ້ນຈາກໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດໄດ້ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ຢາລະບາຍອັນເປັນຂອງພຣະອະຣິຍະທີ່ໃຊ້ໄດ້ຜົນແນ່ນອນ ບໍ່ແມ່ນຂາດຜົນ ທີ່ສັດ

ທັງຫຼາຍຜູ້ມີຊາດເປັນທຳມະດາອາໄສແລ້ວຍ່ອມພົ້ນຈາກຊາດ ຜູ້ມີຊະຣາເປັນທຳມະດາ ຍ່ອມພົ້ນຈາກຊະຣາ ຜູ້ມີມໍລະນະເປັນທຳມະດາຍ່ອມພົ້ນຈາກມໍລະນະ ຜູ້ມີໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດເປັນທຳມະດາຍ່ອມພົ້ນຈາກໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດໄດ້ ເປັນແນວໃດ? ຄື

໑. ຜູ້ມີສຳມາທິດຖິ ຍ່ອມລະບາຍມິດສາທິດຖິໄດ້ ລະບາຍບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາທິດຖິເປັນປັດໄຈໄດ້ ແລະກຸສົນທຳຫຼວງຫຼາຍຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາທິດຖິເປັນປັດໄຈ
໒. ຜູ້ມີສຳມາສັງກັບປະ ຍ່ອມລະບາຍມິດສາສັງກັບປະໄດ້ ฯລฯ
໓. ຜູ້ມີສຳມາວາຈາ ຍ່ອມລະບາຍມິດສາວາຈາໄດ້ ฯລฯ
໔. ຜູ້ມີສຳມາກຳມັນຕະ ຍ່ອມລະບາຍມິດສາກຳມັນຕະໄດ້ ฯລฯ
໕. ຜູ້ມີສຳມາອາຊີວະ ຍ່ອມລະບາຍມິດສາອາຊີວະໄດ້ ฯລฯ
໖. ຜູ້ມີສຳມາວາຍາມະ ຍ່ອມລະບາຍມິດສາວາຍາມະໄດ້ ฯລฯ
໗. ຜູ້ມີສຳມາສະຕິ ຍ່ອມລະບາຍມິດສາສະຕິໄດ້ ฯລฯ
໘. ຜູ້ມີສຳມາສະມາທິ ຍ່ອມລະບາຍສຳມາສະມາທິໄດ້ ฯລฯ
໙. ຜູ້ມີສຳມາຍານະ ຍ່ອມລະບາຍມິດສາຍານະໄດ້ ฯລฯ
໑໐. ຜູ້ມີສຳມາວິມຸດຕິ ຍ່ອມລະບາຍມິດສາວິມຸດຕິໄດ້ ລະບາຍບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາວິມຸດຕິເປັນປັດໄຈໄດ້ ແລະກຸສົນທຳຫຼວງຫຼາຍຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາວິມຸດຕິເປັນປັດໄຈ

ພິກຂຸທັງຫຼາຍ ຢາລະບາຍອັນເປັນຂອງພຣະອະຣິຍະນີ້ແລທີ່ໃຊ້ໄດ້ຜົນແນ່ນອນ ບໍ່ແມ່ນຂາດຜົນ ທີ່ສັດທັງຫຼາຍຜູ້ມີຊາດເປັນທຳມະດາອາໄສແລ້ວຍ່ອມພົ້ນຈາກຊາດ ຜູ້ມີຊະຣາເປັນທຳມະດາຍ່ອມພົ້ນຈາກຊະຣາ ຜູ້ມີມໍລະນະເປັນທຳມະດາຍ່ອມພົ້ນຈາກມໍລະນະ ຜູ້ມີໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດເປັນທຳມະດາຍ່ອມພົ້ນຈາກໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດໄດ້

**ຕິກິດສະກະສູດທີ ໘ ຈົບ**

## ໙. ວະມະນະສູດ
## ວ່າດ້ວຍໝໍໃຫ້ຢາຄາຍ

[໑໐໙] ພິກຂຸທັງຫຼາຍ ໝໍທັງຫຼາຍຍ່ອມໃຫ້ຢາຄາຍ ເພື່ອບຳບັດອາພາດອັນມີບິເປັນສະມຸດຖານແດ່ ມີສະເລດເປັນສະມຸດຖານແດ່ ມີລົມເປັນສະມຸດຖານແດ່ ຢາຄາຍນີ້ມີຢູ່ ເຮົາບໍ່ໄດ້ກ່າວວ່າບໍ່ມີ ແຕ່ຢາຄາຍນີ້ແລ ໃຊ້ໄດ້ຜົນແດ່ ບໍ່ໄດ້ຜົນແດ່

ເຮົາຈັກສະແດງຢາຄາຍອັນເປັນຂອງພຣະອະຣິຍະທີ່ໃຊ້ໄດ້ຜົນແນ່ນອນ ບໍ່ແມ່ນຂາດຜົນ ທີ່ສັດທັງຫຼາຍ ຜູ້ມີຊາດເປັນທຳມະດາອາໄສແລ້ວຍ່ອມພົ້ນຈາກຊາດ ຜູ້ມີຊະຣາເປັນທຳມະດາຍ່ອມພົ້ນຈາກຊະຣາ ຜູ້ມີມໍລະນະເປັນທຳມະດາຍ່ອມພົ້ນຈາກມໍລະນະ ຜູ້ມີໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດເປັນທຳມະດາຍ່ອມພົ້ນຈາກໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດໄດ້ ທ່ານທັງຫຼາຍຈົ່ງຟັງ ຯລຯ[1]

ຢາຄາຍອັນເປັນຂອງພຣະອະຣິຍະທີ່ໃຊ້ໄດ້ຜົນແນ່ນອນ ບໍ່ແມ່ນຂາດຜົນ ທີ່ສັດທັງຫຼາຍ ຜູ້ມີຊາດເປັນທຳມະດາອາໄສແລ້ວ ຍ່ອມພົ້ນຈາກຊາດ ຯລຯ ຜູ້ມີໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດເປັນທຳມະດາຍ່ອມພົ້ນຈາກໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດໄດ້ ເປັນແນວໃດ? ຄື

໑. ຜູ້ມີສຳມາທິດຖິ ຍ່ອມຄາຍມິດສາທິດຖິໄດ້ ຄາຍບາບອະກຸສົນທຳເປັນຈຳນວນຫຼາຍທີ່ເກີດຂຶ້ນຍ້ອນມິດສາທິດຖິເປັນປັດໄຈໄດ້ ແລະກຸສົນທຳຫຼວງຫຼາຍຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາທິດຖິເປັນປັດໄຈ
໒. ຜູ້ມີສຳມາສັງກັບປະ ຍ່ອມຄາຍມິດສາສັງກັບປະໄດ້ ຯລຯ
໓. ຜູ້ມີສຳມາວາຈາ ຍ່ອມຄາຍມິດສາວາຈາໄດ້ ຯລຯ
໔. ຜູ້ມີສຳມາກຳມັນຕະ ຍ່ອມຄາຍມິດສາກຳມັນຕະໄດ້ ຯລຯ
໕. ຜູ້ມີສຳມາອາຊີວະ ຍ່ອມຄາຍມິດສາອາຊີວະໄດ້ ຯລຯ
໖. ຜູ້ມີສຳມາວາຍາມະ ຍ່ອມຄາຍມິດສາວາຍາມະໄດ້ ຯລຯ
໗. ຜູ້ມີສຳມາສະຕິ ຍ່ອມຄາຍມິດສາສະຕິໄດ້ ຯລຯ
໘. ຜູ້ມີສຳມາສະມາທິ ຍ່ອມຄາຍມິດສາສະມາທິໄດ້ ຯລຯ
໙. ຜູ້ມີສຳມາຍານະ ຍ່ອມຄາຍມິດສາຍານະໄດ້ ຯລຯ
໑໐. ຜູ້ມີສຳມາວິມຸດຕິ ຍ່ອມຄາຍມິດສາວິມຸດຕິໄດ້ ຄາຍບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາວິມຸດຕິເປັນປັດໄຈໄດ້ ແລະກຸສົນທຳຫຼວງຫຼາຍຍ່ອມເຖິງຄວາມຈະເລີນເຕັມທີ່ ຍ້ອນສຳມາວິມຸດຕິເປັນປັດໄຈ

ພິກຂຸທັງຫຼາຍ ຢາຄາຍອັນເປັນຂອງພຣະອະຣິຍະນີ້ແລ ທີ່ໃຊ້ໄດ້ຜົນແນ່ນອນ ບໍ່ແມ່ນຂາດຜົນ ທີ່ສັດທັງຫຼາຍຜູ້ມີຊາດເປັນທຳມະດາອາໄສແລ້ວຍ່ອມພົ້ນຈາກຊາດ ຜູ້ມີຊະຣາເປັນທຳມະດາຍ່ອມພົ້ນຈາກຊະຣາ ຜູ້ມີມໍລະນະເປັນທຳມະດາຍ່ອມພົ້ນຈາກມໍລະນະ ຜູ້ມີໂສກະ ປະຣິເທວະ ທຸກ ໂທມະນັດ ແລະອຸປາຍາດເປັນທຳມະດາຍ່ອມພົ້ນຈາກໂສກະ ປະຣິເທວະ ທຸກ ໂທມະນັດ ແລະ ອຸປາຍາດໄດ້

**ວະມະນະສູດທີ ໗ ຈົບ**

# ໑໐. ນິດທະມະນີຍະສູດ
## ວ່າດ້ວຍທຳອັນບຸກຄົນເພິ່ງກຳຈັດ

[໑໑໐] ພິກຂຸທັງຫຼາຍ ທຳອັນບຸກຄົນເພິ່ງກຳຈັດ ໑໐ ປະການນີ້

ທຳອັນບຸກຄົນເພິ່ງກຳຈັດ ໑໐ ປະການ ອັນໃດແດ່ ຄື

໑. ຜູ້ມີສຳມາທິດຖິ ຍ່ອມກຳຈັດມິດສາທິດຖິໄດ້ ກຳຈັດບາບອະກຸສົນທຳເປັນຈຳນວນຫຼາຍທີ່ເກີດຂຶ້ນຍ້ອນມິດສາທິດຖິເປັນປັດໄຈໄດ້ ແລະກຸສົນທຳຫຼວງຫຼາຍ ຍ່ອມເຖິງຄວາມຈະ ເລີນເຕັມທີ່ຍ້ອນສຳມາທິດຖິເປັນປັດໄຈ

໒. ຜູ້ມີສຳມາສັງກັບປະ ຍ່ອມກຳຈັດມິດສາສັງກັບປະໄດ້ ຯລຯ

໓. ຜູ້ມີສຳມາວາຈາ ຍ່ອມກຳຈັດມິດສາວາຈາໄດ້ ຯລຯ

໔. ຜູ້ມີສຳມາກຳມັນຕະ ຍ່ອມກຳຈັດມິດສາກຳມັນຕະໄດ້ ຯລຯ

໕. ຜູ້ມີສຳມາອາຊີວະ ຍ່ອມກຳຈັດມິດສາອາຊີວະໄດ້ ຯລຯ

໖. ຜູ້ມີສຳມາວາຍາມະ ຍ່ອມກຳຈັດມິດສາວາຍາມະໄດ້ ຯລຯ

໗. ຜູ້ມີສຳມາສະຕິ ຍ່ອມກຳຈັດສຳມາສະຕິໄດ້ ຯລຯ

໘. ຜູ້ມີສຳມາສະມາທິ ຍ່ອມກຳຈັດມິດສາສະມາທິໄດ້ ຯລຯ

໙. ຜູ້ມີສຳມາຍານະ ຍ່ອມກຳຈັດມິດສາຍານະໄດ້ ຯລຯ

໑໐. ຜູ້ມີສຳມາວິມຸດຕິ ຍ່ອມກຳຈັດມິດສາວິມຸດຕິໄດ້ ກຳຈັດບາບອະກຸສົນທຳເປັນຈຳນວນຫຼາຍທີ່ເກີດຂຶ້ນຍ້ອນມິດສາວິມຸດຕິເປັນປັດໄຈໄດ້ ແລະກຸສົນທຳຫຼວງຫຼາຍຍ່ອມເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາວິມຸດຕິເປັນປັດໄຈ

ພິກຂຸທັງຫຼາຍ ທຳອັນບຸກຄົນເພິ່ງກຳຈັດ ໑໐ ປະການນີ້ແລ

**ນິດທະມະນີຍະສູດທີ ໑໐ ຈົບ**

# ໑໑. ປະຖົມອະເສຂະສູດ
## ວ່າດ້ວຍພຣະອະເສຂະ ສູດທີ ໑

[໑໑໑] ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ທີ່ຮຽກວ່າ "ອະເສຂະ ອະເສຂະ" ນີ້ ພິກຂຸເປັນພຣະອະເສຂະດ້ວຍເຫດພຽງທໍ່ໃດນໍ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸໃນທຳວິໄນນີ້

໑. ເປັນຜູ້ປະກອບດ້ວຍສຳມາ ທິດຖິ ທີ່ເປັນອະເສຂະ
໒. ເປັນຜູ້ປະກອບດ້ວຍສຳມາ ສັງກັບປະ ທີ່ເປັນອະເສຂະ
໓. ເປັນຜູ້ປະກອບດ້ວຍສຳມາ ວາຈາ ທີ່ເປັນອະເສຂະ
໔. ເປັນຜູ້ປະກອບດ້ວຍສຳມາ ກຳມັນຕະ ທີ່ເປັນອະເສຂະ
໕. ເປັນຜູ້ປະກອບດ້ວຍສຳມາ ອາຊີວະ ທີ່ເປັນອະເສຂະ
໖. ເປັນຜູ້ປະກອບດ້ວຍສຳມາ ວາຍາມະ ທີ່ເປັນອະເສຂະ
໗. ເປັນຜູ້ປະກອບດ້ວຍສຳມາ ສະຕິ ທີ່ເປັນອະເສຂະ
໘. ເປັນຜູ້ປະກອບດ້ວຍສຳມາ ສະມາທິ ທີ່ເປັນອະເສຂະ
໙. ເປັນຜູ້ປະກອບດ້ວຍສຳມາ ຍານະ[១] ທີ່ເປັນອະເສຂະ
໑໐. ເປັນຜູ້ປະກອບດ້ວຍສຳມາ ວິມຸດຕິ ທີ່ເປັນອະເສຂະ

ພິກຂຸ ພິກຂຸເປັນພຣະອະເສຂະ ແນວນີ້ແລ"

**ປະຖົມອະເສຂະສູດທີ່ ໑໑ ຈົບ**

## ໑໒. ທຸຕິຍະອະເສຂະສູດ

## ວ່າດ້ວຍພຣະອະເສຂະ ສູດທີ່ ໒

[໑໑໒] ພິກຂຸທັງຫຼາຍ ທຳທີ່ເປັນອະເສຂະ[១] ໑໐ ປະການນີ້

ທຳທີ່ເປັນອະເສຂະ ໑໐ ປະການ ອັນໃດແດ່ ຄື

໑. ສຳມາທິດຖິທີ່ເປັນອະເສຂະ
໒. ສຳມາສັງກັບປະທີ່ເປັນອະເສຂະ
໓. ສຳມາວາຈາທີ່ເປັນອະເສຂະ
໔. ສຳມາກຳມັນຕະທີ່ເປັນອະເສຂະ
໕. ສຳມາອາຊີວະທີ່ເປັນອະເສຂະ
໖. ສຳມາວາຍາມະທີ່ເປັນອະເສຂະ
໗. ສຳມາສະຕິທີ່ເປັນອະເສຂະ
໘. ສຳມາສະມາທິທີ່ເປັນອະເສຂະ
໙. ສຳມາຍານະທີ່ເປັນອະເສຂະ
໑໐. ສຳມາວິມຸດຕິທີ່ເປັນອະເສຂະ

ພິກຂຸທັງຫຼາຍ ທຳທີ່ເປັນຂອງພຣະອະເສຂະ ໑໐ ປະການນີ້ແລ

**ທຸຕິຍະອະເສຂະສູດທີ່ ໑໒ ຈົບ**

**ສະມະນະສັນຍາວັກທີ່ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ໒. ປັດໂຈໂຣຫະນິວັກ

## ໝວດວ່າດ້ວຍພິທີລອຍບາບ

## ໑. ປະຖົມອະທຳມະສູດ

### ວ່າດ້ວຍສິ່ງທີ່ບໍ່ເປັນທຳ ສູດທີ ໑

[໑໑໓] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳ ແລະບໍ່ເປັນປະໂຫຍດ ຄວນຮູ້ທັງສິ່ງທີ່ເປັນທຳ ແລະເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ

ສິ່ງທີ່ບໍ່ເປັນທຳແລະບໍ່ເປັນປະໂຫຍດ ອັນໃດແດ່ ຄື

໑. ມິດສາທິດຖິ (ເຫັນຜິດ)
໒. ມິດສາສັງກັບປະ (ດຳຣິຜິດ)
໓. ມິດສາວາຈາ (ເຈຣະຈາຜິດ)
໔. ມິດສາກຳມັນຕະ (ກະທຳຜິດ)
໕. ມິດສາອາຊີວະ (ລ້ຽງຊີບຜິດ)
໖. ມິດສາວາຍາມະ (ພະຍາຍາມຜິດ)
໗. ມິດສາສະຕິ (ຣະນຶກຜິດ)
໘. ມິດສາສະມາທິ (ຕັ້ງຈິດໝັ້ນຜິດ)
໙. ມິດສາຍານະ (ຮູ້ຜິດ)
໑໐. ມິດສາວິມຸດຕິ (ລຸດພົ້ນຜິດ)

ພິກຂຸທັງຫຼາຍ ນີ້ຮຽກວ່າ ສິ່ງທີ່ບໍ່ເປັນທຳແລະບໍ່ເປັນປະໂຫຍດ

ສິ່ງທີ່ເປັນທຳແລະເປັນປະໂຫຍດ ອັນໃດແດ່ ຄື

໑. ສຳມາທິດຖິ (ເຫັນຖືກ)
໒. ສຳມາສັງກັບປະ (ຄິດຖືກ)

| | | | |
|---|---|---|---|
| ໓. ສຳມາວາຈາ | (ເຈຣະຈາຖືກ) | ໔. ສຳມາກຳມັນຕະ | (ການງານຖືກ) |
| ໕. ສຳມາອາຊີວະ | (ລ້ຽງຊີວິດຖືກ) | ໖. ສຳມາວາຍາມະ | (ພະຍາຍາມຖືກ) |
| ໗. ສຳມາສະຕິ | (ຣະນຶກຖືກ) | ໘. ສຳມາສະມາທິ | (ຕັ້ງຈິດໝັ້ນຖືກ) |
| ໙. ສຳມາຍານະ | (ຮູ້ຖືກ) | ໑໐. ສຳມາວິມຸດຕິ | (ລຸດພົ້ນຖືກ) |

ພິກຂຸທັງຫຼາຍ ນີ້ຮຽກວ່າ ສິ່ງທີ່ເປັນທຳແລະເປັນປະໂຫຍດ

ພິກຂຸທັງຫຼາຍ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳແລະບໍ່ເປັນປະໂຫຍດ ຄວນຮູ້ທັງສິ່ງທີ່ເປັນທຳແລະເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

**ປະຖົມອະເສຂະສູດທີ ໑ ຈົບ**

## ໘. ທຸຕິຍະອະທຳມະສູດ

## ວ່າດ້ວຍສິ່ງທີ່ບໍ່ເປັນທຳ ສູດທີ ໘

[໑໑໔] ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳ ແລະສິ່ງທີ່ເປັນທຳ ຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດ ແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ

ສິ່ງທີ່ບໍ່ເປັນທຳ ແລະສິ່ງທີ່ເປັນທຳ ສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ອັນໃດແດ່ ຄື

໑. ມິດສາທິດຖິເປັນສິ່ງທີ່ບໍ່ເປັນທຳ ສຳມາທິດຖິເປັນສິ່ງທີ່ເປັນທຳ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາທິດຖິເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາທິດຖິເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໒. ມິດສາສັງກັບປະເປັນສິ່ງທີ່ບໍ່ເປັນທຳ ສຳມາສັງກັບປະເປັນສິ່ງທີ່ເປັນທຳ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາສັງກັບປະເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາສັງກັບປະເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໓. ມິດສາວາຈາເປັນສິ່ງທີ່ບໍ່ເປັນທຳ ສຳມາວາຈາເປັນສິ່ງທີ່ເປັນທຳ ບາບອະກຸສົ

ນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາວາຈາເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາວາຈາເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໔. ມິດສາກຳມັນຕະເປັນສິ່ງທີ່ບໍ່ເປັນທຳ ສຳມາກຳມັນຕະເປັນສິ່ງທີ່ເປັນທຳ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາກຳມັນຕະເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາກຳມັນຕະເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໕. ມິດສາອາຊີວະເປັນສິ່ງທີ່ບໍ່ເປັນທຳ ສຳມາອາຊີວະເປັນສິ່ງທີ່ເປັນທຳ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາອາຊີວະເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາອາຊີວະເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໖. ມິດສາວາຍາມະເປັນສິ່ງທີ່ບໍ່ເປັນທຳ ສຳມາວາຍາມະເປັນສິ່ງທີ່ເປັນທຳ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາວາຍາມະເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາວາຍາມະເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໗. ມິດສາສະຕິເປັນສິ່ງທີ່ບໍ່ເປັນທຳ ສຳມາສະຕິເປັນສິ່ງທີ່ເປັນທຳ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາສະຕິເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາສະຕິເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໘. ມິດສາສະມາທິເປັນສິ່ງທີ່ບໍ່ເປັນທຳ ສຳມາສະມາທິເປັນສິ່ງທີ່ເປັນທຳ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາສະມາທິເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາສະມາທິເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໙. ມິດສາຍານະເປັນສິ່ງທີ່ບໍ່ເປັນທຳ ສຳມາຍານະເປັນສິ່ງທີ່ເປັນທຳ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາຍານະເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາຍານະເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໑໐. ມິດສາວິມຸດຕິເປັນສິ່ງທີ່ບໍ່ເປັນທຳ ສຳມາວິມຸດຕິເປັນສິ່ງທີ່ເປັນທຳ ບາບ ອະກຸສົນທຳຫຼວງຫຼາຍທີ່ເກີດຂື້ນຍ້ອນມິດສາວິມຸດຕິເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາວິມຸດຕິເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

ພິກຂຸທັງຫຼາຍ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳແລະສິ່ງທີ່ເປັນທຳ ຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

**ທຸຕິຍະອະທຳມະສູດທີ ໘ ຈົບ**

## ៩. ຕະຕິຍະອະທຳມະສູດ

## ວ່າດ້ວຍສິ່ງທີ່ບໍ່ເປັນທຳ ສູດທີ ៩

[໑໑໕] ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳແລະສິ່ງທີ່ເປັນທຳ ຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດເມື່ອຕັດພຣະພຸດທະພົດນີ້ແລ້ວຈຶ່ງສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ລຳດັບນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຫຼີກໄປບໍ່ດົນ ພິກຂຸເຫຼົ່ານັ້ນຈຶ່ງໄດ້ເປີກສາ ກັນວ່າ "ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍຊົງສະແດງອຸດເທດ°ນີ້ໂດຍຫຍໍ້ວ່າ "ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳແລະສິ່ງທີ່ເປັນທຳ ຄວນຮູ້ ທັງສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ" ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ ໃຜນໍຈະເພິ່ງຈຳແນກ ເນື້ອຄວາມແຫ່ງອຸດເທດ ທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານ ນີ້ ໃຫ້ພິດສະດານໄດ້"

ລຳດັບນັ້ນ ພິກຂຸເຫຼົ່ານັ້ນ ມີຄວາມເຫັນຮ່ວມກັນວ່າ "ທ່ານອານົນນີ້ແລ ພຣະສາດສະດາຊົງສັນເສີນແລ້ວ ແລະເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍຍ້ອງຍໍ ທ່ານສາມາດຈະຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງໄວ້ໂດຍຫຍໍ້ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ ທາງທີ່ດີ ພວກເຮົາຄວນຈະເຂົ້າໄປຫາທ່ານອານົນຮອດບ່ອນຢູ່ແລ້ວຮຽນຖາມເນື້ອຄວາມນີ້ກັບທ່ານ ແລະຈັກຊົງຈຳເນື້ອຄວາມນັ້ນໄວ້ຕາມທີ່ທ່ານຕອບແກ່ພວກເຮົາ"

ບັດແລ້ວ ພິກຂຸເຫຼົ່ານັ້ນຈຶ່ງເຂົ້າໄປຫາທ່ານພຣະອານົນຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນໄດ້ຮຽນ ວ່າ

"ທ່ານອານົນ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍຊົງສະແດງອຸດເທດນີ້ໂດຍຫຍໍ້ວ່າ "ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳ ແລະສິ່ງທີ່ເປັນທຳ ຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳ ແລະເປັນປະໂຫຍດ" ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ຜູ້ມີອາຍຸ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຫຼີກໄປບໍ່ດົນ ພວກຂ້ານ້ອຍໄດ້ເປີກສາກັນວ່າ ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍຊົງສະແດງອຸດເທດນີ້ໂດຍຫຍໍ້ວ່າ "ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳແລະສິ່ງທີ່ເປັນທຳຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ" ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ ໃຜນໍຈະເພິ່ງຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງໄວ້ໂດຍຫຍໍ້ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້

ຜູ້ມີອາຍຸ ພວກຂ້ານ້ອຍໄດ້ມີຄວາມເຫັນຮ່ວມກັນວ່າ "ທ່ານອານົນນີ້ແລ ພຣະສາດສະດາຊົງສັນເສີນແລ້ວ ແລະເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍຍ້ອງຍໍ ທ່ານສາມາດຈະຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ ທາງທີ່ດີ ພວກເຮົາຄວນຈະເຂົ້າໄປຫາທ່ານອານົນຮອດບ່ອນຢູ່ແລ້ວ ຮຽນຖາມເນື້ອຄວາມນີ້ກັບທ່ານ ແລະຈັກຊົງຈຳເນື້ອຄວາມນັ້ນໄວ້ຕາມທີ່ທ່ານຕອບແກ່ພວກເຮົາ" ຂໍທ່ານອານົນຈົ່ງຈຳແນກເທີ້ນ"

ທ່ານພຣະອານົນກ່າວວ່າ "ຜູ້ມີອາຍຸທັງຫຼາຍ ເມື່ອພຣະສາດສະດາປະທັບຢູ່ສະເພາະໜ້າຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍລະເລີຍພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນສາ ສຳຄັນເນື້ອຄວາມນີ້ວ່າຄວນຖາມຂ້າພະເຈົ້າ ປຽບຄືບຸຣຸດຜູ້ຕ້ອງການແກ່ນໄມ້ ສະແຫວງຫາແກ່ນໄມ້ ທ່ຽວສະແຫວງຫາແກ່ນໄມ້ຢູ່ ເມື່ອຕົ້ນໄມ້ໃຫຍ່ມີແກ່ນມີຢູ່ ກໍແນມຂ້າມຮາກແລະລຳຕົ້ນໄປສາ ສຳຄັນງ່າແລະໃບວ່າເປັນແກ່ນໄມ້ທີ່ຕົນເພິ່ງສະແຫວງຫາ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນຜູ້ມີພຣະຈັກຂຸ[໑] ມີພຣະຍານ ມີພຣະທຳ[໒] ເປັນຜູ້ປະເສີດ[໓] ຕັດບອກໄດ້[໔] ຊົງໃຫ້ເປັນໄປໄດ້[໔] ຊົງສະແດງປະໂຫຍດ[໑] ປະທານອະມະຕະທຳ[໒] ເປັນເຈົ້າຂອງທຳ[໓] ເປັນພຣະຕະຖາຄົດ ຊົງຮູ້ທຳທີ່ຄວນຮູ້ ຊົງເຫັນທຳທີ່ຄວນເຫັນ ກໍເວລານີ້ແລ ເປັນເວລາສົມຄວນທີ່ທ່ານ ທັງຫຼາຍເພິ່ງເຂົ້າໄປ

ເຝົ້າພຣະຜູ້ມີພຣະພາກເຈົ້າແລ້ວທູນຖາມເນື້ອຄວາມນີ້ ເພິ່ງຊົງຈຳເນື້ອຄວາມນັ້ນໄວ້ຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງຕອບແກ່ທ່ານທັງຫຼາຍ"

ພິກຂຸເຫຼົ່ານັ້ນຮຽນວ່າ "ທ່ານອານົນ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຊົງເປັນຜູ້ມີພຣະຈັກຂຸ ມີພຣະຍານ ມີພຣະທຳ ເປັນຜູ້ປະເສີດ ຕັດບອກໄດ້ ຊົງໃຫ້ເປັນໄປໄດ້ ຊົງສະແດງປະໂຫຍດ ປະທານອະມະຕະທຳ ເປັນເຈົ້າຂອງທຳ ເປັນພຣະຕະຖາຄົດ ຊົງຮູ້ທຳທີ່ຄວນຮູ້ ຊົງເຫັນທຳທີ່ຄວນເຫັນ ກໍເວລານີ້ແລ ເປັນເວລາສົມຄວນທີ່ຂ້ານ້ອຍທັງຫຼາຍເພິ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແລ້ວທູນຖາມເນື້ອຄວາມນີ້ ແລະຊົງຈຳເນື້ອຄວາມນັ້ນໄວ້ຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງຕອບແກ່ພວກຂ້ານ້ອຍຢ່າງແນ່ນອນ ທ່ານອານົນເອງ ພຣະສາດສະດາຊົງສັນເສີນ ແລະເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍຍ້ອງຍໍ ຍ່ອມສາມາດຈະຈຳແນກ ເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ ຖ້າທ່ານອານົນບໍ່ມີຄວາມໜັກໃຈແລ້ວ ຂໍຈົ່ງຈຳແນກເທີ້ນ"

ພຣະອານົນກ່າວວ່າ "ຜູ້ມີອາຍຸທັງຫຼາຍ ຖ້າເປັນແນວນັ້ນ ຂໍທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ຂ້າພະເຈົ້າຈັກກ່າວ" ພິກຂຸເຫຼົ່ານັ້ນ ຮັບຄຳແລ້ວ ທ່ານພຣະອານົນຈຶ່ງໄດ້ກ່າວ ເລື້ອງນີ້ວ່າ "ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍ ຊົງສະແດງອຸດເທດໂດຍຫຍໍ້ວ່າ "ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳແລະສິ່ງທີ່ເປັນທຳ ຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ" ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ສິ່ງທີ່ບໍ່ເປັນທຳ ແລະສິ່ງທີ່ເປັນທຳ ສິ່ງທີ່ບໍ່ເປັນປະໂຫຍດ ແລະສິ່ງທີ່ເປັນປະໂຫຍດ ອັນໃດແດ່ ຄື

໑. ມິດສາທິດຖິເປັນສິ່ງທີ່ບໍ່ເປັນທຳ ສຳມາທິດຖິເປັນສິ່ງທີ່ເປັນທຳ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາທິດຖິເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາທິດຖິເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໒. ມິດສາສັງກັບປະເປັນສິ່ງທີ່ບໍ່ເປັນທຳ ສຳມາສັງກັບປະເປັນສິ່ງທີ່ເປັນທຳ ໆລໆ

໓. ມິດສາວາຈາເປັນສິ່ງທີ່ບໍ່ເປັນທຳ ສຳມາວາຈາເປັນສິ່ງທີ່ເປັນທຳ ໆລໆ

໔. ມິດສາກຳມັນຕະເປັນສິ່ງທີ່ບໍ່ເປັນທຳ ສຳມາກຳມັນຕະເປັນສິ່ງທີ່ເປັນທຳ ໆລໆ

໕. ມິດສາອາຊີວະເປັນສິ່ງທີ່ບໍ່ເປັນທຳ ສຳມາອາຊີວະເປັນສິ່ງທີ່ເປັນທຳ ຯລຯ
໖. ມິດສາວາຍາມະເປັນສິ່ງທີ່ບໍ່ເປັນທຳ ສຳມາວາຍາມະເປັນສິ່ງທີ່ເປັນທຳ ຯລຯ
໗. ມິດສາສະຕິເປັນສິ່ງທີ່ບໍ່ເປັນທຳ ສຳມາສະຕິເປັນສິ່ງທີ່ເປັນທຳ ຯລຯ
໘. ມິດສາສະມາທິເປັນສິ່ງທີ່ບໍ່ເປັນທຳ ສຳມາສະມາທິເປັນສິ່ງທີ່ເປັນທຳ ຯລຯ
໙. ມິດສາຍານະເປັນສິ່ງທີ່ບໍ່ເປັນທຳ ສຳມາຍານະເປັນສິ່ງທີ່ເປັນທຳ ຯລຯ[១]

໑໐. ມິດສາວິມຸດຕິເປັນສິ່ງທີ່ບໍ່ເປັນທຳ ສຳມາວິມຸດຕິເປັນສິ່ງທີ່ເປັນທຳ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາວິມຸດຕິເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາວິມຸດຕິເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍ ຊົງສະແດງອຸດເທດໂດຍຫຍໍ້ວ່າ "ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳ ແລະສິ່ງທີ່ເປັນທຳຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດ ແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ" ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກອາສະນະເຂົ້າໄປສູ່ພຣະວິຫານ ຜູ້ມີອາຍຸທັງຫຼາຍ ຂ້າພະເຈົ້າຍ່ອມຮູ້ເນື້ອຄວາມແຫ່ງອຸດເທດ ທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງໄວ້ໂດຍຫຍໍ້ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໄດ້ໂດຍພິດສະດານແບບນີ້ ກໍທ່ານທັງຫຼາຍ ເມື່ອຫວັງຢູ່ ເພິ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແລ້ວທູນຖາມເນື້ອຄວາມນີ້ເທີ້ນ ຂໍທ່ານທັງຫຼາຍເພິ່ງຊົງຈຳເນື້ອຄວາມນັ້ນໄວ້ຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງຕອບແກ່ທ່ານທັງຫຼາຍເທີ້ນ"

ພິກຂຸເຫຼົ່ານັ້ນກ່າວຮັບຄຳທ່ານພຣະອານົນແລ້ວ ຊົມຊື່ນອະນຸໂມທະນາພາສິດຂອງທ່ານພຣະອານົນແລ້ວ ລຸກຂຶ້ນຈາກອາສະນະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ

"ຂ້າແດ່ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດໄວ້ໂດຍຫຍໍ້ວ່າ "ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳແລະສິ່ງທີ່ເປັນທຳ ຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ" ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ຂ້າແດ່ ພຣະອົງຜູ້ຈະເລີນ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຫຼີກໄປບໍ່ດົນ ຂ້າພຣະອົງທັງຫຼາຍໄດ້ເປີກສາກັນວ່າ ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດໄວ້ໂດຍຫຍໍ້ ວ່າ "ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳແລະສິ່ງທີ່ເປັນທຳ ຄວນຮູ້ ທັງສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນ

ປະໂຫຍດ" ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ ໃຜນໍຈະເພິ່ງຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້

ຂ້າແດ່ພຣະອົງຜູ້ຈະເລີນ ຂ້າພຣະອົງເຫຼົ່ານັ້ນໄດ້ມີຄວາມເຫັນຮ່ວມກັນວ່າ "ທ່ານ ອານົນນີ້ແລ ພຣະສາດສະດາຊົງສັນເສີນແລ້ວ ແລະເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍຍ້ອງຍໍ ທ່ານສາມາດຈະຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງໄວ້ໂດຍຫຍໍ້ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ ທາງທີ່ດີ ພວກເຮົາຄວນຈະເຂົ້າໄປຫາທ່ານອານົນຮອດບ່ອນຢູ່ແລ້ວຮຽນຖາມເນື້ອຄວາມນີ້ກັບທ່ານ ແລະຈັກຊົງຈຳເນື້ອຄວາມນັ້ນໄວ້ຕາມທີ່ທ່ານຕອບແກ່ພວກເຮົາ" ບັດແລ້ວ ຂ້າພຣະອົງທັງຫຼາຍຈຶ່ງເຂົ້າໄປຫາທ່ານອານົນເຖິງ ທີ່ຢູ່ແລ້ວຮຽນຖາມເນື້ອຄວາມນີ້ ທ່ານອານົນໄດ້ຈຳແນກເນື້ອຄວາມແນວຊັດເຈນແກ່ຂ້າພຣະອົງທັງຫຼາຍດ້ວຍອາການເຫຼົ່ານີ້ ດ້ວຍບົດເຫຼົ່ານີ້ ດ້ວຍພະຍັນຊະນະເຫຼົ່ານີ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ດີແລ້ວ ດີແລ້ວ ອານົນເປັນບັນດິດ ມີປັນຍາຫຼາຍ ແມ່ນຫາກທ່ານທັງຫຼາຍເພິ່ງເຂົ້າມາຫາເຮົາແລ້ວຖາມເນື້ອຄວາມນີ້ ເຖິງເຮົາເອງກໍເພິ່ງຕອບເນື້ອຄວາມນີ້ຄືທີ່ອານົນໄດ້ຕອບແລ້ວນັ້ນເອງ ນີ້ແລ ເປັນເນື້ອຄວາມແຫ່ງອຸດເທດນັ້ນ ແລະທ່ານທັງຫຼາຍເພິ່ງຊົງຈຳເນື້ອຄວາມນັ້ນໄວ້ແນວນັ້ນເທີ້ນ"

**ຕະຕິຍະອະທຳມະສູດທີ ໓ ຈົບ**

## ໔. ອະຊິຕະສູດ

## ວ່າດ້ວຍປະຣິພາຊົກຊື່ວ່າອະຊິຕະ

[໑໑໖] ຄັ້ງນັ້ນ ອະຊິຕະປະຣິພາຊົກເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ທ່ານພຣະໂຄດົມ ເພື່ອນພົມມະຈາຣີຂອງຂ້າພະເຈົ້າທັງຫຼາຍ ຊື່ວ່າເປັນບັນດິດ ຍ້ອນມີຈິດຕຸປະບາດ ໕໐໐ ດວງ ເຊິ່ງເປັນສິ່ງທີ່ເຮັດໃຫ້ອັນຍະເດຍຣະຖີທັງຫຼາຍຜູ້ຖືກຂົ່ມຂີ່ແລ້ວ ຮູ້ໂຕວ່າຖືກຂົ່ມຂີ່"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດຖາມວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍຍັງຊົງຈຳເຫດແຫ່ງຄວາມເປັນບັນດິດໄດ້ບໍ?"

ພິກຂຸທັງຫຼາຍຂາບທູນວ່າ "ຂ້າແດ່ພຣະຜູ້ມີພຣະພາກເຈົ້າ ເວລານີ້ເປັນເວລາສົມຄວນ ຂ້າແດ່ພຣະສຸຄົດເຈົ້າ ເວລານີ້ເປັນເວລາສົມຄວນທີ່ພຣະຜູ້ມີພຣະພາກເຈົ້າຈະຊົງສະແດງ ພິກຂຸທັງຫຼາຍໄດ້ຟັງພຣະດຳຣັດຂອງພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ບຸກຄົນລາງຄົນໃນໂລກນີ້ຍ່ອມຂົ່ມຂີ່ບີບຄັ້ນວາທະ[๑] ທີ່ບໍ່ເປັນທຳດ້ວຍວາທະທີ່ບໍ່ເປັນທຳ ແລະຍ່ອມຊັກນຳບໍລິສັດຜູ້ບໍ່ປະກອບດ້ວຍທຳໃຫ້ຍິນດີດ້ວຍວາທະທີ່ບໍ່ເປັນທຳນັ້ນ ຍ້ອນວາທະທີ່ບໍ່ເປັນທຳນັ້ນ ບໍລິສັດຜູ້ບໍ່ປະກອບດ້ວຍທຳນັ້ນ ຈຶ່ງສັນເສີນຂຶ້ນພ້ອມກັນວ່າ "ທ່ານຜູ້ຈະເລີນ ທ່ານຜູ້ນີ້ເປັນບັນດິດນໍ ທ່ານຜູ້ນີ້ເປັນບັນດິດນໍ"

ບຸກຄົນລາງຄົນໃນໂລກນີ້ຍ່ອມຂົ່ມຂີ່ບີບຄັ້ນວາທະທີ່ເປັນທຳດ້ວຍວາທະທີ່ບໍ່ເປັນທຳ ແລະຍ່ອມຊັກນຳບໍລິສັດຜູ້ບໍ່ປະກອບດ້ວຍທຳໃຫ້ຍິນດີດ້ວຍວາທະທີ່ບໍ່ເປັນທຳນັ້ນ ຍ້ອນວາທະທີ່ບໍ່ເປັນທຳນັ້ນບໍລິສັດ ຜູ້ບໍ່ປະກອບດ້ວຍທຳນັ້ນຈຶ່ງສັນເສີນຂຶ້ນພ້ອມກັນວ່າ "ທ່ານຜູ້ຈະເລີນ ທ່ານຜູ້ນີ້ເປັນບັນດິດນໍ ທ່ານຜູ້ນີ້ເປັນບັນດິດນໍ"

ບຸກຄົນລາງຄົນໃນໂລກນີ້ຍ່ອມຂົ່ມຂີ່ບີບຄັ້ນວາທະທັງທີ່ເປັນທຳແລະບໍ່ເປັນທຳ ດ້ວຍວາທະທີ່ບໍ່ເປັນທຳ ແລະຍ່ອມຊັກນຳບໍລິສັດຜູ້ບໍ່ປະກອບດ້ວຍທຳໃຫ້ຍິນດີດ້ວຍວາທະທີ່ບໍ່ເປັນທຳນັ້ນ ຍ້ອນວາທະທີ່ບໍ່ເປັນທຳນັ້ນ ບໍລິສັດຜູ້ບໍ່ປະກອບດ້ວຍທຳນັ້ນຈຶ່ງສັນເສີນຂຶ້ນພ້ອມກັນວ່າ "ທ່ານຜູ້ຈະເລີນ ທ່ານຜູ້ນີ້ເປັນບັນດິດນໍ ທ່ານຜູ້ນີ້ເປັນບັນດິດນໍ"

ບຸກຄົນລາງຄົນໃນໂລກນີ້ຍ່ອມຂົ່ມຂີ່ບີບຄັ້ນວາທະທີ່ບໍ່ເປັນທຳ ດ້ວຍວາທະທີ່ເປັນທຳ ແລະຍ່ອມຊັກນຳບໍລິສັດຜູ້ບໍ່ປະກອບດ້ວຍທຳໃຫ້ຍິນດີດ້ວຍວາທະທີ່ເປັນທຳນັ້ນ ຍ້ອນວາທະທີ່ເປັນທຳນັ້ນ ບໍລິສັດຜູ້ບໍ່ປະກອບດ້ວຍທຳນັ້ນຈຶ່ງສັນເສີນຂຶ້ນພ້ອມກັນວ່າ "ທ່ານຜູ້ຈະເລີນ ທ່ານຜູ້ນີ້ເປັນບັນດິດນໍ ທ່ານຜູ້ນີ້ເປັນບັນດິດນໍ"

ບຸກຄົນລາງຄົນໃນໂລກນີ້ຍ່ອມຂົ່ມຂີ່ບີບຄັ້ນວາທະທີ່ເປັນທຳດ້ວຍວາທະທີ່ເປັນທຳ ແລະຍ່ອມຊັກນຳບໍລິສັດຜູ້ປະກອບດ້ວຍທຳໃຫ້ຍິນດີດ້ວຍວາທະທີ່ເປັນທຳນັ້ນ ຍ້ອນ ວາທະທີ່ເປັນທຳນັ້ນ ບໍລິສັດຜູ້ປະກອບດ້ວຍທຳນັ້ນຈຶ່ງສັນເສີນຂຶ້ນພ້ອມກັນວ່າ "ທ່ານຜູ້ຈະເລີນ ທ່ານຜູ້ນີ້ເປັນບັນດິດນໍ ທ່ານຜູ້ນີ້ເປັນບັນດິດນໍ"

ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳແລະສິ່ງທີ່ເປັນທຳ ຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ

ສິ່ງທີ່ບໍ່ເປັນທຳແລະສິ່ງທີ່ເປັນທຳ ສິ່ງທີ່ບໍ່ເປັນປະໂຫຍດ ແລະສິ່ງທີ່ເປັນປະໂຫຍດ ອັນໃດແດ່ ຄື

໑. ມິດສາທິດຖິເປັນສິ່ງທີ່ບໍ່ເປັນທຳ ສຳມາທິດຖິເປັນສິ່ງທີ່ເປັນທຳ ບາບ ອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາທິດຖິເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາທິດຖິເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໒. ມິດສາສັງກັບປະເປັນສິ່ງທີ່ບໍ່ເປັນທຳ ສຳມາສັງກັບປະເປັນສິ່ງທີ່ເປັນທຳ ຯລຯ

໓. ມິດສາວາຈາເປັນສິ່ງທີ່ບໍ່ເປັນທຳ ສຳມາວາຈາເປັນສິ່ງທີ່ເປັນທຳ ຯລຯ

໔. ມິດສາກຳມັນຕະເປັນສິ່ງທີ່ບໍ່ເປັນທຳ ສຳມາກຳມັນຕະເປັນສິ່ງທີ່ເປັນທຳ ຯລຯ

໕. ມິດສາອາຊີວະເປັນສິ່ງທີ່ບໍ່ເປັນທຳ ສຳມາອາຊີວະເປັນສິ່ງທີ່ເປັນທຳ ຯລຯ

໖. ມິດສາວາຍາມະເປັນສິ່ງທີ່ບໍ່ເປັນທຳ ສຳມາອາຊີວະເປັນສິ່ງທີ່ເປັນທຳ ຯລຯ

໗. ມິດສາສະຕິເປັນສິ່ງທີ່ບໍ່ເປັນທຳ ສຳມາສະຕິເປັນສິ່ງທີ່ເປັນທຳ ຯລຯ

໘. ມິດສາສະມາທິເປັນສິ່ງທີ່ບໍ່ເປັນທຳ ສຳມາສະມາທິເປັນສິ່ງທີ່ເປັນທຳ ຯລຯ

໙. ມິດສາຍານະເປັນສິ່ງທີ່ບໍ່ເປັນທຳ ສຳມາຍານະເປັນສິ່ງທີ່ເປັນທຳ ຯລຯ

໑໐. ມິດສາວິມຸດຕິເປັນສິ່ງທີ່ບໍ່ເປັນທຳ ສຳມາວິມຸດຕິເປັນສິ່ງທີ່ເປັນທຳ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາວິມຸດຕິເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາວິມຸດຕິເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

ພິກຂຸທັງຫຼາຍ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳແລະສິ່ງທີ່ເປັນທຳ ຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

**ອະຊິຕະສູດທີ ໔ ຈົບ**

# ໕. ສະຄາຣະວະສູດ

## ວ່າດ້ວຍພາມຊື່ວ່າສະຄາຣະວະ

[໑໑໗] ຄັ້ງນັ້ນແລ ພາມຊື່ວ່າ ສະຄາຣະວະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນ ແລ້ວນັ່ງຢູ່ໃນບ່ອນທີ່ສົມຄວນໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ທ່ານພຣະໂຄດົມ ອັນໃດນໍ ເປັນຝັ່ງນີ້[໑] ອັນໃດ ເປັນຝັ່ງນັ້ນ[໒]"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພາມ

| | | | |
|---|---|---|---|
| ໑. ມິດສາທິດຖິ | ເປັນຝັ່ງນີ້ | ສໍາມາທິດຖິ | ເປັນຝັ່ງນັ້ນ |
| ໒. ມິດສາສັງກັບປະ | ເປັນຝັ່ງນີ້ | ສໍາມາສັງກັບປະ | ເປັນຝັ່ງນັ້ນ |
| ໓. ມິດສາວາຈາ | ເປັນຝັ່ງນີ້ | ສໍາມາວາຈາ | ເປັນຝັ່ງນັ້ນ |
| ໔. ມິດສາກໍາມັນຕະ | ເປັນຝັ່ງນີ້ | ສໍາມາກໍາມັນຕະ | ເປັນຝັ່ງນັ້ນ |
| ໕. ມິດສາອາຊີວະ | ເປັນຝັ່ງນີ້ | ສໍາມາອາຊີວະ | ເປັນຝັ່ງນັ້ນ |
| ໖. ມິດສາວາຍາມະ | ເປັນຝັ່ງນີ້ | ສໍາມາວາຍາມະ | ເປັນຝັ່ງນັ້ນ |
| ໗. ມິດສາສະຕິ | ເປັນຝັ່ງນີ້ | ສໍາມາສະຕິ | ເປັນຝັ່ງນັ້ນ |
| ໘. ມິດສາສະມາທິ | ເປັນຝັ່ງນີ້ | ສໍາມາສະມາທິ | ເປັນຝັ່ງນັ້ນ |
| ໙. ມິດສາຍານະ | ເປັນຝັ່ງນີ້ | ສໍາມາຍານະ | ເປັນຝັ່ງນັ້ນ |
| ໑໐. ມິດສາວິມຸດຕິ | ເປັນຝັ່ງນີ້ | ສໍາມາວິມຸດຕິ | ເປັນຝັ່ງນັ້ນ |

ພາມ ນີ້ແລ ເປັນຝັ່ງນີ້ ນີ້ແລ ເປັນຝັ່ງນັ້ນ

ໃນໝູ່ມະນຸດ ເຫຼົ່າຊົນຜູ້ໄປເຖິງຝັ່ງນັ້ນ[໓]ມີຈໍານວນໜ້ອຍ
ສ່ວນໝູ່ສັດນອກນີ້ເລາະໄປຕາມຝັ່ງນີ້[໔]ສ່ວນຫຼາຍ
ສ່ວນຊົນເຫຼົ່າໃດປະພຶດຕາມທໍາ
ໃນທໍາທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຖືກຕ້ອງ[໑]
ຊົນເຫຼົ່ານັ້ນຈັກຂ້າມພົ້ນວັດຕະ[໒]
ອັນເປັນບ້ວງມານທີ່ຂ້າມໄດ້ແສນຍາກ ຈັກເຖິງຝັ່ງນັ້ນ
ບັນດິດລະທໍາດໍາ ແລ້ວເພິ່ງຈະເລີນທໍາຂາວ[໓]
ອອກຈາກວັດຕະມາສູ່ວິວັດຕະ[໔]
ລະກາມທັງຫຼາຍແລ້ວເປັນຜູ້ໝົດຄວາມກັງວົນ

ເພິ່ງປາຖະໜາຄວາມຍິນດີຍິ່ງໃນວິເວກ[໕]ທີ່ຍິນດີໄດ້ຍາກຍິ່ງ
 ບັນດິດເພິ່ງຊຳຮະຕົນໃຫ້ຜ່ອງແຜ້ວ
ຈາກເຄື່ອງເສົ້າໝອງແຫ່ງຈິດທັງຫຼາຍ
 ບັນດິດເຫຼົ່າໃດອົບຮົມຈິດໂດຍຖືກຕ້ອງ
ໃນອົງທຳເປັນເຄື່ອງຕັດສະຣູ້ທັງຫຼາຍ
ບໍ່ຖືໝັ້ນ ຍິນດີໃນນິບພານເປັນທີ່ສະລະຄວາມຖືໝັ້ນ
 ບັນດິດເຫຼົ່ານັ້ນສິ້ນອາສະວະແລ້ວ
ມີຄວາມຮຸ່ງເຮືອງ ດັບເຢັນແລ້ວໃນໂລກ[໖]

**ສະຄາຣະວະສູດທີ ໕ ຈົບ**

## ໖. ໂອຣິມະຕິຣະສູດ

## ວ່າດ້ວຍທຳທີ່ເປັນຝັ່ງນີ້ແລະທຳທີ່ເປັນຝັ່ງນັ້ນ[໑]

[໑໑໗] ພິກຂຸທັງຫຼາຍ ເຮົາຈັກສະແດງຝັ່ງນີ້ແລະຝັ່ງນັ້ນແກ່ທ່ານທັງຫຼາຍ ທ່ານ ທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ຝັ່ງນີ້ແລະຝັ່ງນັ້ນ ອັນໃດແດ່ ຄື
 ໑. ມິດສາທິດຖິ ເປັນຝັ່ງນີ້ ສຳມາທິດຖິ ເປັນຝັ່ງນັ້ນ
 ໆລໆ
 ໑໐. ມິດສາວິມຸດຕິ ເປັນຝັ່ງນີ້ ສຳມາວິມຸດຕິ ເປັນຝັ່ງນັ້ນ

ພິກຂຸທັງຫຼາຍ ນີ້ແລ ເປັນຝັ່ງນີ້ ນີ້ແລ ເປັນຝັ່ງນັ້ນ

 ໃນໝູ່ມະນຸດ ເຫຼົ່າຊົນຜູ້ໄປເຖິງຝັ່ງນັ້ນມີຈຳນວນໜ້ອຍ
ສ່ວນໝູ່ສັດນອກນີ້ເລາະໄປຕາມຝັ່ງນີ້ສ່ວນຫຼາຍ
ສ່ວນຊົນເຫຼົ່າໃດປະພຶດຕາມທຳ
ໃນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຖືກຕ້ອງ
 ຊົນເຫຼົ່ານັ້ນ ຈັກຂ້າມພົ້ນວັດຕະ
ອັນເປັນບ້ວງມານທີ່ຂ້າມໄດ້ແສນຍາກ ຈັກເຖິງຝັ່ງນັ້ນ
 ບັນດິດລະທຳດຳແລ້ວເພິ່ງຈະເລີນທຳຂາວ
ອອກຈາກວັດຕະມາສູ່ວິວັດຕະ

ລະການທັງຫຼາຍແລ້ວເປັນຜູ້ໝົດຄວາມກັງວົນ
ເພິ່ງປາຖະໜາຄວາມຍິນດີຍິ່ງໃນວິເວກທີ່ຍິນດີໄດ້ຍາກຍິ່ງ
ບັນດິດເພິ່ງຊຳຣະຕົນໃຫ້ຜ່ອງແຜ້ວ
ຈາກເຄື່ອງເສົ້າໝອງແຫ່ງຈິດທັງຫຼາຍ
ບັນດິດເຫຼົ່າໃດອົບຮົມຈິດໂດຍຖືກຕ້ອງ
ໃນອົງທຳເປັນເຄື່ອງຕັດສະຣູ້ທັງຫຼາຍ
ບໍ່ຖືໝັ້ນ ຍິນດີໃນນິບພານເປັນທີ່ສະລະຄວາມຖືໝັ້ນ
ບັນດິດເຫຼົ່ານັ້ນສິ້ນອາສະວະແລ້ວ
ມີຄວາມຮຸ່ງເຮືອງ ດັບເຢັນແລ້ວໃນໂລກ

**ໂອຣົມະຕິຣະສູດທີ ໖ ຈົບ**

## ໗. ປະຖົມປັດໂຈໂຣຫະນີສູດ

## ວ່າດ້ວຍພິທີລອຍບາບ ສູດທີ ໑

[໑໑໗] ສະໄໝນັ້ນ ພາມຊື່ວ່າ ຊານຸດໂສນີອາບນ້ຳດຳຫົວໃນມື້ອຸໂປສົດ ນຸ່ງຫົ່ມ ຜ້າໄໝຄູ່ໃໝ່ ຍືນຖືກຳຫຍ້າຄາຢູ່ບ່ອນທີ່ສົມຄວນ ບໍ່ໄກພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າທອດພຣະເນດເຫັນແລ້ວ ໄດ້ຕັດຖາມຊານຸດໂສນີພາມດັ່ງນີ້ ວ່າ

"ພາມ ຍ້ອນເຫດໃດນໍ ທ່ານຈຶ່ງອາບນ້ຳດຳຫົວໃນມື້ອຸໂປສົດ ນຸ່ງຫົ່ມຜ້າໄໝຄູ່ໃໝ່ ຍືນຖືກຳຫຍ້າຄາຢູ່ບ່ອນທີ່ສົມຄວນ ມື້ນີ້ເປັນມື້ອັນໃດຂອງຕະກູນພາມ"

ຊານຸດໂສນີພາມຂາບທູນວ່າ "ທ່ານພຣະໂຄດົມ ມື້ນີ້ເປັນມື້ລອຍບາບຂອງຕະກູນພາມ"

"ພາມ ພິທີລອຍບາບຂອງພາມທັງຫຼາຍ ເປັນແນວໃດ?"

"ທ່ານພຣະໂຄດົມ ໃນມື້ອຸໂປສົດ ພາມທັງຫຼາຍໃນໂລກນີ້ ພາກັນອາບນ້ຳດຳຫົວ ນຸ່ງຫົ່ມຜ້າໄໝຄູ່ໃໝ່ ທາແຜ່ນດິນດ້ວຍມູນງົວສົດ ລາດດ້ວຍຫຍ້າຄາທີ່ຂຽວສົດແລ້ວນອນໃນລະຫວ່າງກອງຊາຍແລະເຮືອນໄຟ ໃນຣາຕີນັ້ນ ພາມເຫຼົ່ານັ້ນລຸກຂຶ້ນແລ້ວປະຄອງ ອັນຊະລີນອບນ້ອມໄຟ ໓ ຄັ້ງດ້ວຍກ່າວວ່າ "ຂ້າພະເຈົ້າທັງຫຼາຍຂໍລອຍບາບຕໍ່ທ່ານຜູ້ຈະເລີນ ຂ້າພະເຈົ້າທັງຫຼາຍຂໍລອຍບາບຕໍ່ທ່ານຜູ້ຈະເລີນ"ແລະປົນເປີໄຟໃຫ້ອີ່ມໜຳດ້ວຍ ເນີຍໃສ ນ້ຳມັນ ແລະເນີຍຂຸ້ນຈຳນວນຫຼາຍ ພໍລ່ວງຣາຕີນັ້ນ ໄປຈຶ່ງລ້ຽງພາມທັງຫຼາຍໃຫ້ອີ່ມໜຳດ້ວຍຂອງຫຍ້ຳຂອງບໍຣິໂພກອັນປະນີດ ທ່ານພຣະໂຄດົມ ພິທີລອຍບາບຂອງພາມທັງຫຼາຍ ເປັນແນວນີ້ແລ"

"ພາມ ພິທີລອຍບາບຂອງພາມທັງຫຼາຍເປັນແນວໜຶ່ງ ພິທີລອຍບາບໃນ ອະຣິຍະວິໄນເປັນອີກແນວໜຶ່ງ"

"ທ່ານພຣະໂຄດົມ ພິທີລອຍບາບໃນອະຣິຍະວິໄນເປັນແນວໃດ? ຂໍປະທານວະໂຣກາດ ຂໍທ່ານພຣະໂຄດົມ ໂຜດສະແດງທຳທີ່ເປັນພິທີລອຍບາບໃນອະຣິຍະວິໄນ ແກ່ຂ້າພະເຈົ້າດ້ວຍເທີ້ນ"

"ພາມ ຖ້າເປັນແນວນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ຊານຸດໂສນີພາມທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພາມ ອະຣິຍະສາວົກໃນທຳວິໄນນີ້

໑. ພິຈາລະນາເຫັນດັ່ງນີ້ວ່າ ມິດສາທິດຖິມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະມິດສາທິດຖິ ລອຍມິດສາທິດຖິ

໒. ພິຈາລະນາເຫັນດັ່ງນີ້ວ່າ ມິດສາສັງກັບປະມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະມິດສາສັງກັບປະ ລອຍມິດສາສັງກັບປະ

໓. ພິຈາລະນາເຫັນດັ່ງນີ້ວ່າ ມິດສາວາຈາມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະມິດສາວາຈາ ລອຍມິດສາວາຈາ

໔. ພິຈາລະນາເຫັນດັ່ງນີ້ວ່າ ມິດສາກຳມັນຕະມີຜົນຊົ່ວທັງໃນພົບນີ້ ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະມິດສາກຳມັນຕະ ລອຍມິດສາກຳມັນຕະ

໕. ພິຈາລະນາເຫັນດັ່ງນີ້ວ່າ ມິດສາອາຊີວະມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະມິດສາອາຊີວະ ລອຍມິດສາອາຊີວະ

໖. ພິຈາລະນາເຫັນດັ່ງນີ້ວ່າ ມິດສາວາຍາມະມີຜົນຊົ່ວທັງໃນພົບນີ້ ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະມິດສາວາຍາມະ ລອຍມິດສາວາຍາມະ

໗. ພິຈາລະນາເຫັນດັ່ງນີ້ວ່າ ມິດສາສະຕິມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະມິດສາສະຕິ ລອຍມິດສາສະຕິ

໘. ພິຈາລະນາເຫັນດັ່ງນີ້ວ່າ ມິດສາສະມາທິມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະມິດສາສະມາທິ ລອຍມິດສາສະມາທິ

໙. ພິຈາລະນາເຫັນດັ່ງນີ້ວ່າ ມິດສາຍານະມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະມິດສາຍານະ ລອຍມິດສາຍານະ

໑໐. ພິຈາລະນາເຫັນດັ່ງນີ້ວ່າ ມິດສາວິມຸດຕິມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະມິດສາວິມຸດຕິ ລອຍມິດສາວິມຸດຕິ

ພາມ ພິທີລອຍບາບໃນອະຣິຍະວິໄນ ເປັນແນວນີ້ແລ

ຊານຸດໂສນີພາມຂາບທູນວ່າ "ທ່ານພຣະໂຄດົມ ພິທີລອຍບາບຂອງພາມ ທັງຫຼາຍເປັນແນວໜຶ່ງ ພິທີລອຍບາບໃນອະຣິຍະວິໄນກໍເປັນອີກແນວໜຶ່ງ ພິທີລອຍບາບ ຂອງພາມທັງຫຼາຍຍ່ອມບໍ່ເຖິງສ່ວນທີ່ ໑໖ ແຫ່ງພິທີລອຍບາບໃນອະຣິຍະວິໄນນີ້ ທ່ານພຣະໂຄດົມ ພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ฯລฯ ຂໍທ່ານພຣະໂຄດົມຈົ່ງຊົງຈຳ ຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ປະຖົມປັດໂຈໂຣຫະນີສູດທີ ໗ ຈົບ**

## ໘. ທຸຕິຍະປັດໂຈໂຣຫະນີສູດ

## ວ່າດ້ວຍພິທີລອຍບາບ ສູດທີ ໘

[໑໔໐] ພິກຂຸທັງຫຼາຍ ເຮົາຈັກສະແດງພິທີລອຍບາບອັນເປັນຂອງພຣະອະຣິຍະແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ

ພິທີລອຍບາບອັນເປັນຂອງພຣະອະຣິຍະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ພິຈາລະນາເຫັນດັ່ງນີ້ວ່າ ມິດສາທິດຖິມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະມິດສາທິດຖິ ລອຍມິດສາທິດຖິ

໒. ພິຈາລະນາເຫັນດັ່ງນີ້ວ່າ ມິດສາສັງກັບປະ ມີຜົນຊົ່ວ ฯລฯ
໓. ພິຈາລະນາເຫັນດັ່ງນີ້ວ່າ ມິດສາວາຈາ ມີຜົນຊົ່ວ ฯລฯ
໔. ພິຈາລະນາເຫັນດັ່ງນີ້ວ່າ ມິດສາກຳມັນຕະ ມີຜົນຊົ່ວ ฯລฯ
໕. ພິຈາລະນາເຫັນດັ່ງນີ້ວ່າ ມິດສາອາຊີວະ ມີຜົນຊົ່ວ ฯລฯ
໖. ພິຈາລະນາເຫັນດັ່ງນີ້ວ່າ ມິດສາວາຍາມະ ມີຜົນຊົ່ວ ฯລฯ
໗. ພິຈາລະນາເຫັນດັ່ງນີ້ວ່າ ມິດສາສະຕິ ມີຜົນຊົ່ວ ฯລฯ

໘. ພິຈາລະນາເຫັນດັ່ງນີ້ວ່າ ມິດສາສະມາທິ ມີຜົນຊົ່ວ ຯລຯ
໙. ພິຈາລະນາເຫັນດັ່ງນີ້ວ່າ ມິດສາຍານະ ມີຜົນຊົ່ວ ຯລຯ ໑

໑໐. ພິຈາລະນາເຫັນດັ່ງນີ້ວ່າ ມິດສາວິມຸດຕິມີຜົນຊົ່ວທັງໃນພົບນີ້ ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະມິດສາວິມຸດຕິ ລອຍມິດສາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ພິທີລອຍບາບອັນເປັນຂອງພຣະອະຣິຍະ

**ທຸຕິຍະປັດໂຈໂຣຫະນີສູດທີ ໘ ຈົບ**

## ໙. ປຸບພັງຄະມະສູດ

## ວ່າດ້ວຍສຳມາທິດຖິເປັນເບື້ອງຕົ້ນແຫ່ງກຸສົນທຳ

[໑໘໑] ພິກຂຸທັງຫຼາຍ ເມື່ອດວງອາທິດອຸໄທຢູ່ ຍ່ອມມີແສງອາລຸນຂຶ້ນມາກ່ອນເປັນບຸບພະນິມິດ ສັນໃດ ສຳມາທິດຖິກໍເປັນໂຕນຳ ເປັນບຸບພະນິມິດແຫ່ງກຸສົນທຳທັງຫຼາຍ ສັນນັ້ນ

ຜູ້ມີສຳມາທິດຖິ ຍ່ອມມີສຳມາ ສັງກັບປະ
ຜູ້ມີສຳມາສັງກັບປະ ຍ່ອມມີສຳມາ ວາຈາ
ຜູ້ມີສຳມາວາຈາ ຍ່ອມມີສຳມາ ກຳມັນຕະ
ຜູ້ມີສຳມາກຳມັນຕະ ຍ່ອມມີສຳມາ ອາຊີວະ
ຜູ້ມີສຳມາອາຊີວະ ຍ່ອມມີສຳມາ ວາຍາມະ
ຜູ້ມີສຳມາວາຍາມະ ຍ່ອມມີສຳມາ ສະຕິ
ຜູ້ມີສຳມາສະຕິ ຍ່ອມມີສຳມາ ສະມາທິ
ຜູ້ມີສຳມາສະມາທິ ຍ່ອມມີສຳມາ ຍານະ
ຜູ້ມີສຳມາຍານະ ຍ່ອມມີສຳມາ ວິມຸດຕິ໌

**ປຸບພັງຄະມະສູດທີ ໙ ຈົບ**

## ໑໐. ອາສະວັກຂະຍະສູດ

## ວ່າດ້ວຍທຳທີ່ເປັນໄປເພື່ອສິ້ນອາສະວະ

[໑໘໒] ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມສິ້ນອາສະວະທັງຫຼາຍ

ທຳ ໑໐ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ
໒. ສຳມາສັງກັບປະ
໓. ສຳມາວາຈາ
໔. ສຳມາກຳມັນຕະ
໕. ສຳມາອາຊີວະ
໖. ສຳມາວາຍາມະ
໗. ສຳມາສະຕິ
໘. ສຳມາສະມາທິ
໙. ສຳມາຍານະ
໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ແລ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມສິ້ນອາສະວະທັງຫຼາຍ

**ອາສະວັກຂະຍະສູດທີ ໑໐ ຈົບ**

**ປັດໂຈໂຣຫະນິວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມອະທຳມະສູດ
໒. ທຸຕິຍະອະທຳມະສູດ
໓. ຕະຕິຍະອະທຳມະສູດ
໔. ອະຊິຕະສູດ
໕. ສະຄາຣະວະສູດ
໖. ໂອຣິມະຕິຣະສູດ
໗. ປະຖົມປັດໂຈໂຣຫະນິສູດ
໘. ທຸຕິຍະປັດໂຈໂຣຫະນິສູດ
໙. ປຸບພັງຄະມະສູດ
໑໐. ອາສະວັກຂະຍະສູດ

# ໒. ປະຣິສຸດທະວັກ

## ໝວດວ່າດ້ວຍທຳທີ່ບໍລິສຸດ

## ໑. ປະຖົມສູດ

### ສູດທີ ໑ ວ່າດ້ວຍທຳທີ່ບໍລິສຸດ

[໑໔໒] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ ເປັນທຳທີ່ບໍລິສຸດຜຸດຜ່ອງ ເວັ້ນວິໄນຂອງພຣະສຸຄົດເຈົ້າ[໑]ແລ້ວຍ່ອມບໍ່ມີ

ທຳ ໑໐ ປະການ ອັນໃດແດ່ ຄື

| | | | | | |
|---|---|---|---|---|---|
| ໑. | ສຳມາທິດຖິ | (ເຫັນຖືກ) | ໒. | ສຳມາສັງກັບປະ | (ຄິດຖືກ) |
| ໓. | ສຳມາວາຈາ | (ເຈຣະຈາຖືກ) | ໔. | ສຳມາກຳມັນຕະ | (ການງານຖືກ) |
| ໕. | ສຳມາອາຊີວະ | (ລ້ຽງຊີວິດຖືກ) | ໖. | ສຳມາວາຍາມະ | (ພະຍາຍາມຖືກ) |
| ໗. | ສຳມາສະຕິ | (ຣະນຶກຖືກ) | ໘. | ສຳມາສະມາທິ | (ຕັ້ງຈິດໝັ້ນຖືກ) |
| ໙. | ສຳມາຍານະ | (ຮູ້ຖືກ) | ໑໐. | ສຳມາວິມຸດຕິ | (ລຸດພົ້ນຖືກ) |

ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ແລ ເປັນທຳທີ່ບໍລິສຸດຜຸດຜ່ອງ ເວັ້ນວິໄນຂອງພຣະສຸຄົດເຈົ້າແລ້ວຍ່ອມບໍ່ມີ

**ປະຖົມສູດທີ ໑ ຈົບ**

## ໒. ທຸຕິຍະສູດ

## ສູດທີ ໒ ວ່າດ້ວຍທຳທີ່ໃຫ້ເກີດທຳ

[໑໘໔] ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ ທີ່ຍັງບໍ່ເກີດຂຶ້ນຍ່ອມເກີດຂຶ້ນ ເວັ້ນວິໄນຂອງພຣະສຸຄົດເຈົ້າແລ້ວຍ່ອມບໍ່ເກີດຂຶ້ນ

ທຳ ໑໐ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ແລ ທີ່ຍັງບໍ່ເກີດຂຶ້ນຍ່ອມເກີດຂຶ້ນ ເວັ້ນວິໄນຂອງພຣະສຸຄົດເຈົ້າແລ້ວຍ່ອມບໍ່ເກີດຂຶ້ນ

**ທຸຕິຍະສູດທີ ໒ ຈົບ**

## ໓. ຕະຕິຍະສູດ

## ສູດທີ ໓ ວ່າດ້ວຍທຳມີຜົນຫຼາຍ

[໑໘໕] ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ ເປັນທຳມີຜົນຫຼາຍ ມີອານິສົງຫຼາຍ ເວັ້ນວິໄນຂອງ ພຣະສຸຄົດເຈົ້າແລ້ວຍ່ອມບໍ່ມີ

ທຳ ໑໐ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ແລ ເປັນທຳມີຜົນຫຼາຍ ມີອານິສົງຫຼາຍ ເວັ້ນວິໄນຂອງພຣະສຸຄົດເຈົ້າແລ້ວຍ່ອມບໍ່ມີ

**ຕະຕິຍະສູດທີ ໓ ຈົບ**

## ໔. ຈະຕຸດຖະສູດ

## ສູດທີ ໔ ວ່າດ້ວຍທຳທີ່ກຳຈັດຣາຄະ ໂທສະ ແລະ ໂມຫະ

[໑໔໖] ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ ເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ ເວັ້ນວິໄນຂອງພຣະສຸຄົດເຈົ້າແລ້ວຍ່ອມບໍ່ມີ

ທຳ ໑໐ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ແລ ເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ ເວັ້ນວິໄນຂອງພຣະສຸຄົດເຈົ້າແລ້ວຍ່ອມບໍ່ມີ

**ຈະຕຸດຖະສູດທີ ໔ ຈົບ**

## ໕. ປັນຈະມະສູດ

## ສູດທີ ໕ ວ່າດ້ວຍທຳເພື່ອຄວາມເບື່ອໜ່າຍ

[໑໔໗] ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍຢ່າງທີ່ສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ ເວັ້ນວິໄນຂອງພຣະສຸຄົດເຈົ້າແລ້ວ ຍ່ອມເປັນໄປບໍ່ໄດ້

ທຳ ໑໐ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ແລ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍຢ່າງທີ່ສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ ເວັ້ນວິໄນຂອງພຣະສຸ ຄົດເຈົ້າແລ້ວຍ່ອມເປັນໄປບໍ່ໄດ້

**ປັນຈະມະສູດທີ ໕ ຈົບ**

## ໖. ສັດຖະສູດ

### ສູດທີ ໖ ວ່າດ້ວຍທຳທີ່ໃຫ້ເກີດທຳ

[໑໔໗] ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ທີ່ຍັງບໍ່ເກີດຂຶ້ນຍ່ອມເກີດຂຶ້ນ ເວັ້ນວິໄນຂອງພຣະສຸຄົດເຈົ້າແລ້ວ ຍ່ອມບໍ່ເກີດຂຶ້ນ

ທຳ ໑໐ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ແລ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ທີ່ຍັງບໍ່ເກີດຂຶ້ນຍ່ອມເກີດຂຶ້ນ ເວັ້ນວິໄນຂອງພຣະສຸຄົດເຈົ້າແລ້ວຍ່ອມບໍ່ເກີດຂຶ້ນ

**ສັດຖະສູດທີ ໖ ຈົບ**

## ໗. ສັດຕະມະສູດ

### ສູດທີ ໗ ວ່າດ້ວຍທຳມີຜົນຫຼາຍ

[໑໔໘] ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ເວັ້ນວິໄນຂອງພຣະສຸຄົດເຈົ້າແລ້ວຍ່ອມບໍ່ມີ

ທຳ ໑໐ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ແລ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມມີຜົນຫຼາຍ ມີອານິສົງຫຼາຍ ເວັ້ນວິໄນຂອງພຣະສຸຄົດເຈົ້າແລ້ວຍ່ອມບໍ່ມີ

**ສັດຕະມະສູດທີ ໗ ຈົບ**

# ໙. ອັດຖະມະສູດ

## ສູດທີ ໙ ວ່າດ້ວຍທຳທີ່ກຳຈັດຣາຄະ ໂທສະ ແລະໂມຫະ

[໑໖໐] ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ ເວັ້ນວິໄນຂອງພຣະສຸຄົດເຈົ້າແລ້ວ ຍ່ອມບໍ່ມີ

ທຳ ໑໐ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ ໆລໆ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ແລ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ເປັນທຳມີການກຳຈັດຣາຄະ ໂທສະ ແລະໂມຫະເປັນບ່ອນສຸດ ເວັ້ນວິໄນຂອງພຣະສຸຄົດເຈົ້າແລ້ວ ຍ່ອມບໍ່ມີ

**ອັດຖະມະສູດທີ ໙ ຈົບ**

# ໑. ນະວະມະສູດ

## ສູດທີ ໑ ວ່າດ້ວຍທຳເພື່ອຄວາມເບື່ອໜ່າຍ

[໑໖໑] ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍຢ່າງທີ່ສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ ເວັ້ນວິໄນຂອງພຣະສຸຄົດເຈົ້າແລ້ວ ຍ່ອມເປັນໄປບໍ່ໄດ້

ທຳ ໑໐ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ ໆລໆ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ທຳ ໑໐ ປະການນີ້ແລ ທີ່ບຸກຄົນຈະເລີນເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍຢ່າງທີ່ສຸດ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອສະງົບລະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ ເວັ້ນວິໄນຂອງພຣະສຸຄົດເຈົ້າແລ້ວຍ່ອມເປັນໄປບໍ່ໄດ້

**ນະວະມະສູດທີ ໑ ຈົບ**

## ໑໐. ທະສະມະສູດ

## ສູດທີ ໑໐ ວ່າດ້ວຍມິດສັດຕະທຳ

[໑໓໔] ພິກຂຸທັງຫຼາຍ ມິດສັດຕະທຳ (ທຳທີ່ຜິດ) ໑໐ ປະການນີ້

ມິດສັດຕະທຳ ໑໐ ປະການ ອັນໃດແດ່ ຄື

໑. ມິດສາທິດຖິ
໒. ມິດສາວາຈາ
໓. ມິດສາອາຊີວະ
໗. ມິດສາສະຕິ
໙. ມິດສາຍານະ
໔. ມິດສາສັງກັບປະ
໕. ມິດສາກຳມັນຕະ
໖. ມິດສາວາຍາມະ
໘. ມິດສາສະມາທິ
໑໐. ມິດສາວິມຸດຕິ

ພິກຂຸທັງຫຼາຍ ມິດສັດຕະທຳ ໑໐ ປະການນີ້ແລ

**ທະສະມະສູດທີ ໑໐ ຈົບ**

## ໑໑. ເອກາທະສະມະສູດ

## ສູດທີ ໑໑ ວ່າດ້ວຍສຳມັດຕະທຳ

[໑໓໕] ພິກຂຸທັງຫຼາຍ ສຳມັດຕະທຳ (ທຳທີ່ຖືກ) ໑໐ ປະການນີ້

ສຳມັດຕະທຳ ໑໐ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ
໒. ສຳມາວາຈາ
໓. ສຳມາອາຊີວະ
໗. ສຳມາສະຕິ
໙. ສຳມາຍານະ
໔. ສຳມາສັງກັບປະ
໕. ສຳມາກຳມັນຕະ
໖. ສຳມາວາຍາມະ
໘. ສຳມາສະມາທິ
໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ສຳມັດຕະທຳ ໑໐ ປະການນີ້ແລ

**ເອກາທະສະມະສູດທີ ໑໑ ຈົບ**

**ປະຣິສຸດທະວັກທີ ໒ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມສູດ
໒. ທຸຕິຍະສູດ
໓. ຕະຕິຍະສູດ
໔. ຈະຕຸດຖະສູດ
໕. ປັນຈະມະສູດ
໖. ສັດຖະສູດ
໗. ສັດຕະມະສູດ
໘. ອັດຖະມະສູດ
໙. ນະວະມະສູດ
໑໐. ທະສະມະສູດ
໑໑. ເອກາທະສະມະສູດ

# ໔. ສາທຸວັກ

## ໝວດວ່າດ້ວຍທຳທີ່ດີ ແລະທຳທີ່ບໍ່ດີ

## ໑. ສາທຸສູດ
## ວ່າດ້ວຍທຳທີ່ດີ ແລະທຳທີ່ບໍ່ດີ

[໑໒໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ດີແລະທຳທີ່ບໍ່ດີແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ທຳທີ່ບໍ່ດີ ອັນໃດແດ່ ຄື

໑. ມິດສາທິດຖິ (ເຫັນຜິດ)
໒. ມິດສາສັງກັບປະ (ດຳຣິຜິດ)
໓. ມິດສາວາຈາ (ເຈລະຈາຜິດ)
໔. ມິດສາກຳມັນຕະ (ກະທຳຜິດ)
໕. ມິດສາອາຊີວະ (ລ້ຽງຊີບຜິດ)
໖. ມິດສາວາຍາມະ (ພະຍາຍາມຜິດ)
໗. ມິດສາສະຕິ (ຣະນຶກຜິດ)
໘. ມິດສາສະມາທິ (ຕັ້ງຈິດໝັ້ນຜິດ)
໙. ມິດສາຍານະ (ຮູ້ຜິດ)
໑໐. ມິດສາວິມຸດຕິ (ລຸດພົ້ນຜິດ)

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ດີ

ທຳທີ່ດີ ອັນໃດແດ່ ຄື

໑. ສຳມາທິດຖິ (ເຫັນຖືກ)
໒. ສຳມາສັງກັບປະ (ຄິດຖືກ)
໓. ສຳມາວາຈາ (ເຈຣະຈາຖືກ)
໔. ສຳມາກຳມັນຕະ (ການງານຖືກ)
໕. ສຳມາອາຊີວະ (ລ້ຽງຊີວິດຖືກ)
໖. ສຳມາວາຍາມະ (ພະຍາຍາມຖືກ)

໗. ສຳມາສະຕິ (ຣະນຶກຖືກ) ໙. ສຳມາສະມາທິ (ຕັ້ງຈິດໝັ້ນຖືກ)
໘. ສຳມາຍານະ (ຮູ້ຖືກ) ໑໐. ສຳມາວິມຸດຕິ (ລຸດພົ້ນຖືກ)

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ດີ

**ສາທຸສູດທີ ໑ ຈົບ**

## ໔. ອະຣິຍະທຳມະສູດ
## ວ່າດ້ວຍອະຣິຍະທຳ ແລະອະນະຣິຍະທຳ

[໑໓໔] ພິກຂຸທັງຫຼາຍ ເຮົາຈັກສະແດງອະຣິຍະທຳ ແລະອະນະຣິຍະທຳແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວພຣະຜູ້ມີ ພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ອະນະຣິຍະທຳ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ອະນະຣິຍະທຳ
ອະຣິຍະທຳ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ອະຣິຍະທຳ

**ອະຣິຍະທຳມະສູດທີ ໔ ຈົບ**

## ໕. ອະກຸສົນລະສູດ
## ວ່າດ້ວຍອະກຸສົນທຳ ແລະກຸສົນທຳ

[໑໓໕] ພິກຂຸທັງຫຼາຍ ເຮົາຈັກສະແດງອະກຸສົນທຳແລະກຸສົນທຳແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ອະກຸສົນທຳ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ອະກຸສົນທຳ
ກຸສົນທຳ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ກຸສົນທຳ

**ອະກຸສົນລະສູດທີ ໓ ຈົບ**

## ໔. ອັດຖະສູດ
## ວ່າດ້ວຍທຳທີ່ເປັນປະໂຫຍດ ແລະທີ່ບໍ່ເປັນປະໂຫຍດ

[໑໓໗] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເປັນປະໂຫຍດ ແລະທຳທີ່ບໍ່ເປັນປະໂຫຍດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ
ທຳທີ່ບໍ່ເປັນປະໂຫຍດ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ເປັນປະໂຫຍດ
ທຳທີ່ເປັນປະໂຫຍດ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ເປັນປະໂຫຍດ

**ອັດຖະສູດທີ ໔ ຈົບ**

## ໕. ທຳມະສູດ
## ວ່າດ້ວຍທຳ ແລະ ອະທຳ

[໑໓໘] ພິກຂຸທັງຫຼາຍ ເຮົາຈັກສະແດງທຳແລະອະທຳແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ອະທຳ ອັນໃດແດ່ ຄື

໑. ສຳມາທິດຖິ ໆລໆ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ອະທຳ
ທຳ ອັນໃດແດ່ ຄື

໑. ສຳມາທິດຖິ ໆລໆ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳ

**ທຳມະສູດທີ ໕ ຈົບ**

## ໖. ສາສະວະສູດ

## ວ່າດ້ວຍທຳທີ່ມີອາສະວະ ແລະທີ່ບໍ່ມີອາສະວະ

[໑໖໙] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ມີອາສະວະແລະທຳທີ່ບໍ່ມີອາສະວະແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ທຳທີ່ມີອາສະວະ ອັນໃດແດ່ ຄື

໑. ສຳມາທິດຖິ ໆລໆ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ມີອາສະວະ

ທຳທີ່ບໍ່ມີອາສະວະ ອັນໃດແດ່ ຄື

໑. ສຳມາທິດຖິ ໆລໆ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ມີອາສະວະ

**ສາສະວະສູດທີ ໖ ຈົບ**

## ໗. ສາວັດຊະສູດ

ວ່າດ້ວຍທຳທີ່ມີໂທດ ແລະທີ່ບໍ່ມີໂທດ

[໑໔໐] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ມີໂທດແລະທຳທີ່ບໍ່ມີໂທດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ທຳທີ່ມີໂທດ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ມີໂທດ
ທຳທີ່ບໍ່ມີໂທດ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ມີໂທດ

**ສາວັດຊະສູດທີ ໗ ຈົບ**

## ໘. ຕະປະນີຍະສູດ

## ວ່າດ້ວຍທຳທີ່ເປັນເຫດ ແລະບໍ່ເປັນເຫດໃຫ້ເດືອດຮ້ອນ

[໑໔໑] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເປັນເຫດໃຫ້ເດືອດຮ້ອນ ແລະທຳທີ່ບໍ່ເປັນເຫດໃຫ້ເດືອດຮ້ອນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ທຳທີ່ເປັນເຫດໃຫ້ເດືອດຮ້ອນ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ເປັນເຫດໃຫ້ເດືອດຮ້ອນ

ທຳທີ່ບໍ່ເປັນເຫດໃຫ້ເດືອດຮ້ອນ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ເປັນເຫດໃຫ້ເດືອດຮ້ອນ

**ຕະປະນີຍະສູດທີ ໘ ຈົບ**

## ໙. ອາຈະຍະຄາມີສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ເຖິງຈຸຕິ ປະຕິສົນທິ ແລະນິບພານ

[໑໔໔] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເປັນເຫດໃຫ້ເຖິງຈຸຕິແລະປະຕິສົນທິ ແລະທຳທີ່ເປັນເຫດໃຫ້ເຖິງນິບພານແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ທຳທີ່ເປັນເຫດໃຫ້ເຖິງຈຸຕິແລະປະຕິສົນທິ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ເປັນເຫດໃຫ້ເຖິງຈຸຕິແລະປະຕິສົນທິ
ທຳທີ່ເປັນເຫດໃຫ້ເຖິງນິບພານ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ເປັນເຫດໃຫ້ເຖິງນິບພານ

**ອາຈະຍະຄາມີສູດທີ ໙ ຈົບ**

## ໑໐. ທຸກຂຸທະຣະຍະສູດ

## ວ່າດ້ວຍທຳທີ່ມີທຸກ ແລະທີ່ມີສຸກເປັນກຳໄລ

[໑໔໙] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ມີທຸກເປັນກຳໄລ ແລະທຳທີ່ມີສຸກເປັນກຳໄລແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ທຳທີ່ມີທຸກເປັນກຳໄລ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ມີທຸກເປັນກຳໄລ
ທຳທີ່ມີສຸກເປັນກຳໄລ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ມີສຸກເປັນກຳໄລ

**ທຸກຂຸທະຣະຍະສູດທີ ໑໐ ຈົບ**

## ໑໑. ທຸກຂະວິປາກະສູດ

## ວ່າດ້ວຍທຳທີ່ມີທຸກ ແລະທີ່ມີສຸກເປັນວິບາກ

[໑໔໔] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ມີທຸກເປັນວິບາກ ແລະທຳທີ່ມີສຸກເປັນວິບາກ ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ທຳທີ່ມີທຸກເປັນວິບາກ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ມີທຸກເປັນວິບາກ
ທຳທີ່ມີສຸກເປັນວິບາກ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ມີສຸກເປັນວິບາກ

**ທຸກຂະວິປາກະສູດທີ ໑໑ ຈົບ**

**ສາທຸວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ສາທຸສູດ
໒. ອະຣິຍະທຳມະສູດ
໓. ອະກຸສົນລະສູດ
໔. ອັດຖະສູດ
໕. ທຳມະສູດ
໖. ສາສະວະສູດ
໗. ສາວັດຊະສູດ
໘. ຕະປະນີຍະສູດ
໙. ອາຈະຍະຄາມີສູດ
໑໐. ທຸກຂຸທະຣະຍະສູດ
໑໑. ທຸກຂະວິປາກະສູດ

# ໕. ອະຣິຍະມັກຄະວັກ

## ໝວດວ່າດ້ວຍທຳທີ່ເປັນອະຣິຍະມັກ

## ໑. ອະຣິຍະມັກຄະສູດ

## ວ່າດ້ວຍທຳທີ່ເປັນອະຣິຍະມັກ ແລະທີ່ບໍ່ແມ່ນອະຣິຍະມັກ

[໑໔໕] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເປັນ ອະຣິຍະມັກແລະທຳທີ່ບໍ່ແມ່ນອະຣິຍະມັກແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ທຳທີ່ບໍ່ແມ່ນອະຣິຍະມັກ ອັນໃດແດ່ ຄື

໑. ມິດສາທິດຖິ (ເຫັນຜິດ) ຯລຯ ໑໐. ມິດສາວິມຸດຕິ (ລຸດພົ້ນຜິດ)

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ແມ່ນອະຣິຍະມັກ
ທຳທີ່ເປັນອະຣິຍະມັກ ອັນໃດແດ່ ຄື

໑. ສຳມາທິດຖິ (ເຫັນຖືກ) ຯລຯ ໑໐. ສຳມາວິມຸດຕິ (ລຸດພົ້ນຖືກ)

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ເປັນອະຣິຍະມັກ

**ອະຣິຍະມັກຄະສູດທີ ໑ ຈົບ**

## ໒. ກັນຫະມັກຄະສູດ

## ວ່າດ້ວຍທຳທີ່ເປັນຝ່າຍດຳ ແລະທີ່ເປັນຝ່າຍຂາວ

[໑໔໖] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເປັນຝ່າຍດຳ ແລະທຳທີ່ເປັນຝ່າຍຂາວແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ທຳທີ່ເປັນຝ່າຍດຳ ອັນໃດແດ່ ຄື

໑. ມິດສາທິດຖິ ຯລຯ ໑໐. ມິດສາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ເປັນຝ່າຍດຳ
ທຳທີ່ເປັນຝ່າຍຂາວ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ເປັນຝ່າຍຂາວ

**ກັນທະມັກຄະສູດທີ ໘ ຈົບ**

# ໙. ສັດທຳມະສູດ

## ວ່າດ້ວຍສັດທຳ ແລະອະສັດທຳ

[໑໔໗] ພິກຂຸທັງຫຼາຍ ເຮົາຈັກສະແດງສັດທຳ ແລະອະສັດທຳແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ອະສັດທຳ ອັນໃດແດ່ ຄື

໑. ມິດສາທິດຖິ ຯລຯ ໑໐. ມິດສາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ອະສັດທຳ
ສັດທຳ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ສັດທຳ

**ສັດທຳມະສູດທີ ໙ ຈົບ**

# ໑໐. ສັບປຸຣິສະທຳມະສູດ

## ວ່າດ້ວຍທຳຂອງສັດຕະບຸຣຸດ ແລະທຳຂອງອະສັດຕະບຸຣຸດ

[໑໔໘] ພິກຂຸທັງຫຼາຍ ເຮົາຈັກສະແດງທຳຂອງສັດຕະບຸຣຸດແລະທຳຂອງອະສັດຕະບຸຣຸດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ທຳຂອງອະສັດຕະບຸຣຸດ ອັນໃດແດ່ ຄື

໑. ມິດສາທິດຖິ ຯລຯ ໑໐. ມິດສາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳຂອງອະສັດຕະບຸຣຸດ
ທຳຂອງສັດຕະບຸຣຸດ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳຂອງສັດຕະບຸຣຸດ

**ສັບປຸຣິສະທຳມະສູດທີ ໔ ຈົບ**

## ໕. ອຸບປາເທຕັບພະສູດ
## ວ່າດ້ວຍທຳທີ່ຄວນໃຫ້ເກີດຂຶ້ນ ແລະທີ່ບໍ່ຄວນໃຫ້ເກີດຂຶ້ນ

[໑໔໙] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ຄວນໃຫ້ເກີດຂຶ້ນ ແລະທຳທີ່ບໍ່ຄວນໃຫ້ເກີດຂຶ້ນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ທຳທີ່ບໍ່ຄວນໃຫ້ເກີດຂຶ້ນ ອັນໃດແດ່ ຄື

໑. ມິດສາທິດຖິ ຯລຯ ໑໐. ມິດສາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ຄວນໃຫ້ເກີດຂຶ້ນ
ທຳທີ່ຄວນໃຫ້ເກີດຂຶ້ນ ອັນໃດແດ່ ຄື

໑. ສຳມາທິດຖິ ຯລຯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ຄວນໃຫ້ເກີດຂຶ້ນ

**ອຸບປາເທຕັບພະສູດທີ ໕ ຈົບ**

## ໖. ອາເສວິຕັບພະສູດ
## ວ່າດ້ວຍທຳທີ່ຄວນເສບໆແລະທີ່ບໍ່ຄວນເສບ

[໑໕໐] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ຄວນເສບ ແລະທຳທີ່ບໍ່ຄວນເສບແກ່ທ່ານ

ທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ທຳທີ່ບໍ່ຄວນເສບ ອັນໃດແດ່ ຄື

໑. ມິດສາທິດຖິ ฯลฯ ໑໐. ມິດສາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ຄວນເສບ
ທຳທີ່ຄວນເສບ ອັນໃດແດ່ ຄື

໑. ສຳມາທິດຖິ ฯลฯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ຄວນເສບ

**ອາເສວິຕັບພະສູດທີ ໖ ຈົບ**

## ໗. ພາເວຕັບພະສູດ

## ວ່າດ້ວຍທຳທີ່ຄວນຈະເລີນ ແລະທີ່ບໍ່ຄວນຈະເລີນ

[໑໕໑] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ຄວນຈະເລີນ ແລະທຳທີ່ບໍ່ຄວນຈະເລີນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ທຳທີ່ບໍ່ຄວນຈະເລີນ ອັນໃດແດ່ ຄື

໑. ມິດສາທິດຖິ ฯลฯ ໑໐. ມິດສາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ຄວນຈະເລີນ

ທຳທີ່ຄວນຈະເລີນ ອັນໃດແດ່ ຄື

໑. ສຳມາທິດຖິ ฯลฯ ໑໐. ສຳມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ຄວນຈະເລີນ

**ພາເວຕັບພະສູດທີ ໗ ຈົບ**

## ๗. พะทุลิภาตับพะสูด

### ว่าด้วยทำที่ควนเร็ดใท้ทูาย และที่บ่ควนเร็ดใท้ทูาย

[๑๕๘] พิภภุทั้งทูาย เธิาจักสะแดงทำที่ควนเร็ดใท้ทูาย และทำที่บ่ควนเร็ดใท้ทูายแก่ท่านทั้งทูาย ท่านทั้งทูายจิ่งฟัง จิ่งใส่ใจใท้ดี เธิาจักภ่าว พิภภุเทิ่านั้น ทูนธับสะพอฺงพธะดำธัดแล้ว พธะผู้มิพธะพาภเจ้าจิ่งได้ตัดเลื้อฺงนี้ ว่า

ทำที่บ่ควนเร็ดใท้ทูาย อันใดแด่ คื

๑. มิดสาทิดถิ ฯลฯ ๑๐. มิดสาวิมุดติ

พิภภุทั้งทูาย นี้ธฺยภว่า ทำที่บ่ควนเร็ดใท้ทูาย

ทำที่ควนเร็ดใท้ทูาย อันใดแด่ คื

๑. สำมาทิดถิ ฯลฯ ๑๐. สำมาวิมุดติ

พิภภุทั้งทูาย นี้ธฺยภว่า ทำที่ควนเร็ดใท้ทูาย

**พะทุลิภาตับพะสูดที่ ๗ จิบ**

## ๘. อะนุดสะธิตับพะสูด

### ว่าด้วยทำที่ควนธะนึภ และที่บ่ควนธะนึภ

[๑๕๙] พิภภุทั้งทูาย เธิาจักสะแดงทำที่ควนธะนึภและทำที่บ่ควนธะนึภแก่ท่านทั้งทูาย ท่านทั้งทูายจิ่งฟัง จิ่งใส่ใจใท้ดี เธิาจักภ่าว พิภภุเทิ่านั้นทูนธับสะพอฺงพธะดำธัดแล้ว พธะผู้มิพธะพาภเจ้าจิ่งได้ตัดเลื้อฺงนี้ว่า

ทำที่บ่ควนธะนึภ อันใดแด่ คื

๑. มิดสาทิดถิ ฯลฯ ๑๐. มิดสาวิมุดติ

พิภภุทั้งทูาย นี้ธฺยภว่า ทำที่บ่ควนธะนึภ

ทำที่ควนธะนึภ อันใดแด่ คื

໑. ສໍາມາທິດຖິ ຯລຯ ໑໐. ສໍາມາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທໍາທີ່ຄວນຣະນຶກ

**ອະນຸດສະຣິຕັບພະສູດທີ ໗ ຈົບ**

## ໑໐. ສັດສິກາຕັບພະສູດ
## ວ່າດ້ວຍທໍາທີ່ຄວນເຮັດໃຫ້ແຈ້ງ ແລະທີ່ບໍ່ຄວນເຮັດໃຫ້ແຈ້ງ

[໑໕໔] ພິກຂຸທັງຫຼາຍ ເຮົາຈັກສະແດງທໍາທີ່ຄວນເຮັດໃຫ້ແຈ້ງແລະທໍາທີ່ບໍ່ຄວນເຮັດໃຫ້ແຈ້ງ ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດໍາຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ທໍາທີ່ບໍ່ຄວນເຮັດໃຫ້ແຈ້ງ ອັນໃດແດ່ ຄື

໑. ມິດສາທິດຖິ ຯລຯ ໑໐. ມິດສາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທໍາທີ່ບໍ່ຄວນເຮັດໃຫ້ແຈ້ງ
ທໍາທີ່ຄວນເຮັດໃຫ້ແຈ້ງ ອັນໃດແດ່ ຄື

໑. ມິດສາທິດຖິ ຯລຯ ໑໐. ມິດສາວິມຸດຕິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທໍາທີ່ຄວນເຮັດໃຫ້ແຈ້ງ

**ສັດສິກາຕັບພະສູດທີ ໑໐ ຈົບ**

**ອະຣິຍະມັກຄະວັກທີ ໕ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອະຣິຍະມັກຄະສູດ
໒. ພັນທະມັກຄະສູດ
໓. ສັດທໍາມະສູດ
໔. ສັບປຸຣິສະທໍາມະສູດ
໕. ອຸບປາເທຕັບພະສູດ
໖. ອາເສວິຕັບພະສູດ
໗. ພາເວຕັບພະສູດ
໘. ພະຫຸລີກາຕັບພະສູດ
໙. ອະນຸດສະຣິຕັບພະສູດ
໑໐. ສັດສິກາຕັບພະສູດ

**ຕະຕິຍະປັນນາດ ຈົບບໍລິບູນ**

# ໔. ຈະຕຸດຖະປັນນາດ

## ໑. ປຸກຄະລະວັກ

### ໝວດວ່າດ້ວຍບຸກຄົນ

## ໑. ເສວິຕັບພະສູດ

### ວ່າດ້ວຍບຸກຄົນທີ່ຄວນເສບ[១]

[໑໕໔] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ບໍ່ຄວນເສບ

ທຳ ໑໐ ປະການ ອັນໃດແດ່ ຄື

| | | | | | |
|---|---|---|---|---|---|
| ໑. | ມິດສາທິດຖິ | (ເຫັນຜິດ) | ໒. | ມິດສາສັງກັບປະ | (ດຳຣິຜິດ) |
| ໓. | ມິດສາວາຈາ | (ເຈລະຈາຜິດ) | ໔. | ມິດສາກຳມັນຕະ | (ກະທຳຜິດ) |
| ໕. | ມິດສາອາຊີວະ | (ລ້ຽງຊີບຜິດ) | ໖. | ມິດສາວາຍາມະ | (ພະຍາຍາມຜິດ) |
| ໗. | ມິດສາສະຕິ | (ຣະນຶກຜິດ) | ໘. | ມິດສາສະມາທິ | (ຕັ້ງຈິດໝັ້ນຜິດ) |
| ໙. | ມິດສາຍານະ | (ຮູ້ຜິດ) | ໑໐. | ມິດສາວິມຸດຕິ | (ລຸດພົ້ນຜິດ) |

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ແລ ເປັນຜູ້ບໍ່ຄວນເສບ
ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ຄວນເສບ
ທຳ ໑໐ ປະການ ອັນໃດແດ່ ຄື

| | | | | | |
|---|---|---|---|---|---|
| ໑. | ສຳມາທິດຖິ | (ເຫັນຖືກ) | ໒. | ສຳມາສັງກັບປະ | (ຄິດຖືກ) |
| ໓. | ສຳມາວາຈາ | (ເຈຣະຈາຖືກ) | ໔. | ສຳມາກຳມັນຕະ | (ການງານຖືກ) |
| ໕. | ສຳມາອາຊີວະ | (ລ້ຽງຊີວິດຖືກ) | ໖. | ສຳມາວາຍາມະ | (ພະຍາຍາມຖືກ) |
| ໗. | ສຳມາສະຕິ | (ຣະນຶກຖືກ) | ໘. | ສຳມາສະມາທິ | (ຕັ້ງຈິດໝັ້ນຖືກ) |
| ໙. | ສຳມາຍານະ | (ຮູ້ຖືກ) | ໑໐. | ສຳມາວິມຸດຕິ | (ລຸດພົ້ນຖືກ) |

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ແລ ເປັນຜູ້ຄວນເສບ

**ເສວິຕັບພະສູດທີ ໑ ຈົບ**

# ໔-໑໔. ພະຊິຕັບພາທິສູດ

## ວ່າດ້ວຍບຸກຄົນທີ່ຄວນຄົບ໌ເປັນຕົ້ນ

[໑໕໖] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ບໍ່ຄວນຄົບ ຯລຯ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ຄວນຄົບ ຯລຯ

[໑໕໗] ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ບໍ່ຄວນເຂົ້າໄປນັ່ງໃກ້ ຯລຯ ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ຄວນເຂົ້າໄປນັ່ງໃກ້ ຯລຯ

[໑໕໘] ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ບໍ່ຄວນບູຊາ ຯລຯ ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ຄວນບູຊາ ຯລຯ

[໑໕໙] ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ບໍ່ຄວນສັນເສີນ ຯລຯ ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ຄວນສັນເສີນ ຯລຯ

[໑໖໐] ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ບໍ່ຄວນເຄົາລົບ ຯລຯ ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ຄວນເຄົາລົບ ຯລຯ

[໑໖໑] ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ບໍ່ຄວນຢຳເກງ ຯລຯ ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ຄວນຢຳເກງ ຯລຯ

[໑໖໒] ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ບໍ່ຄວນໃຫ້ຍິນດີ ຯລຯ ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ຄວນໃຫ້ຍິນດີ ຯລຯ

[໑໖໓] ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມບໍ່ບໍລິສຸດ ຯລຯ ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມບໍລິສຸດ ຯລຯ

[໑໖໔] ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມຄອບງຳມານະບໍ່ໄດ້ ຯລຯ ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມຄອບງຳມານະໄດ້ ຯລຯ

[໑໖໕] ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມບໍ່ຈະເລີນດ້ວຍປັນຍາ ຯລຯ ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມຈະເລີນດ້ວຍປັນຍາ ຯລຯ

[໑໖໖] ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມປະສົບ໌ສິ່ງບໍ່ແມ່ນບຸນຫຼວງຫຼາຍ

ທຳ ໑໐ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ມິດສາທິດຖິ | ໔. ມິດສາສັງກັບປະ |
| ໓. ມິດສາວາຈາ | ໔. ມິດສາກຳມັນຕະ |
| ໕. ມິດສາອາຊີວະ | ໖. ມິດສາວາຍາມະ |
| ໗. ມິດສາສະຕິ | ໘. ມິດສາສະມາທິ |
| ໙. ມິດສາຍານະ | ໑໐. ມິດສາວິມຸດຕິ |

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ແລ ຍ່ອມປະສົບສິ່ງບໍ່ແມ່ນບຸນຫຼວງຫຼາຍ

ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມປະສົບບຸນຫຼວງຫຼາຍ

ທຳ ໑໐ ປະການ ອັນໃດແດ່ ຄື

| | |
|---|---|
| ໑. ສຳມາທິດຖິ | ໔. ສຳມາສັງກັບປະ |
| ໓. ສຳມາວາຈາ | ໔. ສຳມາກຳມັນຕະ |
| ໕. ສຳມາອາຊີວະ | ໖. ສຳມາວາຍາມະ |
| ໗. ສຳມາສະຕິ | ໘. ສຳມາສະມາທິ |
| ໙. ສຳມາຍານະ | ໑໐. ສຳມາວິມຸດຕິ |

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ແລ ຍ່ອມປະສົບບຸນຫຼວງຫຼາຍ

**ພະຊີຕັບພາທິສູດທີ ໔-໑໔ ຈົບ**

**ປຸກຄະລະວັກທີ ໑ ຈົບ**

# ໘. ຊານຸດໂສນິວັກ

## ໝວດວ່າດ້ວຍພາມຊື່ວ່າຊານຸດໂສນີ

## ໑. ພາມມະນະປັດໂຈໂຣຫະນີສູດ

### ວ່າດ້ວຍພິທີລອຍບາບຂອງພາມ

[໑໕໗] ສະໄໝນັ້ນ ພາມຊື່ວ່າຊານຸດໂສນິອາບນໍ້າດໍາຫົວໃນມື້ອຸໂປສົດ ນຸ່ງຫົ່ມຜ້າໄໝຄູ່ໃໝ່ ຢືນຖືກໍາຫຍ້າຄາຢູ່ ທີ່ສົມຄວນ ບໍ່ໄກພຣະຜູ້ມີພຣະພາກເຈົ້າ ພຣະຜູ້ມີພຣະພາກເຈົ້າທອດພຣະເນດເຫັນແລ້ວ ຕັດຖາມຊານຸດໂສນິພາມດັ່ງນີ້ ວ່າ

"ພາມ ຍ້ອນເຫດໃດນໍ ທ່ານຈຶ່ງອາບນໍ້າດໍາຫົວໃນມື້ອຸໂປສົດ ນຸ່ງຫົ່ມຜ້າໄໝຄູ່ໃໝ່ ຢືນຖືກໍາຫຍ້າຄາຢູ່ບ່ອນທີ່ສົມຄວນ ມື້ນີ້ເປັນມື້ອັນໃດຂອງຕະກູນພາມ"

ຊານຸດໂສນິພາມຂາບທູນວ່າ "ທ່ານພຣະໂຄດົມ ມື້ນີ້ເປັນມື້ລອຍບາບຂອງຕະກູນພາມ"

"ພາມ ພິທີລອຍບາບຂອງພາມທັງຫຼາຍ ເປັນແນວໃດ?"

"ທ່ານພຣະໂຄດົມ ໃນມື້ອຸໂປສົດ ພາມທັງຫຼາຍໃນໂລກນີ້ ພາກັນອາບນໍ້າດໍາຫົວ ນຸ່ງຫົ່ມຜ້າໄໝຄູ່ໃໝ່ ທາແຜ່ນດິນດ້ວຍມູນງົວສົດ ລາດດ້ວຍຫຍ້າຄາທີ່ຂຽວສົດແລ້ວນອນໃນລະຫວ່າງກອງຊາຍແລະເຮືອນໄຟ ໃນຣາຕີນັ້ນ ພາມເຫຼົ່ານັ້ນລຸກຂຶ້ນແລ້ວປະຄອງ ອັນຊະລີນອບນ້ອມໄຟ ໓ ຄັ້ງດ້ວຍກ່າວວ່າ "ຂ້າພະເຈົ້າທັງຫຼາຍຂໍລອຍບາບຕໍ່ທ່ານຜູ້ຈະເລີນຂ້າພະເຈົ້າທັງຫຼາຍຂໍລອຍບາບຕໍ່ທ່ານຜູ້ຈະເລີນ" ແລະປົນເປີໄຟໃຫ້ອີ່ມໜໍາດ້ວຍເນີຍໃສ ນໍ້າມັນ ແລະເນີຍຂຸ້ນຈໍານວນຫຼາຍ ພໍລ່ວງຣາຕີນັ້ນໄປຈຶ່ງລ້ຽງພາມທັງຫຼາຍໃຫ້ອີ່ມໜໍາດ້ວຍຂອງຫຍໍ້າຂອງບໍຣິໂພກອັນປະນີດ ທ່ານພຣະໂຄດົມ ພິທີລອຍບາບຂອງພາມທັງຫຼາຍ ເປັນແນວນີ້ແລ"

"ພາມ ພິທີລອຍບາບຂອງພາມທັງຫຼາຍເປັນແນວໜຶ່ງ ພິທີລອຍບາບໃນອະຣິຍະວິໄນເປັນອີກແນວໜຶ່ງ"

"ທ່ານພຣະໂຄດົມ ພິທີລອຍບາບໃນອະຣິຍະວິໄນເປັນແນວໃດ? ຂໍປະທານວະໂຣກາດ ຂໍທ່ານພຣະໂຄດົມໂຜດສະແດງທໍາທີ່ເປັນພິທີລອຍບາບໃນອະຣິຍະວິໄນແກ່ຂ້າພະເຈົ້າດ້ວຍເທີ້ນ"

"ພາມ ຖ້າເປັນແນວນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ"

ຊານຸດໂສນິພານທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ພາມ ອະຣິຍະສາວົກໃນທຳວິໄນນີ້

໑. ພິຈາລະນາເຫັນດັ່ງນີ້ວ່າ ປານາຕິບາດ(ການຂ້າສັດ)ມີຜົນຊົ່ວທັງໃນພົບນີ້ ແລະ ພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະປານາຕິບາດ ລອຍປານາຕິບາດ

໒. ພິຈາລະນາເຫັນດັ່ງນີ້ວ່າ ອະທິນນາທານ(ການລັກຊັບ)ມີຜົນຊົ່ວທັງໃນພົບນີ້ ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະອະທິນນາທານ ລອຍອະທິນນາທານ

໓. ພິຈາລະນາເຫັນດັ່ງນີ້ວ່າ ກາເມສຸມິດສາຈານ(ການປະພຶດຜິດໃນການ)ມີຜົນຊົ່ວ ທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະກາເມສຸມິດສາຈານ ລອຍກາເມສຸມິດສາຈານ

໔. ພິຈາລະນາເຫັນດັ່ງນີ້ວ່າ ມຸສາວາທະ(ເວົ້າຕົວະ)ມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະມຸສາວາທະ ລອຍມຸສາວາທະ

໕. ພິຈາລະນາເຫັນດັ່ງນີ້ວ່າ ປິສຸນາວາຈາ (ຄຳສັບສໍ່) ມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະປິສຸນາວາຈາ ລອຍປິສຸນາວາຈາ

໖. ພິຈາລະນາເຫັນດັ່ງນີ້ວ່າ ຜະຣຸສະວາຈາ(ຄຳຫຍາບ)ມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະຜະຣຸສະວາຈາ ລອຍຜະຣຸສະວາຈາ

໗. ພິຈາລະນາເຫັນດັ່ງນີ້ວ່າ ສຳຜັບປະລາປະ(ຄຳບໍ່ມີສາຣະ)ມີຜົນຊົ່ວທັງໃນພົບນີ້ ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະສຳຜັບປະລາປະ ລອຍສຳຜັບປະລາປະ

໘. ພິຈາລະນາເຫັນດັ່ງນີ້ວ່າ ອະພິດຊາ(ຄວາມເພ່ງເລັງຢາກໄດ້ຂອງເຂົາ)ມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະອະພິດຊາ ລອຍອະພິດຊາ

໙. ພິຈາລະນາເຫັນດັ່ງນີ້ວ່າ ພະຍາບາດ(ຄວາມຄິດຮ້າຍ)ມີຜົນຊົ່ວທັງໃນພົບນີ້ ແລະ ພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະພະຍາບາດ ລອຍພະຍາບາດ

໑໐. ພິຈາລະນາເຫັນດັ່ງນີ້ວ່າ ມິດສາທິດຖິ (ເຫັນຜິດ) ມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະມິດສາທິດຖິ ລອຍມິດສາທິດຖິ

ພາມ ພິທີລອຍບາບໃນອະຣິຍະວິໄນ ເປັນແນວນີ້ແລ

ຊານຸດໂສນີພາມຂາບທູນວ່າ "ທ່ານພຣະໂຄດົມ ພິທີລອຍບາບຂອງພາມທັງຫຼາຍເປັນແນວໜຶ່ງ ພິທີລອຍບາບໃນອະຣິຍະວິໄນກໍເປັນອີກແນວໜຶ່ງ ພິທີລອຍບາບຂອງພາມທັງຫຼາຍຍ່ອມບໍ່ເຖິງສ່ວງ ທີ ໑໖ ແຫ່ງພິທີລອຍບາບໃນອະຣິຍະວິໄນນີ້ ທ່ານພຣະໂຄດົມ ພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

**ພາມມະນະປັດໂຈໂຣຫະນີສູດທີ ໑ ຈົບ**

# ໘. ອະຣິຍະປັດໂຈໂຣຫະນີສູດ

## ວ່າດ້ວຍພິທີລອຍບາບຂອງພຣະອະຣິຍະ

[໑໖໘] ພິກຂຸທັງຫຼາຍ ເຮົາຈັກສະແດງພິທີລອຍບາບອັນເປັນຂອງພຣະອະຣິຍະແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິທີລອຍບາບອັນເປັນຂອງພຣະອະຣິຍະ ເປັນແນວໃດ?

ຄື ອະຣິຍະສາວົກໃນທຳວິໄນນີ້

໑. ພິຈາລະນາເຫັນດັ່ງນີ້ວ່າ ປານາຕິບາດມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະປານາຕິບາດ ລອຍປານາຕິບາດ

໒. ພິຈາລະນາເຫັນດັ່ງນີ້ວ່າ ອະທິນນາທານມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະອະທິນນາທານ ລອຍອະທິນນາທານ

໓. ພິຈາລະນາເຫັນດັ່ງນີ້ວ່າ ກາເມສຸມິດສາຈານມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະກາເມສຸມິດສາຈານ ລອຍກາເມສຸມິດສາຈານ

໔. ພິຈາລະນາເຫັນດັ່ງນີ້ວ່າ ມຸສາວາທະມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະມຸສາວາທະ ລອຍມຸສາວາທະ

໕. ພິຈາລະນາເຫັນດັ່ງນີ້ວ່າ ປິສຸນາວາຈາມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະປິສຸນາວາຈາ ລອຍປິສຸນາວາຈາ

໖. ພິຈາລະນາເຫັນດັ່ງນີ້ວ່າ ຜະຣຸສະວາຈາມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະຜະຣຸສະວາຈາ ລອຍຜະຣຸສະວາຈາ

໗. ພິຈາລະນາເຫັນດັ່ງນີ້ວ່າ ສຳຜັບປະລາປະມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະສຳຜັບປະລາປະ ລອຍສຳຜັບປະລາປະ

໘. ພິຈາລະນາເຫັນດັ່ງນີ້ວ່າ ອະພິດຊາມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະອະພິດຊາ ລອຍອະພິດຊາ

໙. ພິຈາລະນາເຫັນດັ່ງນີ້ວ່າ ພະຍາບາດມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະພະຍາບາດ ລອຍພະຍາບາດ

໑໐. ພິຈາລະນາເຫັນດັ່ງນີ້ວ່າ ມິດສາທິດຖິມີຜົນຊົ່ວທັງໃນພົບນີ້ແລະພົບໜ້າ ເມື່ອພິຈາລະນາເຫັນດັ່ງນີ້ແລ້ວ ຈຶ່ງລະມິດສາທິດຖິ ລອຍມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ພິທີລອຍບາບອັນເປັນຂອງພຣະອະຣິຍະ

**ອະຣິຍະປັດໂຈໂຣຫະນີສູດທີ ໔ ຈົບ**

## ໓. ສະຄາຣະວະສູດ

## ວ່າດ້ວຍພາມຊື່ວ່າສະຄາຣະວະ

[໑໖໙] ຄັ້ງນັ້ນແລ ພາມຊື່ວ່າສະຄາຣະວະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງ ທີ່ປະທັບ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ[໑] ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ທ່ານພຣະໂຄດົມ ອັນໃດບໍເປັນຝັ່ງນີ້ ອັນໃດເປັນຝັ່ງນັ້ນ໋"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ ພາມ

໑. ປານາຕິບາດ ເປັນຝັ່ງນີ້ ເຈຕະນາງົດເວັ້ນຈາກ ປານາຕິບາດເປັນຝັ່ງນັ້ນ
໒. ອະທິນນາທານ ເປັນຝັ່ງນີ້ ເຈຕະນາງົດເວັ້ນຈາກ ອະທິນນາທານເປັນຝັ່ງນັ້ນ
໓. ກາເມສຸມິດສາຈານ ເປັນຝັ່ງນີ້ ເຈຕະນາງົດເວັ້ນຈາກ ກາເມສຸມິດສາຈານ ເປັນຝັ່ງນັ້ນ
໔. ມຸສາວາທະ ເປັນຝັ່ງນີ້ ເຈຕະນາງົດເວັ້ນຈາກ ມຸສາວາທະເປັນຝັ່ງນັ້ນ
໕. ປິສຸນາວາຈາ ເປັນຝັ່ງນີ້ ເຈຕະນາງົດເວັ້ນຈາກ ປິສຸນາວາຈາເປັນຝັ່ງນັ້ນ
໖. ຜະຣຸສະວາຈາ ເປັນຝັ່ງນີ້ ເຈຕະນາງົດເວັ້ນຈາກ ຜະຣຸສະວາຈາເປັນຝັ່ງນັ້ນ
໗. ສຳຜັບປະລາປະ ເປັນຝັ່ງນີ້ ເຈຕະນາງົດເວັ້ນຈາກ ສຳຜັບປະລາປະເປັນຝັ່ງນັ້ນ
໘. ອະພິດຊາເປັນຝັ່ງນີ້ ອະນະພິດຊາ (ຄວາມບໍ່ເພ່ງເລັງຢາກໄດ້ຂອງເຂົາ) ເປັນຝັ່ງນັ້ນ
໙. ພະຍາບາດ ເປັນຝັ່ງນີ້ ອະພະຍາບາດ (ຄວາມບໍ່ຄິດຮ້າຍ) ເປັນຝັ່ງນັ້ນ
໑໐. ມິດສາທິດຖິ ເປັນຝັ່ງນີ້ ສຳມາທິດຖິ (ເຫັນຖືກ) ເປັນຝັ່ງນັ້ນ

ພາມ ນີ້ແລ ເປັນຝັ່ງນີ້ ນີ້ແລ ເປັນຝັ່ງນັ້ນ

ໃນໝູ່ມະນຸດ ເຫຼົ່າຊົນຜູ້ໄປເຖິງຝັ່ງນັ້ນມີຈຳນວນໜ້ອຍ
ສ່ວນໝູ່ສັດນອກນີ້ເລາະໄປຕາມຝັ່ງນີ້ທັ້ງຫຼາຍ
ສ່ວນຊົນເຫຼົ່າໃດປະພຶດຕາມທຳ
ໃນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຖືກຕ້ອງ
ຊົນເຫຼົ່ານັ້ນຈັກຂ້າມພົ້ນວັດຕະ
ອັນເປັນບ້ວງມານທີ່ຂ້າມໄດ້ແສນຍາກ ຈັກເຖິງຝັ່ງນັ້ນ
ບັນດິດລະທຳດຳ ແລ້ວເພິ່ງຈະເລີນທຳຂາວ
ອອກຈາກວັດຕະມາສູ່ວິວັດຕະ
ລະກາມທັງຫຼາຍແລ້ວ ເປັນຜູ້ໝົດຄວາມກັງວົນ
ເພິ່ງປາຖະໜາຄວາມຍິນດີຍິ່ງໃນວິເວກທີ່ຍິນດີໄດ້ຍາກຍິ່ງ
ບັນດິດເພິ່ງຊຳຣະຕົນໃຫ້ຜ່ອງແຜ້ວ
ຈາກເຄື່ອງເສົ້າໝອງແຫ່ງຈິດທັງຫຼາຍ
ບັນດິດເຫຼົ່າໃດອົບຮົມຈິດໂດຍຖືກຕ້ອງ
ໃນອົງທຳເປັນເຄື່ອງຕັດສະຣູ້ທັງຫຼາຍ

ບໍ່ຖືໝັ້ນ ຍິນດີໃນນິບພານເປັນທີ່ສະລະຄວາມຖືໝັ້ນ
ບັນດິດເຫຼົ່ານັ້ນສິ້ນອາສະວະແລ້ວ
ມີຄວາມຮຸ່ງເຮືອງ ດັບເຢັນແລ້ວໃນໂລກ[໑]

**ສະຄາຣະວະສູດທີ ໓ ຈົບ**

## ໔. ໂອຣິມະສູດ

## ວ່າດ້ວຍທຳທີ່ເປັນຝັ່ງນີ້ແລະທຳທີ່ເປັນຝັ່ງນັ້ນ

[໑໗໐] ພິກຂຸທັງຫຼາຍ ເຮົາຈັກສະແດງຝັ່ງນີ້ ແລະຝັ່ງນັ້ນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ

ຝັ່ງນີ້ແລະຝັ່ງນັ້ນ ອັນໃດແດ່ ຄື

໑. ປານາຕິບາດເປັນຝັ່ງນີ້ ເຈຕະນາງົດເວັ້ນຈາກປານາຕິບາດເປັນຝັ່ງນັ້ນ
໒. ອະທິນນາທານເປັນຝັ່ງນີ້ ເຈຕະນາງົດເວັ້ນຈາກອະທິນນາທານເປັນຝັ່ງນັ້ນ
໓. ກາເມສຸມິດສາຈານເປັນຝັ່ງນີ້ ເຈຕະນາງົດເວັ້ນຈາກກາເມສຸມິດສາຈານເປັນຝັ່ງນັ້ນ
໔. ມຸສາວາທະເປັນຝັ່ງນີ້ ເຈຕະນາງົດເວັ້ນຈາກມຸສາວາທະເປັນຝັ່ງນັ້ນ
໕. ປິສຸນາວາຈາເປັນຝັ່ງນີ້ ເຈຕະນາງົດເວັ້ນຈາກປິສຸນາວາຈາເປັນຝັ່ງນັ້ນ
໖. ຜະຣຸສະວາຈາເປັນຝັ່ງນີ້ ເຈຕະນາງົດເວັ້ນຈາກຜະຣຸສະວາຈາເປັນຝັ່ງນັ້ນ
໗. ສຳຜັບປະລາປະເປັນຝັ່ງນີ້ ເຈຕະນາງົດເວັ້ນຈາກສຳຜັບປະລາປະເປັນຝັ່ງນັ້ນ
໘. ອະພິດຊາເປັນຝັ່ງນີ້ ອະນະພິດຊາເປັນຝັ່ງນັ້ນ
໙. ພະຍາບາດເປັນຝັ່ງນີ້ ອະພະຍາບາດເປັນຝັ່ງນັ້ນ
໑໐. ມິດສາທິດຖິເປັນຝັ່ງນີ້ ສຳມາທິດຖິເປັນຝັ່ງນັ້ນ

ພິກຂຸທັງຫຼາຍ ນີ້ແລ ເປັນຝັ່ງນີ້ ນີ້ແລເປັນຝັ່ງນັ້ນ

ໃນໝູ່ມະນຸດ ເຫຼົ່າຊົນຜູ້ໄປເຖິງຝັ່ງນັ້ນມີຈຳນວນໜ້ອຍ
ສ່ວນໝູ່ສັດນອກນີ້ເລາະໄປຕາມຝັ່ງນີ້ທັງຫຼາຍ
ສ່ວນຊົນເຫຼົ່າໃດປະພຶດຕາມທຳ
ໃນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ໂດຍຖືກຕ້ອງ
ຊົນເຫຼົ່ານັ້ນຈັກຂ້າມພົ້ນວັດຕະ

ອັນເປັນບ້ວງມານທີ່ຂ້າມໄດ້ແສນຍາກ ຈັກເຖິງຝັ່ງນັ້ນ
ບັນດິດລະທຳດຳແລ້ວເພິ່ງຈະເລີນທຳຂາວ
ອອກຈາກວັດຕະມາສູ່ວິວັດຕະ
ລະກາມທັງຫຼາຍແລ້ວເປັນຜູ້ໝົດຄວາມກັງວົນ
ເພິ່ງປາຖະໜາຄວາມຍິນດີຍິ່ງໃນວິເວກທີ່ຍິນດີໄດ້ຍາກຍິ່ງ
ບັນດິດເພິ່ງຊຳຮະຕົນໃຫ້ຜ່ອງແຜ້ວ
ຈາກເຄື່ອງເສົ້າໝອງແຫ່ງຈິດທັງຫຼາຍ
ບັນດິດເຫຼົ່າໃດອົບຮົມຈິດໂດຍຖືກຕ້ອງ
ໃນອົງທຳເປັນເຄື່ອງຕັດສະຣູ້ທັງຫຼາຍ
ບໍ່ຖືໝັ້ນ ຍິນດີໃນນິບພານເປັນທີ່ສະລະຄວາມຖືໝັ້ນ
ບັນດິດເຫຼົ່ານັ້ນສິ້ນອາສະວະແລ້ວ
ມີຄວາມຮຸ່ງເຮືອງ ດັບເຢັນແລ້ວໃນໂລກ

**ໂອຣິມະສູດທີ ໔ ຈົບ**

## ໕. ປະຖົມອະທຳມະສູດ

## ວ່າດ້ວຍສິ່ງທີ່ບໍ່ເປັນທຳ ສູດທີ ໑

[໑໗໑] ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳ ແລະບໍ່ເປັນປະໂຫຍດ ຄວນຮູ້ທັງສິ່ງທີ່ເປັນທຳ ແລະເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳ ແລະເປັນປະໂຫຍດ

ສິ່ງທີ່ບໍ່ເປັນທຳ ແລະບໍ່ເປັນປະໂຫຍດ ອັນໃດແດ່ ຄື

| | |
|---|---|
| ໑. ປານາຕິບາດ | ໒. ອະທິນນາທານ |
| ໓. ກາເມສຸມິດສາຈານ | ໔. ມຸສາວາດ |
| ໕. ປິສຸນາວາຈາ | ໖. ຜະຣຸສະວາຈາ |
| ໗. ສຳຜັບປະລາປະ | ໘. ອະພິດຊາ |
| ໙. ພະຍາບາດ | ໑໐. ມິດສາທິດຖິ |

ພິກຂຸທັງຫຼາຍ ນີ້ຮຽກວ່າ ສິ່ງທີ່ບໍ່ເປັນທຳ ແລະບໍ່ເປັນປະໂຫຍດ

ສິ່ງທີ່ເປັນທຳແລະເປັນປະໂຫຍດ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກ ປານາຕິບາດ
໒. ເຈຕະນາງົດເວັ້ນຈາກ ອະທິນນາທານ
໓. ເຈຕະນາງົດເວັ້ນຈາກ ກາເມສຸມິດສາຈານ
໔. ເຈຕະນາງົດເວັ້ນຈາກ ມຸສາວາດ
໕. ເຈຕະນາງົດເວັ້ນຈາກ ປິສຸນາວາຈາ
໖. ເຈຕະນາງົດເວັ້ນຈາກ ຜະຣຸສະວາຈາ
໗. ເຈຕະນາງົດເວັ້ນຈາກ ສຳຜັບປະລາປະ
໘. ອະນະພິດຊາ
໙. ອະພະຍາບາດ
໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ສິ່ງທີ່ເປັນທຳແລະເປັນປະໂຫຍດ

ພິກຂຸທັງຫຼາຍ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳແລະບໍ່ເປັນປະໂຫຍດ ຄວນຮູ້ທັງສິ່ງທີ່ເປັນທຳແລະເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳ ແລະເປັນປະໂຫຍດ" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

**ປະຖົມອະທຳມະສູດທີ 5 ຈົບ**

## ໖. ທຸຕິຍະອະທຳມະສູດ

## ວ່າດ້ວຍສິ່ງທີ່ບໍ່ເປັນທຳ ສູດທີ 6

[໑໗໒] ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳ ແລະສິ່ງທີ່ເປັນທຳ ຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດ ແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ ພຣະຜູ້ມີພຣະພາກເຈົ້າຜູ້ສຸຄົດ ເມື່ອຕັດພຣະພຸດທະພົດນີ້ແລ້ວ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ລຳດັບນັ້ນ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຫຼີກໄປບໍ່ດົນ ພິກຂຸເຫຼົ່ານັ້ນຈຶ່ງໄດ້ເປີກສາກັນວ່າ "ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍ ຊົງສະແດງອຸດເທດ[1]ໂດຍຫຍໍ້ວ່າ "ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳ ແລະສິ່ງທີ່ເປັນທຳ ຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ" ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າ

ໄປສູ່ພຣະວິຫານ ໃຜນໍ ຈະເພິ່ງຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງໄວ້ໂດຍຫຍໍ້ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້"

ລຳດັບນັ້ນ ພິກຂຸເຫຼົ່ານັ້ນມີຄວາມເຫັນຮ່ວມກັນວ່າ "ທ່ານມະຫາກັດຈານະນີ້ແລ ພຣະສາດສະດາຊົງສັນເສີນແລ້ວ ແລະເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍຍ້ອງຍໍ ທ່ານສາມາດ ຈະຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ ທາງທີ່ດີ ພວກເຮົາຄວນຈະເຂົ້າໄປຫາທ່ານມະຫາກັດຈານະຮອດບ່ອນຢູ່ແລ້ວຮຽນຖາມເນື້ອຄວາມນີ້ກັບທ່ານ ແລະຈັກຊົງຈຳເນື້ອຄວາມນັ້ນໄວ້ຕາມທີ່ທ່ານຕອບແກ່ພວກເຮົາ"

ບັດແລ້ວ ພິກຂຸເຫຼົ່ານັ້ນ ຈຶ່ງເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນ ວ່າ

"ທ່ານມະຫາກັດຈານະ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍຊົງສະແດງອຸດເທດນີ້ໂດຍຫຍໍ້ວ່າ "ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳແລະສິ່ງທີ່ເປັນທຳ ຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງ ທີ່ເປັນທຳແລະເປັນປະໂຫຍດ" ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ຜູ້ມີອາຍຸ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຫຼີກໄປບໍ່ດົນ ພວກຂ້ານ້ອຍໄດ້ເປີກສາກັນວ່າ ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍຊົງສະແດງອຸດເທດໂດຍຫຍໍ້ວ່າ "ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳ ແລະສິ່ງທີ່ເປັນທຳຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດ ແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ" ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ ໃຜນໍຈະເພິ່ງຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງໄວ້ໂດຍຫຍໍ້ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້

ຜູ້ມີອາຍຸ ພວກຂ້ານ້ອຍໄດ້ມີຄວາມເຫັນຮ່ວມກັນວ່າ "ທ່ານມະຫາກັດຈານະນີ້ແລ ພຣະສາດສະດາຊົງສັນເສີນແລ້ວ ແລະເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍຍ້ອງຍໍ ທ່ານສາມາດ ຈະຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງໄວ້ໂດຍຫຍໍ້ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ ທາງທີ່ດີ ພວກເຮົາຄວນຈະເຂົ້າໄປຫາທ່ານມະຫາກັດຈານະຮອດບ່ອນຢູ່ແລ້ວຮຽນຖາມເນື້ອຄວາມນີ້ກັບທ່ານ ແລະຈັກຊົງຈຳເນື້ອຄວາມນັ້ນໄວ້ຕາມທີ່ທ່ານຕອບແກ່ພວກເຮົາ" ຂໍທ່ານມະຫາ ກັດຈານະຈົ່ງຈຳແນກເທີ້ນ"

ທ່ານພຣະມະຫາກັດຈານະກ່າວວ່າ "ຜູ້ມີອາຍຸທັງຫຼາຍ ເມື່ອພຣະສາດສະດາປະທັບຢູ່ສະເພາະໜ້າຜູ້ມີອາຍຸທັງຫຼາຍ ທ່ານທັງຫຼາຍ ລະເລີຍພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນສາສຳຄັນເນື້ອຄວາມນີ້ວ່າຄວນຖາມຂ້າພະເຈົ້າ ປຽບຄື ບຸຣຸດຜູ້ຕ້ອງການແກ່ນໄມ້ ສະແຫວງຫາແກ່ນໄມ້ ທ່ຽວສະແຫວງຫາແກ່ນໄມ້ຢູ່ ເມື່ອຕົ້ນໄມ້ໃຫຍ່ມີແກ່ນມີຢູ່ ກໍແນມຂ້າມຮາກແລະລຳຕົ້ນໄປສາ ສຳຄັນງ່າແລະໃບວ່າເປັນແກ່ນໄມ້ທີ່ຕົນເພິ່ງສະແຫວງຫາ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນຜູ້ມີພຣະຈັກຂຸ[๑] ມີພຣະຍານ ມີພຣະທຳ ເປັນຜູ້ປະເສີດ ຕັດບອກໄດ້ ຊົງໃຫ້ເປັນໄປໄດ້ ຊົງສະແດງປະໂຫຍດ ປະທານອະມະຕະທຳ ເປັນເຈົ້າຂອງທຳ ເປັນພຣະຕະຖາຄົດ ຊົງຮູ້ທຳທີ່ຄວນຮູ້ ຊົງເຫັນທຳທີ່ຄວນເຫັນ ກໍເວລານັ້ນແລ ເປັນເວລາສົມຄວນທີ່ທ່ານທັງຫຼາຍເພິ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແລ້ວ ທູນຖາມເນື້ອຄວາມນີ້ ເພິ່ງຊົງຈຳເນື້ອຄວາມນັ້ນໄວ້ຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງຕອບແກ່ທ່ານທັງຫຼາຍ"

ພິກຂຸເຫຼົ່ານັ້ນຮຽນວ່າ "ທ່ານມະຫາກັດຈານະ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນຜູ້ມີພຣະຈັກຂຸ ມີພຣະຍານ ມີພຣະທຳ ເປັນຜູ້ປະເສີດ ຕັດບອກໄດ້ ຊົງໃຫ້ເປັນໄປໄດ້ ຊົງສະແດງປະໂຫຍດ ປະທານອະມະຕະທຳ ເປັນເຈົ້າຂອງທຳ ເປັນພຣະຕະຖາຄົດ ຊົງຮູ້ທຳທີ່ຄວນຮູ້ ຊົງເຫັນທຳທີ່ຄວນເຫັນ ກໍເວລານັ້ນແລ ເປັນເວລາສົມຄວນທີ່ຂ້ານ້ອຍທັງຫຼາຍເພິ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແລ້ວທູນຖາມເນື້ອຄວາມນີ້ ແລະຊົງຈຳເນື້ອຄວາມນັ້ນໄວ້ຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງຕອບແກ່ພວກຂ້ານ້ອຍຢ່າງແນ່ນອນ ທ່ານມະຫາກັດຈານະເອງ ພຣະສາດສະດາຊົງສັນເສີນ ແລະເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍກໍຍ້ອງຍໍ ຍ່ອມສາມາດຈະຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ ຖ້າທ່ານມະຫາກັດຈານະບໍ່ມີຄວາມໜັກໃຈແລ້ວ ຂໍຈົ່ງຈຳແນກເທີ້ນ"

ພຣະມະຫາກັດຈານະກ່າວວ່າ "ຜູ້ມີອາຍຸທັງຫຼາຍ ຖ້າເປັນແນວນັ້ນ ຂໍທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ຂ້າພະເຈົ້າຈັກກ່າວ" ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະມະຫາກັດຈານະຈຶ່ງໄດ້ກ່າວເລື້ອງນີ້ວ່າ

"ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍຊົງສະແດງອຸດເທດໂດຍຫຍໍ້ວ່າ "ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳແລະສິ່ງທີ່ເປັນທຳ ຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ" ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ສິ່ງທີ່ບໍ່ເປັນທຳ ແລະສິ່ງທີ່ເປັນທຳ ສິ່ງທີ່ບໍ່ເປັນປະໂຫຍດ ແລະສິ່ງທີ່ເປັນປະໂຫຍດ ອັນໃດແດ່ ຄື

໑. ປານາຕິບາດເປັນສິ່ງທີ່ບໍ່ເປັນທໍາ ເຈຕະນາງົດເວັ້ນຈາກປານາຕິບາດເປັນສິ່ງທີ່ເປັນທໍາບາບ ອະກຸສົນທໍາຫຼວງຫຼາຍທີ່ເກີດຂຶ້ນຍ້ອນປານາຕິບາດເປັນປັດໄຈນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທໍາຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນເຈຕະນາງົດເວັ້ນຈາກປານາຕິບາດເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໒. ອະທິນນາທານເປັນສິ່ງທີ່ບໍ່ເປັນທໍາ ເຈຕະນາງົດເວັ້ນຈາກອະທິນນາທານເປັນສິ່ງທີ່ເປັນທໍາ ບາບອະກຸສົນທໍາຫຼວງຫຼາຍທີ່ເກີດຂຶ້ນຍ້ອນອະທິນນາທານເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທໍາຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ ຍ້ອນເຈຕະນາງົດເວັ້ນຈາກອະທິນນາທານເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໓. ກາເມສຸມິດສາຈານເປັນສິ່ງທີ່ບໍ່ເປັນທໍາ ເຈຕະນາງົດເວັ້ນຈາກກາເມສຸມິດສາຈານເປັນສິ່ງທີ່ເປັນທໍາ ບາບອະກຸສົນທໍາຫຼວງຫຼາຍທີ່ເກີດຂຶ້ນຍ້ອນກາເມສຸມິດສາຈານເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດສ່ວນກຸສົນທໍາຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ ຍ້ອນເຈຕະນາງົດເວັ້ນຈາກກາເມສຸມິດສາ ຈານເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໔. ມຸສາວາດເປັນສິ່ງທີ່ບໍ່ເປັນທໍາ ເຈຕະນາງົດເວັ້ນຈາກມຸສາວາດເປັນສິ່ງທີ່ເປັນທໍາ ບາບອະກຸສົນທໍາຫຼວງຫຼາຍທີ່ເກີດຂຶ້ນຍ້ອນມຸສາວາດເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທໍາຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນເຈຕະນາງົດເວັ້ນຈາກມຸສາວາທະເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໕. ປິສຸນາວາຈາເປັນສິ່ງທີ່ບໍ່ເປັນທໍາ ເຈຕະນາງົດເວັ້ນຈາກປິສຸນາວາຈາເປັນສິ່ງທີ່ເປັນທໍາ ບາບອະກຸສົນທໍາຫຼວງຫຼາຍທີ່ເກີດຂຶ້ນຍ້ອນປິສຸນາວາຈາເປັນປັດໄຈນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທໍາຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນເຈຕະນາງົດເວັ້ນຈາກປິສຸນາວາຈາເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໖. ຜະຣຸສະວາຈາເປັນສິ່ງທີ່ບໍ່ເປັນທໍາ ເຈຕະນາງົດເວັ້ນຈາກຜະຣຸສະວາຈາເປັນສິ່ງທີ່ເປັນທໍາ ບາບອະກຸສົນທໍາຫຼວງຫຼາຍທີ່ເກີດຂຶ້ນຍ້ອນຜະຣຸສະວາຈາເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທໍາຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນເຈຕະນາງົດເວັ້ນຈາກຜະຣຸສະວາຈາເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໘. ສຳຜັບປະລາປະເປັນສິ່ງທີ່ບໍ່ເປັນທຳ ເຈຕະນາງົດເວັ້ນຈາກສຳຜັບປະລາປະເປັນສິ່ງທີ່ເປັນທຳ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນສຳຜັບປະລາປະເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນເຈຕະນາງົດເວັ້ນຈາກສຳຜັບປະລາປະເປັນ ປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໙. ອະພິດຊາເປັນສິ່ງທີ່ບໍ່ເປັນທຳ ອະນະພິດຊາເປັນສິ່ງທີ່ເປັນທຳ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນອະພິດຊາເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນອະນະພິດຊາ ເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໙. ພະຍາບາດເປັນສິ່ງທີ່ບໍ່ເປັນທຳ ອະພະຍາບາດເປັນສິ່ງທີ່ເປັນທຳ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນພະຍາບາດເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນອະພະຍາບາດ ເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໑໐. ມິດສາທິດຖິເປັນສິ່ງທີ່ບໍ່ເປັນທຳ ສຳມາທິດຖິເປັນສິ່ງທີ່ເປັນທຳ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາທິດຖິເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາທິດຖິເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍຊົງສະແດງອຸດເທດໄວ້ໂດຍຫຍໍ້ວ່າ “ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳ ແລະສິ່ງທີ່ເປັນທຳຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດ ແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະ ເປັນປະໂຫຍດ” ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດ ເຂົ້າໄປສູ່ພຣະວິຫານ ຜູ້ມີອາຍຸທັງຫຼາຍ ຂ້າພະເຈົ້າຍ່ອມຮູ້ເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງໄວ້ໂດຍຫຍໍ້ ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານແບບນີ້ ກໍທ່ານທັງຫຼາຍ ເມື່ອຫວັງຢູ່ ເພິ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າແລ້ວທູນຖາມເນື້ອຄວາມນີ້ເທີ້ນ ຂໍທ່ານທັງຫຼາຍເພິ່ງຊົງຈຳເນື້ອຄວາມນັ້ນໄວ້ຕາມທີ່ພຣະຜູ້ມີພຣະພາກເຈົ້າ ຊົງຕອບແກ່ທ່ານທັງຫຼາຍເທີ້ນ”

ພິກຂຸເຫຼົ່ານັ້ນ ກ່າວຮັບຄຳທ່ານພຣະມະຫາກັດຈານະແລ້ວ ຊົມຊື່ນອະນຸໂມທະນາພາສິດຂອງທ່ານພຣະມະຫາກັດຈານະແລ້ວລຸກຂຶ້ນຈາກອາສະນະ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດໄວ້ໂດຍຫຍໍ້ວ່າ "ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳແລະສິ່ງທີ່ເປັນທຳ ຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ" ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ

ຂ້າແດ່ພຣະອົງຜູ້ຈະເລີນ ເມື່ອພຣະຜູ້ມີພຣະພາກເຈົ້າຊົງຫຼີກໄປບໍ່ດົນ ຂ້າພຣະອົງທັງຫຼາຍໄດ້ເປີກສາກັນວ່າ ຜູ້ມີອາຍຸທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງສະແດງອຸດເທດໄວ້ໂດຍຫຍໍ້ວ່າ "ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳ ແລະສິ່ງທີ່ເປັນທຳ ຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແເລະເປັນປະໂຫຍດ" ບໍ່ຊົງຈຳແນກເນື້ອຄວາມໄວ້ໂດຍພິດສະດານ ສະເດັດລຸກຂຶ້ນຈາກພຸດທະອາດເຂົ້າໄປສູ່ພຣະວິຫານ ໃຜນໍຈະເພິ່ງຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງໄວ້ໂດຍຫຍໍ້ບໍ່ຊົງຈຳແນກໄວ້ໂດຍພິດສະດານ ນີ້ໃຫ້ພິດສະດານໄດ້"

ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍໄດ້ມີຄວາມເຫັນຮ່ວມກັນວ່າ "ທ່ານມະຫາກັດຈານະ ນີ້ແລ ພຣະສາດສະດາຊົງສັນເສີນແລ້ວ ແລະເພື່ອນພົມມະຈາຣີຜູ້ຮູ້ທັງຫຼາຍ ກໍຍ້ອງຍໍທ່ານສາມາດຈະຈຳແນກເນື້ອຄວາມແຫ່ງອຸດເທດທີ່ພຣະຜູ້ມີພຣະພາກເຈົ້າ ຊົງສະແດງໄວ້ໂດຍຫຍໍ້ບໍ່ຊົງຈຳແນກໄວ້ໂດຍພິດສະດານນີ້ໃຫ້ພິດສະດານໄດ້ ທາງທີ່ດີ ພວກເຮົາຄວນຈະເຂົ້າໄປຫາທ່ານມະຫາກັດຈານະຮອດບ່ອນຢູ່ແລ້ວ ຮຽນຖາມເນື້ອຄວາມນີ້ກັບທ່ານ ແລະຈັກຊົງຈຳເນື້ອຄວາມນັ້ນໄວ້ຕາມທີ່ທ່ານຕອບແກ່ພວກເຮົາ"

ບັດແລ້ວຂ້າພຣະອົງທັງຫຼາຍ ຈຶ່ງເຂົ້າໄປຫາທ່ານມະຫາກັດຈານະຮອດບ່ອນຢູ່ແລ້ວຮຽນຖາມເນື້ອຄວາມນີ້ ທ່ານມະຫາກັດຈານະໄດ້ຈຳແນກເນື້ອຄວາມຢ່າງແຈ່ມແຈ້ງແກ່ຂ້າພຣະອົງທັງຫຼາຍດ້ວຍອາການເຫຼົ່ານີ້ ດ້ວຍບົດເຫຼົ່ານີ້ ດ້ວຍພະຍັນຊະນະເຫຼົ່ານີ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ດີແລ້ວ ດີແລ້ວ ມະຫາກັດຈານະເປັນບັນດິດ ມີປັນຍາຫຼາຍ ແມ່ນຫາກທ່ານທັງຫຼາຍເພິ່ງເຂົ້າມາຫາເຮົາແລ້ວຖາມເນື້ອຄວາມນີ້ ເຖິງເຮົາເອງ ກໍເພິ່ງຕອບເນື້ອຄວາມນີ້ຄືທີ່ມະຫາກັດຈານະຕອບແລ້ວນັ້ນເອງ ນີ້ແລ ເປັນເນື້ອຄວາມແຫ່ງອຸດເທດນັ້ນ ແລະທ່ານທັງຫຼາຍເພິ່ງຊົງຈຳເນື້ອຄວາມນັ້ນໄວ້ຄືແນວນັ້ນເທີ້ນ"

**ທຸຕິຍະອະທຳມະສູດທີ ໙ ຈົບ**

# ໗. ຕະຕິຍະອະທຳມະສູດ

## ວ່າດ້ວຍສິ່ງທີ່ບໍ່ເປັນທຳ ສູດທີ ໓

[໑໗໓] ພິກຂຸທັງຫຼາຍ ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳ ແລະສິ່ງທີ່ເປັນທຳ ຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ

ສິ່ງທີ່ບໍ່ເປັນທຳ ແລະສິ່ງທີ່ເປັນທຳ ສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ອັນໃດແດ່ ຄື

໑. ປານາຕິບາດເປັນສິ່ງທີ່ບໍ່ເປັນທຳ ເຈຕະນາງົດເວັ້ນຈາກປານາຕິບາດເປັນສິ່ງທີ່ເປັນທຳບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນປານາຕິບາດເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ ຍ້ອນເຈຕະນາງົດເວັ້ນຈາກປານາຕິບາດເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໒. ອະທິນນາທານເປັນສິ່ງທີ່ບໍ່ເປັນທຳ ເຈຕະນາງົດເວັ້ນຈາກອະທິນນາທານເປັນສິ່ງທີ່ເປັນທຳ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນອະທິນນາທານເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ ຍ້ອນເຈຕະນາງົດເວັ້ນຈາກອະທິນນາທານເປັນ ປັດ ໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

໓. ກາເມສຸມິດສາຈານເປັນສິ່ງທີ່ບໍ່ເປັນທຳ ເຈຕະນາງົດເວັ້ນຈາກກາເມສຸມິດສາຈານເປັນສິ່ງທີ່ເປັນທຳ ຯລຯ[1]

໔. ມຸສາວາທະເປັນສິ່ງທີ່ບໍ່ເປັນທຳ ເຈຕະນາງົດເວັ້ນຈາກມຸສາວາທະເປັນສິ່ງທີ່ເປັນທຳ ຯລຯ

໕. ປິສຸນາວາຈາເປັນສິ່ງທີ່ບໍ່ເປັນທຳ ເຈຕະນາງົດເວັ້ນຈາກປິສຸນາວາຈາເປັນສິ່ງທີ່ເປັນທຳ ຯລຯ

໖. ຜະຣຸສະວາຈາເປັນສິ່ງທີ່ບໍ່ເປັນທຳ ເຈຕະນາງົດເວັ້ນຈາກຜະຣຸສະວາຈາເປັນສິ່ງທີ່ເປັນທຳ ຯລຯ

໗. ສຳຜັບປະລາປະເປັນສິ່ງທີ່ບໍ່ເປັນທຳ ເຈຕະນາງົດເວັ້ນຈາກສຳຜັບປະລາປະເປັນສິ່ງທີ່ເປັນທຳ ຯລຯ

໘. ອະພິດຊາເປັນສິ່ງທີ່ບໍ່ເປັນທຳ ອະນະພິດຊາເປັນສິ່ງທີ່ເປັນທຳ ຯລຯ
໙. ພະຍາບາດເປັນສິ່ງທີ່ບໍ່ເປັນທຳ ອະພະຍາບາດເປັນສິ່ງທີ່ເປັນທຳ ຯລຯ

໑໐. ມິດສາທິດຖິເປັນສິ່ງທີ່ບໍ່ເປັນທຳ ສຳມາທິດຖິເປັນສິ່ງທີ່ເປັນທຳ ບາບອະກຸສົນທຳຫຼວງຫຼາຍທີ່ເກີດຂຶ້ນຍ້ອນມິດສາທິດຖິເປັນປັດໄຈ ນີ້ເປັນສິ່ງທີ່ບໍ່ເປັນປະໂຫຍດ ສ່ວນກຸສົນທຳຫຼວງຫຼາຍທີ່ເຖິງຄວາມຈະເລີນເຕັມທີ່ຍ້ອນສຳມາທິດຖິເປັນປັດໄຈ ນີ້ເປັນສິ່ງທີ່ເປັນປະໂຫຍດ

ພິກຂຸທັງຫຼາຍ ຍ້ອນອາໄສຄຳທີ່ເຮົາກ່າວໄວ້ວ່າ "ບຸກຄົນຄວນຮູ້ທັງສິ່ງທີ່ບໍ່ເປັນທຳແລະສິ່ງທີ່ເປັນທຳ ຄວນຮູ້ທັງສິ່ງທີ່ບໍ່ເປັນປະໂຫຍດແລະສິ່ງທີ່ເປັນປະໂຫຍດ ເມື່ອຮູ້ແລ້ວ ຄວນປະຕິບັດຕາມສິ່ງທີ່ເປັນທຳແລະເປັນປະໂຫຍດ" ເຮົາຈຶ່ງກ່າວໄວ້ເຊັ່ນນັ້ນ

**ຕະຕິຍະອະທຳມະສູດທີ ໗ ຈົບ**

## ໘. ກຳມະນິທານະສູດ

## ວ່າດ້ວຍຕົ້ນເຫດແຫ່ງກຳ

[໑໗໔] ພິກຂຸທັງຫຼາຍ ປານາຕິບາດ ເຮົາກ່າວວ່າ ມີ ໓ ຢ່າງຄື

໑. ປານາຕິບາດມີໂລພະເປັນເຫດ
໒. ປານາຕິບາດມີໂທສະເປັນເຫດ
໓. ປານາຕິບາດມີໂມຫະເປັນເຫດ

ອະທິນນາທານ ເຮົາກ່າວວ່າ ມີ ໓ ຢ່າງ ຄື

໑. ອະທິນນາທານມີໂລພະເປັນເຫດ
໒. ອະທິນນາທານມີໂທສະເປັນເຫດ
໓. ອະທິນນາທານມີໂມຫະເປັນເຫດ

ກາເມສຸມິດສາຈານ ເຮົາກ່າວວ່າ ມີ ໓ ຢ່າງ ຄື

໑. ກາເມສຸມິດສາຈານມີໂລພະເປັນເຫດ
໒. ກາເມສຸມິດສາຈານມີໂທສະເປັນເຫດ
໓. ກາເມສຸມິດສາຈານມີໂມຫະເປັນເຫດ

ມຸສາວາທະ ເຮົາກ່າວວ່າ ມີ ໓ ຢ່າງ ຄື

໑. ມຸສາວາທະມີໂລພະເປັນເຫດ
໒. ມຸສາວາທະມີໂທສະເປັນເຫດ
໓. ມຸສາວາທະມີໂມຫະເປັນເຫດ

ປິສຸນາວາຈາ ເຮົາກ່າວວ່າ ມີ ໓ ຢ່າງ ຄື

໑. ປິສຸນາວາຈາມີໂລພະເປັນເຫດ
໒. ປິສຸນາວາຈາມີໂທສະເປັນເຫດ
໓. ປິສຸນາວາຈາມີໂມຫະເປັນເຫດ

ຜະຣຸສະວາຈາ ເຮົາກ່າວວ່າ ມີ ໓ ຢ່າງ ຄື

໑. ຜະຣຸສະວາຈາມີໂລພະເປັນເຫດ
໒. ຜະຣຸສະວາຈາມີໂທສະເປັນເຫດ
໓. ຜະຣຸສະວາຈາມີໂມຫະເປັນເຫດ

ສຳຜັບປະລາປະ ເຮົາກ່າວວ່າ ມີ ໓ ຢ່າງ ຄື

໑. ສຳຜັບປະລາປະມີໂລພະເປັນເຫດ
໒. ສຳຜັບປະລາປະມີໂທສະເປັນເຫດ
໓. ສຳຜັບປະລາປະມີໂມຫະເປັນເຫດ

ອະພິດຊາ ເຮົາກ່າວວ່າ ມີ ໓ ຢ່າງ ຄື

໑. ອະພິດຊາມີໂລພະເປັນເຫດ
໒. ອະພິດຊາມີໂທສະເປັນເຫດ
໓. ອະພິດຊາມີໂມຫະເປັນເຫດ

ພະຍາບາດ ເຮົາກ່າວວ່າ ມີ ໓ ຢ່າງ ຄື

໑. ພະຍາບາດມີໂລພະເປັນເຫດ
໒. ພະຍາບາດມີໂທສະເປັນເຫດ
໓. ພະຍາບາດມີໂມຫະເປັນເຫດ

ມິດສາທິດຖິ ເຮົາກ່າວວ່າ ມີ ໓ ຢ່າງ ຄື

໑. ມິດສາທິດຖິມີໂລພະເປັນເຫດ
໒. ມິດສາທິດຖິມີໂທສະເປັນເຫດ
໓. ມິດສາທິດຖິມີໂມຫະເປັນເຫດ

ພິກຂຸທັງຫຼາຍ ໂລພະເປັນເຫດເກີດແຫ່ງກຳ ໂທສະເປັນເຫດເກີດແຫ່ງກຳ ໂມຫະເປັນເຫດເກີດແຫ່ງກຳ ຍ້ອນໂລພະສິ້ນໄປ ເຫດເກີດແຫ່ງກຳຈຶ່ງສິ້ນໄປ ຍ້ອນໂທສະສິ້ນໄປ ເຫດເກີດແຫ່ງກຳຈຶ່ງສິ້ນໄປ ຍ້ອນໂມຫະສິ້ນໄປ ເຫດເກີດແຫ່ງກຳຈຶ່ງສິ້ນໄປ

**ກຳມະນິທານະສູດທີ ໘ ຈົບ**

## ໙. ປະຣິກກະມະນະສູດ

## ວ່າດ້ວຍທຳເປັນທາງຫຼີກຫຼົບ[១]

[໑໗໕] ພິກຂຸທັງຫຼາຍ ທຳນີ້ເປັນທາງຫຼີກຫຼົບ ບໍ່ແມ່ນທຳບໍ່ເປັນທາງຫຼີກຫຼົບ

ທຳນີ້ເປັນທາງຫຼີກຫຼົບ ບໍ່ແມ່ນທຳບໍ່ເປັນທາງຫຼີກຫຼົບ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດເປັນທາງຫຼີກຫຼົບສຳລັບບຸກຄົນຜູ້ຂ້າສັດ
໒. ເຈຕະນາງົດເວັ້ນຈາກອະທິນນາທານເປັນທາງຫຼີກຫຼົບສຳລັບບຸກຄົນຜູ້ລັກຊັບ
໓. ເຈຕະນາງົດເວັ້ນຈາກກາເມສຸມິດສາຈານເປັນທາງຫຼີກຫຼົບສຳລັບບຸກຄົນຜູ້ປະພຶດຜິດໃນກາມ
໔. ເຈຕະນາງົດເວັ້ນຈາກມຸສາວາທະເປັນທາງຫຼີກຫຼົບສຳລັບບຸກຄົນຜູ້ເວົ້າຕົວະ
໕. ເຈຕະນາງົດເວັ້ນຈາກປິສຸນາວາຈາເປັນທາງຫຼີກຫຼົບສຳລັບບຸກຄົນຜູ້ເວົ້າສັບສໍ່
໖. ເຈຕະນາງົດເວັ້ນຈາກຜະຣຸສະວາຈາເປັນທາງຫຼີກຫຼົບສຳລັບບຸກຄົນຜູ້ເວົ້າຄຳຫຍາບ
໗. ເຈຕະນາງົດເວັ້ນຈາກສຳຜັບປະລາປະເປັນທາງຫຼີກຫຼົບສຳລັບບຸກຄົນຜູ້ເວົ້າບໍ່ມີສາຣະ
໘. ອະນະພິດຊາເປັນທາງຫຼີກຫຼົບສຳລັບບຸກຄົນຜູ້ເພັ່ງເລັງຍາກໄດ້ຂອງເຂົາ
໙. ອະພະຍາບາດເປັນທາງຫຼີກຫຼົບສຳລັບບຸກຄົນຜູ້ມີຈິດພະຍາບາດ
໑໐. ສຳມາທິດຖິເປັນທາງຫຼີກຫຼົບສຳລັບບຸກຄົນຜູ້ເຫັນຜິດ

ພິກຂຸທັງຫຼາຍ ທຳນີ້ເປັນທາງຫຼີກຫຼົບ ບໍ່ແມ່ນທຳບໍ່ເປັນທາງຫຼີກຫຼົບ ເປັນແນວນີ້ແລ

**ປະຣິກກະມະນະສູດທີ ໙ ຈົບ**

# ໑໐. ຈຸນທະສູດ

## ວ່າດ້ວຍນາຍຈຸນທະກຳມາຣະບຸດ

[໑໗໖] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ສວນໝາກມ່ວງຂອງນາຍຈຸນທະກຳມາຣະບຸດ[໑] ເຂດນະຄອນປາວາ ຄັ້ງນັ້ນ ນາຍຈຸນທະກຳມາຣະບຸດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດຖາມຂຶ້ນມາ ວ່າ

"ຈຸນທະ ທ່ານພໍໃຈຄວາມສະອາດຂອງໃຜ?"

ນາຍຈຸນທະກຳມາຣະບຸດຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພວກພາມຊາວປັດສາພູມ ຜູ້ຖືນ້ຳເຕົ້າ ໃສ່ພວງມາໄລສາຫຣ່າຍ ບົນເບີໄຟ ລົງນ້ຳເປັນຂໍ້ວັດປະຕິບັດ ບັນຍັດຄວາມສະອາດໄວ້ ຂ້າພຣະອົງພໍໃຈຄວາມສະອາດຂອງພາມເຫຼົ່ານັ້ນ"

"ຈຸນທະ ພວກພາມຊາວປັດສາພູມ ຜູ້ຖືນ້ຳເຕົ້າ ໃສ່ພວງມາໄລສາຫຣ່າຍ ບົນເບີໄຟ ລົງນ້ຳເປັນຂໍ້ວັດປະຕິບັດ ບັນຍັດຄວາມສະອາດໄວ້ແນວໃດ?"

"ຂ້າແດ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ພວກພາມຊາວປັດສາພູມ ຜູ້ຖືນ້ຳເຕົ້າ ໃສ່ພວງມາໄລສາຫຣ່າຍ ບົນເບີໄຟ ລົງນ້ຳເປັນຂໍ້ວັດປະຕິບັດ ຍ່ອມຊັກຊວນສາວົກທັງຫຼາຍແນວນີ້ວ່າ "ມາເທີ້ນບຸຣຸດຜູ້ຈະເລີນ ທ່ານຄວນລຸກຂຶ້ນຈາກບ່ອນນອນແຕ່ເຊົ້າ ຈັບຕ້ອງແຜ່ນດິນ ຖ້າບໍ່ຈັບຕ້ອງແຜ່ນດິນ ຕ້ອງຈັບຕ້ອງມູນງົວສົດ ຖ້າບໍ່ຈັບຕ້ອງມູນງົວສົດ ຕ້ອງຈັບຕ້ອງຫຍ້າຂຽວສົດ ຖ້າບໍ່ຈັບຕ້ອງຫຍ້າຂຽວສົດ ຕ້ອງບົນເບີໄຟ ຖ້າບໍ່ບົນເບີໄຟຕ້ອງປະຄອງອັນຊະລີນອບນ້ອມດວງອາທິດ ຖ້າບໍ່ປະຄອງອັນຊະລີນອບນ້ອມດວງອາທິດ ຕ້ອງລົງນ້ຳມື້ລະ ໓ ຄັ້ງ" ຂ້າແດ່ ພຣະອົງຜູ້ຈະເລີນ ພວກພາມຊາວປັດສາພູມ ຜູ້ຖືນ້ຳເຕົ້າ ໃສ່ພວງມາໄລສາຫຣ່າຍ ບົນເບີໄຟ ລົງນ້ຳເປັນຂໍ້ວັດປະຕິບັດ ບັນຍັດຄວາມສະອາດໄວ້ແນວນີ້ ຂ້າພຣະອົງພໍໃຈຄວາມສະອາດຂອງພາມເຫຼົ່ານັ້ນ"

"ຈຸນທະ ພວກພາມຊາວປັດສາພູມ ຜູ້ຖືນ້ຳເຕົ້າ ໃສ່ພວງມາໄລສາຫຣ່າຍ ບົນເບີໄຟ ລົງນ້ຳເປັນຂໍ້ວັດປະຕິບັດ ບັນຍັດຄວາມສະອາດໄວ້ເປັນແນວໜຶ່ງ ສ່ວນຄວາມສະອາດ ໃນອະຣິຍະວິໄນເປັນອີກແນວໜຶ່ງ"

"ຂ້າແດ່ ພຣະອົງຜູ້ຈະເລີນ ຄວາມສະອາດໃນອະຣິຍະວິໄນເປັນແນວໃດ? ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າໂຜດສະແດງທຳທີ່ເປັນຄວາມສະອາດ ໃນອະຣິຍະວິໄນແກ່ຂ້າພຣະອົງດ້ວຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຈຸນທະ ຖ້າເປັນແນວນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີເຮົາຈັກກ່າວ" ເມື່ອນາຍຈຸນທະກຳມາຣະບຸດທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ຈຸນທະ ຄວາມບໍ່ສະອາດທາງກາຍ ໓ ຢ່າງ ຄວາມບໍ່ສະອາດທາງວາຈາ ໔ ຢ່າງ ຄວາມບໍ່ສະອາດທາງໃຈ ໓ ຢ່າງ

ຄວາມບໍ່ສະອາດທາງກາຍ ໓ ຢ່າງ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ຂ້າສັດ ຫຍາບຊ້າ ມີມືເປື້ອນເລືອດ ປັກໃຈຢູ່ໃນການຂ້າແລະການທຸບຕີ ບໍ່ມີຄວາມອີດູໃນສັດທັງປວງ

໒. ເປັນຜູ້ລັກຊັບ ຄື ເປັນຜູ້ຖືເອົາຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນເຊິ່ງຢູ່ໃນບ້ານ ຫຼື ຢູ່ໃນປ່າທີ່ເຈົ້າຂອງບໍ່ໄດ້ໃຫ້ ດ້ວຍຈິດເປັນເຫດລັກ

໓. ເປັນຜູ້ປະພຶດຜິດໃນກາມ ຄື ເປັນຜູ້ປະພຶດລ່ວງໃນສະຕີທີ່ຢູ່ໃນປົກຄອງຂອງມານດາ ທີ່ຢູ່ໃນປົກຄອງຂອງບິດາ ທີ່ຢູ່ໃນປົກຄອງຂອງອ້າຍນ້ອງຊາຍ ທີ່ຢູ່ໃນປົກຄອງຂອງເອື້ອຍນ້ອງສາວ ທີ່ຢູ່ໃນປົກຄອງຂອງຍາດ ທີ່ປະພຶດທຳມີສາມີ ມີກົດໝາຍຄຸ້ມຄອງ ໂດຍທີ່ສຸດ ແມ່ນແຕ່ສະຕີທີ່ບຸຣຸດໃສ່ດ້ວຍພວງມາໄລໝາຍໄວ້

ຈຸນທະ ຄວາມບໍ່ສະອາດທາງກາຍ ໓ ຢ່າງ ເປັນແນວນີ້ແລ

ຄວາມບໍ່ສະອາດທາງວາຈາ ໔ ຢ່າງ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ເວົ້າຕົວະ ຄື ຢູ່ໃນສະພາ ຢູ່ໃນບໍລິສັດ ຢູ່ທ່າມກາງໝູ່ຍາດ ຢູ່ທ່າມກາງໝູ່ທະຫານ ຫຼື ຢູ່ທ່າມກາງຣາດຊະສຳນັກ ຖືກເຂົາອ້າງເປັນພະຍານຊັກຖາມວ່າ "ທ່ານຮູ້ສິ່ງໃດ ຈົ່ງກ່າວສິ່ງນັ້ນ" ບຸກຄົນນັ້ນບໍ່ຮູ້ກໍກ່າວວ່າ "ຮູ້" ຫຼື ຮູ້ກໍກ່າວວ່າ "ບໍ່ຮູ້" ບໍ່ເຫັນກໍກ່າວວ່າ "ເຫັນ" ຫຼື

ເຫັນກໍກ່າວວ່າ "ບໍ່ເຫັນ" ກ່າວຕົວະທັງທີ່ຮູ້ຍ້ອນຕົນເປັນເຫດແດ່ ຍ້ອນບຸກຄົນອື່ນເປັນເຫດແດ່ ຍ້ອນເຫດຄືເຫັນແກ່ອາມິດເລັກໜ້ອຍແດ່

໒. ເປັນຜູ້ເວົ້າສັບສໍ່ ຄື ຟັງຄວາມຝ່າຍນີ້ແລ້ວໄປບອກຝ່າຍນັ້ນ ເພື່ອທຳລາຍຝ່າຍນີ້ ຫຼືຟັງຄວາມຝ່າຍນັ້ນແລ້ວ ມາບອກຝ່າຍນີ້ເພື່ອທຳລາຍຝ່າຍນັ້ນ ຍຸຍົງຄົນທີ່ສາມັກຄີກັນ ສົ່ງເສີມຄົນທີ່ແຕກແຍກກັນ ຊົມຊື່ນຍິນດີເພີດເພີນຕໍ່ຜູ້ທີ່ແຕກແຍກກັນ ເວົ້າແຕ່ຄຳເວົ້າທີ່ກໍ່ຄວາມແຕກແຍກກັນ

໓. ເປັນຜູ້ເວົ້າຄຳຫຍາບ ຄື ກ່າວແຕ່ຄຳທີ່ຫຍາບຄາຍ ກ້າແຂງ ເຜັດຮ້ອນຫຍາບຄາຍດຸຮ້າຍແກ່ຜູ້ອື່ນ ກະທົບຜູ້ອື່ນ ໃກ້ຕໍ່ຄວາມໂກດ ບໍ່ເປັນໄປເພື່ອສະມາທິ

໔. ເປັນຜູ້ເວົ້າບໍ່ມີສາຣະ ຄື ເວົ້າບໍ່ຖືກເວລາ ເວົ້າຄຳບໍ່ຈິງ ເວົ້າບໍ່ອີງປະໂຫຍດ ເວົ້າບໍ່ອີງທຳ ເວົ້າບໍ່ອີງວິໄນ ເວົ້າຄຳທີ່ບໍ່ມີຫຼັກຖານ ບໍ່ມີບ່ອນອ້າງອີງ ບໍ່ມີບ່ອນກຳນົດ ບໍ່ປະກອບດ້ວຍປະໂຫຍດ

ຈຸນທະ ຄວາມບໍ່ສະອາດທາງວາຈາ ໔ ຢ່າງ ເປັນແນວນີ້ແລ

ຄວາມບໍ່ສະອາດທາງໃຈ ໓ ຢ່າງ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ເພ່ງເລັງຢາກໄດ້ຂອງເຂົາ ຄື ເພ່ງເລັງຢາກໄດ້ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນວ່າ "ເຮັດແນວໃດ ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນຈະເພິ່ງເປັນຂອງເຮົາ"

໒. ເປັນຜູ້ມີຈິດພະຍາບາດ ຄື ມີຈິດຄິດຮ້າຍວ່າ "ຂໍສັດເຫຼົ່ານີ້ຈົ່ງຖືກຂ້າ ຈົ່ງຖືກທຳລາຍ ຈົ່ງຂາດສູນ ຈົ່ງພິນາດໄປ ຫຼືຢ່າໄດ້ມີ"

໓. ເປັນມິດສາທິດຖິ ມີຄວາມເຫັນວິປະຣິດວ່າ "ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການເຊ່ນສວງບໍ່ມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີແລະຊົ່ວກໍບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ໂອປະປາຕິກະສັດບໍ່ມີ ສະມະນະພາມຜູ້ປະພຶດດີປະຕິບັດຊອບ ເຮັດໃຫ້ແຈ້ງໂລກນີ້ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງກໍບໍ່ມີໃນໂລກ"

ຈຸນທະ ຄວາມບໍ່ສະອາດທາງໃຈ ໓ ຢ່າງ ເປັນແນວນີ້ແລ

ອະກຸສົນກຳມະບົດ ໑໐ ປະການນີ້ແລທີ່ບຸກຄົນປະກອບແລ້ວ ເມື່ອລຸກຂຶ້ນຈາກບ່ອນນອນແຕ່ເຊົ້າມືດ ແມ່ນຈະຈັບຕ້ອງແຜ່ນດິນກໍຕາມ ບໍ່ຈັບຕ້ອງແຜ່ນດິນກໍຕາມ ກໍເປັນຜູ້ສະອາດບໍ່ໄດ້ເລີຍ ແມ່ນຈະຈັບຕ້ອງມູນງົວສົດກໍຕາມ ບໍ່ຈັບຕ້ອງມູນງົວສົດກໍຕາມ ກໍເປັນຜູ້ສະອາດບໍ່ໄດ້ ແມ່ນຈະຈັບຕ້ອງຫຍ້າຂຽວສົດກໍຕາມ ບໍ່ຈັບຕ້ອງຫຍ້າຂຽວສົດກໍຕາມ ກໍເປັນຜູ້ສະອາດບໍ່ໄດ້ ແມ່ນຈະປິ່ນເປົ່າໄຟກໍຕາມ ບໍ່ປິ່ນເປົ່າໄຟກໍຕາມ ກໍເປັນຜູ້ສະອາດບໍ່ໄດ້ ແມ່ນຈະປະຄອງອັນຊະລີ ນອບນ້ອມດວງອາທິດກໍຕາມ ບໍ່ປະຄອງອັນຊະລີນອບນ້ອມດວງອາທິດກໍຕາມ ກໍເປັນຜູ້ສະອາດບໍ່ໄດ້ ແມ່ນຈະລົງນ້ຳມື້ລະ ໓ ຄັ້ງກໍຕາມ ບໍ່ລົງນ້ຳມື້ລະ ໓ ຄັ້ງກໍຕາມ ກໍເປັນຜູ້ສະອາດບໍ່ໄດ້ຢູ່ນັ້ນເອງ ຂໍ້ນັ້ນຍ້ອນເຫດໃດ ຍ້ອນອະກຸສົນກຳມະບົດ ໑໐ ປະການນີ້ເປັນ ທຳບໍ່ສະອາດ ແລະເປັນເຫດກໍ່ໃຫ້ເກີດຄວາມບໍ່ສະອາດ

ຈຸນທະ ຍ້ອນເຫດທີ່ປະກອບດ້ວຍອະກຸສົນກຳມະບົດ ໑໐ ປະການນີ້ ຈຶ່ງຜາກົດມີທັງນະຮົກ ກຳເນີດສັດເດຍຣັດສານ ພູມແຫ່ງເຜດ ຫຼືທຸກຄະຕິແນວໃດແນວໜຶ່ງແມ່ນອື່ນ

ຈຸນທະ ຄວາມສະອາດທາງກາຍ ໓ ຢ່າງ ຄວາມສະອາດທາງວາຈາ ໔ ຢ່າງ ຄວາມສະອາດທາງໃຈ ໓ ຢ່າງ

ຄວາມສະອາດທາງກາຍ ໓ ຢ່າງ ເປັນແນວໃດ?
ຄື ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ລະເວັ້ນຂາດຈາກການຂ້າສັດ ວາງທັນດາວຸດ ແລະສັດຕາວຸດມີຄວາມລະອາຍ ມີຄວາມອີດູ ມຸ້ງຫວັງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່

໒. ເປັນຜູ້ລະເວັ້ນຂາດຈາກການລັກຊັບ ຄື ບໍ່ຖືເອົາຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນເຊິ່ງຢູ່ໃນບ້ານ ຫຼື ຢູ່ໃນປ່າທີ່ເຈົ້າຂອງບໍ່ໄດ້ໃຫ້ ດ້ວຍຈິດເປັນເຫດລັກ

໓. ເປັນຜູ້ລະເວັ້ນຂາດຈາກການປະພຶດຜິດໃນກາມ ຄື ບໍ່ເປັນຜູ້ປະພຶດລ່ວງໃນສະຕີທີ່ຢູ່ໃນປົກຄອງຂອງມານດາ ທີ່ຢູ່ໃນປົກຄອງຂອງບິດາ ທີ່ຢູ່ໃນປົກຄອງຂອງອ້າຍນ້ອງຊາຍ ທີ່ຢູ່ໃນປົກຄອງຂອງເອື້ອຍນ້ອງສາວ ທີ່ຢູ່ໃນປົກຄອງຂອງຍາດ ທີ່ປະພຶດທຳ ມີສາມີ ມີກົດໝາຍຄຸ້ມຄອງ ໂດຍທີ່ສຸດແມ່ນສະຕີທີ່ບຸຣຸດໃສ່ດ້ວຍພວງມາໄລໝາຍໄວ້

ຄວາມສະອາດທາງກາຍ ໓ ຢ່າງ ເປັນແນວນີ້ແລ

ຄວາມສະອາດທາງວາຈາ ໔ ຢ່າງ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ລະເວັ້ນຂາດຈາກການເວົ້າຕົວະ ຄື ຢູ່ໃນສະພາ ຢູ່ໃນບໍລິສັດ ຢູ່ທ່າມກາງໝູ່ຍາດ ຢູ່ທ່າມກາງໝູ່ທະຫານ ຫຼືຢູ່ທ່າມກາງຣາດຊະສຳນັກ ຖືກເຂົາອ້າງ ເປັນພະຍານຊັກຖາມວ່າ "ທ່ານຮູ້ສິ່ງໃດຈົ່ງກ່າວສິ່ງນັ້ນ" ບຸກຄົນນັ້ນບໍ່ຮູ້ກໍກ່າວວ່າ "ບໍ່ຮູ້" ຫຼື ຮູ້ກໍກ່າວວ່າ "ຮູ້" ບໍ່ເຫັນກໍກ່າວວ່າ "ບໍ່ເຫັນ" ຫຼືເຫັນກໍກ່າວວ່າ "ເຫັນ" ບໍ່ກ່າວຕົວະທັງທີ່ຮູ້ຍ້ອນຕົນເປັນເຫດແດ່ ຍ້ອນບຸກຄົນອື່ນເປັນເຫດແດ່ ຍ້ອນເຫດຄືເຫັນແກ່ອາມິດເລັກໜ້ອຍແດ່

໒. ເປັນຜູ້ລະເວັ້ນຂາດຈາກການເວົ້າສັບສໍ່ ຄື ຟັງຄວາມຝ່າຍນີ້ແລ້ວບໍ່ໄປບອກຝ່າຍນັ້ນເພື່ອທຳລາຍຝ່າຍນີ້ ຫຼື ຟັງຄວາມຝ່າຍນັ້ນແລ້ວບໍ່ມາບອກຝ່າຍນີ້ເພື່ອທຳລາຍຝ່າຍນັ້ນ ສະມານຄົນທີ່ແຕກແຍກກັນ ສົ່ງເສີມຄົນທີ່ປອງດອງກັນ ຊົມຊື່ນຍິນດີເພີດເພີນຕໍ່ຜູ້ທີ່ສາມັກຄີກັນ ເວົ້າແຕ່ຄຳເວົ້າທີ່ສ້າງສັນຄວາມສາມັກຄີ

໓. ເປັນຜູ້ລະເວັ້ນຂາດຈາກການເວົ້າຄຳຫຍາບ ຄື ກ່າວແຕ່ຄຳທີ່ບໍ່ມີໂທດ ມ່ວນໜ້າຮັກ ຈັບໃຈ ເປັນຄຳຂອງຊາວເມືອງ ຄົນສ່ວນຫຼາຍຮັກແພງພໍໃຈ

໔. ເປັນຜູ້ລະເວັ້ນຂາດຈາກການເວົ້າບໍ່ມີສາຣະ ຄື ເວົ້າຖືກເວລາ ເວົ້າຄຳຈິງເວົ້າອີງປະໂຫຍດ ເວົ້າອີງທຳ ເວົ້າອີງວິໄນ ເວົ້າຄຳທີ່ມີຫຼັກຖານ ມີບ່ອນອ້າງອີງ ມີທີ່ກຳນົດ ປະກອບດ້ວຍປະໂຫຍດ

ຄວາມສະອາດທາງວາຈາ ໔ ຢ່າງ ເປັນແນວນີ້ແລ

ຄວາມສະອາດທາງໃຈ ໓ ຢ່າງ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ ຄື ບໍ່ເພ່ງເລັງຢາກໄດ້ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນວ່າ "ເຮັດແນວໃດ ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນຈະເພິ່ງເປັນຂອງເຮົາ"

໒. ເປັນຜູ້ມີຈິດບໍ່ພະຍາບາດ ຄື ບໍ່ມີຈິດຄິດຮ້າຍວ່າ "ຂໍສັດເຫຼົ່ານີ້ ຈົ່ງເປັນຜູ້ບໍ່ມີເວນ ບໍ່ມີຈິດພະຍາບາດ ບໍ່ມີທຸກ ມີສຸກ ຮັກສາຕົນເທີ້ນ"

໓. ເປັນສຳມາທິດຖິ ມີຄວາມເຫັນບໍ່ວິປະຣິດວ່າ "ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວມີຜົນ ການເຊັ່ນສວງມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີແລະຊົ່ວມີ

ໂລກນີ້ມີ ໂລກໜ້າມີ ມານດາມີຄຸນ ບິດາມີຄຸນ ໂອປະປາຕິກະສັດມີ ສະມະນະພາມຜູ້ປະພຶດດີປະຕິບັດຊອບ ເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວ ສອນຜູ້ອື່ນໃຫ້ຮູ້ແຈ້ງມີຢູ່ໃນໂລກ”

ຈຸນທະ ຄວາມສະອາດທາງໃຈ ໓ ຢ່າງ ເປັນແບບນີ້ແລ

ກຸສົນກຳມະບົດ ໑໐ ປະການນີ້ທີ່ບຸກຄົນປະກອບແລ້ວ ເມື່ອລຸກຂຶ້ນຈາກບ່ອນນອນແຕ່ເຊົ້າມືດ ແມ່ນຈະຈັບຕ້ອງແຜ່ນດິນກໍຕາມ ບໍ່ຈັບຕ້ອງແຜ່ນດິນກໍຕາມ ກໍເປັນຜູ້ສະອາດຢູ່ນັ້ນເອງ ແມ່ນຈະຈັບຕ້ອງມູນງົວສົດກໍຕາມ ບໍ່ຈັບຕ້ອງມູນງົວສົດກໍຕາມ ກໍເປັນຜູ້ສະອາດຢູ່ນັ້ນເອງ ແມ່ນຈະຈັບຕ້ອງຫຍ້າຂຽວສົດກໍຕາມ ບໍ່ຈັບຕ້ອງຫຍ້າຂຽວສົດກໍຕາມ ກໍເປັນຜູ້ສະອາດຢູ່ນັ້ນເອງ ແມ່ນຈະບູຊາໄຟກໍຕາມ ບໍ່ບູຊາໄຟກໍຕາມ ກໍເປັນຜູ້ສະອາດຢູ່ນັ້ນເອງ ແມ່ນຈະປະຄອງອັນຊະລີນອບນ້ອມດວງອາທິດກໍຕາມ ບໍ່ປະຄອງອັນຊະລີນອບນ້ອມດວງອາທິດກໍຕາມ ກໍເປັນຜູ້ສະອາດຢູ່ນັ້ນເອງ ແມ່ນຈະລົງນ້ຳມື້ລະ ໓ ຄັ້ງກໍຕາມ ບໍ່ລົງນ້ຳມື້ລະ ໓ ຄັ້ງກໍຕາມ ກໍເປັນຜູ້ສະອາດຢູ່ນັ້ນເອງ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນກຸສົນກຳມະບົດ ໑໐ ປະການນີ້ເປັນທຳສະອາດ ແລະເປັນເຫດກໍ່ໃຫ້ເກີດຄວາມສະອາດ

ຈຸນທະ ຍ້ອນເຫດທີ່ປະກອບດ້ວຍກຸສົນກຳມະບົດ ໑໐ ປະການນີ້ ຈຶ່ງຜາກົດມີທັງເທວະດາແລະມະນຸດ ຫຼືສຸກຄະຕິແບບໃດແບບໜຶ່ງແມ່ນອື່ນ”

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແບບນັ້ນແລ້ວ ນາຍຈຸນທະກຳມາຣະບຸດໄດ້ຂາບທູນພຣະຜູ້ມີ ພຣະພາກເຈົ້າດັ່ງນີ້ວ່າ “ຂ້າແດ່ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂ້າແດ່ພຣະອົງຜູ້ຈະເລີນ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ”

**ຈຸນທະສູດທີ ໑໐ ຈົບ**

## ໑໑. ຊານຸດໂສນິສູດ

## ວ່າດ້ວຍຊານຸດໂສນີພາມທູນຖາມເລື້ອງທານ

[໑໗໗] ຄັ້ງນັ້ນ ພາມຊື່ວ່າຊານຸດໂສນີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ໃນບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າວ່າ

"ທ່ານພຣະໂຄດົມ ພວກຂ້າພະເຈົ້າຊື່ວ່າເປັນພາມ ຍ່ອມໃຫ້ທານ ເຊື່ອວ່າທານນີ້ຕ້ອງສຳເລັດແກ່ຍາດສາໂລຫິດ໑ຜູ້ລ່ວງລັບໄປແລ້ວ ຂໍຍາດສາໂລຫິດຜູ້ລ່ວງລັບໄປແລ້ວ ຈົ່ງບໍຣິໂພກທານນີ້ ທ່ານພຣະໂຄດົມ ທານນັ້ນຍ່ອມສຳເລັດແກ່ຍາດສາໂລຫິດຜູ້ລ່ວງລັບໄປແລ້ວແດ່ ຫຼືຍາດສາໂລຫິດຜູ້ລ່ວງລັບໄປແລ້ວເຫຼົ່ານັ້ນຈະໄດ້ບໍຣິໂພກທານນັ້ນແດ່ບໍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ທານນັ້ນ ຍ່ອມສຳເລັດໃນຖານະທີ່ນັ້ນ ບໍ່ສຳເລັດໃນອັດຖານະ"໔

## ເລື້ອງຖານະແລະອັດຖານະ

ຊານຸດໂສນີພາມທູນຖາມວ່າ "ທ່ານພຣະໂຄດົມ ຖານະເປັນແນວໃດ? ອັດຖານະ ເປັນແນວໃດ?"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຍາກໄດ້ຂອງເຂົາ ມີຈິດພະຍາບາດ ເປັນມິດສາທິດຖິ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນນະຮົກ ລ້ຽງອັດຕະພາບໃນນະຮົກນັ້ນ ດຳລົງຢູ່ໃນນະຮົກນັ້ນດ້ວຍອາຫານຂອງສັດນະຮົກ໖

ພາມ ພູມທີ່ທານບໍ່ສຳເລັດແກ່ສັດຜູ້ດຳລົງຢູ່ ນີ້ແລ ເປັນອັດຖານະ

ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າສັດ ຯລຯ ເປັນມິດສາທິດຖິ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນກຳເນີດສັດເດຍຣັດສານ ລ້ຽງອັດຕະພາບໃນກຳເນີດສັດເດຍຣັດສານນັ້ນ ດຳລົງຢູ່ໃນກຳເນີດສັດເດຍຣັດສານນັ້ນ ດ້ວຍອາຫານຂອງເຫຼົ່າສັດຜູ້ເກີດໃນກຳເນີດສັດເດຍຣັດສານ໑

ພາມ ພູມທີ່ທານບໍ່ສຳເລັດແກ່ສັດຜູ້ດຳລົງຢູ່ ນີ້ແລ ເປັນອັດຖານະ

ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ການລັກຊັບ ການປະພຶດຜິດໃນກາມ ການເວົ້າຕົວະ ການເວົ້າສັບສໍ່ ການເວົ້າຄຳຫຍາບ ແລະການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຍາກໄດ້ຂອງເຂົາ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຫຼັງຈາກຕາຍແລ້ວ ເຂົາຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບພວກມະນຸດ ລ້ຽງອັດຕະພາບໃນມະນຸດສາໂລກນັ້ນ ດຳລົງຢູ່ໃນມະນຸດສາໂລກນັ້ນດ້ວຍອາຫານຂອງພວກມະນຸດ໒

ພາມ ພູມທີ່ທານບໍ່ສຳເລັດແກ່ສັດຜູ້ດຳລົງຢູ່ ນີ້ແລ ເປັນອັດຖານະ

ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ເປັນສຳມາທິດຖິ ຫຼັງຈາກຕາຍແລ້ວ ເຂົາຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທວະດາ ລ້ຽງອັດຕະພາບໃນເທວະ

ໂລກນັ້ນ ດຳລົງຢູ່ໃນເທວະໂລກນັ້ນດ້ວຍອາຫານຂອງໝູ່ເທວະດາ

ພາມ ພູມທີ່ທານບໍ່ສຳເລັດແກ່ສັດຜູ້ດຳລົງຢູ່ ນີ້ແລ ເປັນອັດຖານະ

ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າສັດ ຯລຯ ເປັນມິດສາທິດຖິ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນພູມແຫ່ງເຜດ ລ້ຽງອັດຕະພາບຢູ່ໃນພູມແຫ່ງເຜດນັ້ນ ດຳລົງຢູ່ໃນພູມແຫ່ງເຜດນັ້ນດ້ວຍອາຫານຂອງເຫຼົ່າສັດຜູ້ເກີດໃນພູມແຫ່ງເຜດ ຫຼື ລ້ຽງອັດຕະພາບຢູ່ໃນພູມແຫ່ງເຜດນັ້ນ ດຳລົງຢູ່ໃນພູມແຫ່ງເຜດນັ້ນ ດ້ວຍປັດຕິທານະໄນກຸສົນ“ຈາກມະນຸດສາໂລກນີ້ທີ່ມິດອຳມາດ ຫຼື ຍາດສາໂລຫິດຂອງຕົນອຸທິດໃຫ້

ພາມ ພູມທີ່ທານສຳເລັດແກ່ສັດຜູ້ດຳລົງຢູ່ ນີ້ແລ ເປັນຖານະ”

“ທ່ານພຣະໂຄດົມ ກໍຖ້າຍາດສາໂລຫິດຜູ້ລ່ວງລັບໄປແລ້ວນັ້ນຈະບໍ່ເຂົ້າເຖິງຖານະນັ້ນ ໃຜນໍຈະບໍຣິໂພກທານນັ້ນ”

“ພາມ ຍາດສາໂລຫິດຜູ້ລ່ວງລັບໄປແລ້ວເຫຼົ່າອື່ນຂອງຕົນ ຜູ້ເຂົ້າເຖິງຖານະນັ້ນມີຢູ່ ຍາດສາໂລຫິດເຫຼົ່ານັ້ນ ຍ່ອມບໍຣິໂພກທານນັ້ນ”

“ທ່ານພຣະໂຄດົມ ກໍຖ້າຍາດສາໂລຫິດຜູ້ລ່ວງລັບໄປແລ້ວນັ້ນ ແລະຍາດສາໂລຫິດຜູ້ລ່ວງລັບໄປແລ້ວແມ່ນເຫຼົ່າອື່ນຂອງຕົນບໍ່ເຂົ້າເຖິງຖານະນັ້ນ ໃຜນໍ ຈະບໍຣິໂພກທານນັ້ນ”

“ພາມ ເປັນໄປບໍ່ໄດ້ເລີຍທີ່ຈະວ່າງຈາກຍາດສາໂລຫິດຜູ້ລ່ວງລັບໄປແລ້ວໂດຍການດົນນານເຖິງແນວໃດ ທາຍົກກໍເປັນຜູ້ບໍ່ຂາດຜົນ”

“ທ່ານພຣະໂຄດົມ ຍ່ອມຕັດຂໍ້ກຳນົດແມ່ນໃນອັດຖານະບໍ?”

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ “ພາມ ເຮົາກ່າວຂໍ້ກຳນົດແມ່ນໃນອັດຖານະ ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຍາກໄດ້ຂອງເຂົາ ມີຈິດພະຍາບາດ ເປັນມິດສາທິດຖິ ບຸກຄົນນັ້ນໃຫ້ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ແກ່ສະມະນະຫຼືພາມ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນກຳເນີດແຫ່ງ ຊ້າງທັງຫຼາຍ ໄດ້ອາຫານ ນ້ຳ ດອກໄມ້ ແລະເຄື່ອງປະດັບຕ່າງ ໆ ໃນກຳເນີດແຫ່ງຊ້າງນັ້ນ

ຍ້ອນກຳທີ່ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຍາກໄດ້ຂອງເຂົາ ມີຈິດພະຍາບາດ ເປັນມິດສາທິດຖິ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນກຳເນີດແຫ່ງຊ້າງທັງຫຼາຍ ແລະ ຍ້ອນກຳທີ່

ບຸກຄົນນັ້ນໃຫ້ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ແກ່ສະມະນະຫຼືພາມ ເຂົາຈຶ່ງໄດ້ອາຫານ ນ້ຳ ດອກໄມ້ ແລະ ເຄື່ອງປະດັບຕ່າງ ໆ ໃນກຳເນີດແຫ່ງຊ້າງນັ້ນ

ພາມ ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຢາກໄດ້ຂອງເຂົາ ມີຈິດພະຍາບາດ ເປັນມິດສາທິດຖິ ບຸກຄົນນັ້ນໃຫ້ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ແກ່ສະມະນະ ຫຼື ພາມ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນກຳເນີດແຫ່ງມ້າ ຯລຯ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນກຳເນີດແຫ່ງງົວ ຯລຯ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນກຳເນີດແຫ່ງໝາ ຯລຯ ໄດ້ອາຫານ ນ້ຳ ດອກໄມ້ ແລະເຄື່ອງປະດັບຕ່າງ ໆ ໃນກຳເນີດແຫ່ງໝານັ້ນ

ຍ້ອນກຳທີ່ບຸກຄົນໃນໂລກນີ້ ເປັນຜູ້ຂ້າສັດ ລັກຊັບ ປະພຶດຜິດໃນກາມ ເວົ້າຕົວະ ເວົ້າສັບສໍ່ ເວົ້າຄຳຫຍາບ ເວົ້າບໍ່ມີສາຣະ ເພ່ງເລັງຢາກໄດ້ຂອງເຂົາ ມີຈິດພະຍາບາດ ເປັນມິດສາທິດຖິ ຫຼັງຈາກຕາຍແລ້ວ ເຂົາຍ່ອມໄປເກີດໃນກຳເນີດແຫ່ງໝາ ແລະຍ້ອນກຳທີ່ບຸກຄົນນັ້ນເປັນຜູ້ໃຫ້ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ແກ່ສະມະນະຫຼືພາມ ເຂົາຈຶ່ງໄດ້ອາຫານ ນ້ຳ ດອກໄມ້ ແລະເຄື່ອງ ປະດັບຕ່າງ ໆ ໃນກຳເນີດແຫ່ງໝານັ້ນ

ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ຂອງເຂົາ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ບຸກຄົນນັ້ນໃຫ້ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ແກ່ສະມະນະຫຼືພາມ ຫຼັງຈາກຕາຍແລ້ວ ເຂົາຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບໝູ່ມະນຸດ ແລະໄດ້ກາມມະຄຸນ ໕ ທີ່ເປັນຂອງມະນຸດ

ຍ້ອນກຳທີ່ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ເວັ້ນຂາດຈາກການລັກຊັບ ເວັ້ນຂາດຈາກການປະພຶດຜິດໃນກາມ ເວັ້ນຂາດຈາກການເວົ້າຕົວະ ເວັ້ນຂາດຈາກການເວົ້າສັບສໍ່ ເວັ້ນຂາດຈາກການເວົ້າຄຳຫຍາບ ເວັ້ນຂາດຈາກການເວົ້າບໍ່ມີສາຣະ ບໍ່ເພ່ງເລັງຢາກໄດ້ຂອງເຂົາ ມີຈິດບໍ່ພະຍາບາດ ເປັນສຳມາທິດຖິ ຫຼັງຈາກຕາຍແລ້ວ ເຂົາຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບໝູ່ມະນຸດ ແລະຍ້ອນກຳທີ່ບຸກຄົນນັ້ນໃຫ້ເຂົ້າ ນ້ຳ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ແກ່ສະມະນະຫຼືພາມ ເຂົາຈຶ່ງເປັນຜູ້ໄດ້ກາມມະຄຸນ ໕ ທີ່ເປັນຂອງມະນຸດ

ອັນໜຶ່ງ ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ເປັນສໍາມາທິດຖິ ບຸກຄົນນັ້ນໃຫ້ເຂົ້າ ນໍ້າ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ແກ່ສະມະນະຫຼືພາມ ຫຼັງຈາກຕາຍແລ້ວ ເຂົາຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທວະດາ ແລະໄດ້ກາມມະຄຸນ ໕ ອັນເປັນທິບໃນເທວະໂລກນັ້ນ

ຍ້ອນກໍາທີ່ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ເປັນ ສໍາມາທິດຖິ ຫຼັງຈາກຕາຍແລ້ວ ເຂົາຍ່ອມເຂົ້າເຖິງຄວາມເປັນຜູ້ຢູ່ຮ່ວມກັບເທວະດາ ແລະຍ້ອນກໍາທີ່ບຸກຄົນນັ້ນໃຫ້ເຂົ້າ ນໍ້າ ຜ້າ ຍານ ດອກໄມ້ ຂອງຫອມ ເຄື່ອງລູບທາ ບ່ອນນອນ ບ່ອນພັກ ແລະເຄື່ອງໄຕ້ແກ່ສະມະນະຫຼືພາມ ເຂົາຈຶ່ງໄດ້ກາມມະຄຸນ ໕ ອັນເປັນທິບໃນເທວະໂລກນັ້ນ ພາມເຖິງແນວໃດ ທາຍົກກໍເປັນຜູ້ບໍ່ຂາດຜົນ”

“ທ່ານພຣະໂຄດົມ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ຂໍ້ທີ່ທາຍົກເປັນຜູ້ບໍ່ຂາດຜົນນີ້ ຄວນທີ່ຈະໃຫ້ທານ ຄວນທີ່ຈະສັດທາໂດຍແທ້”

“ພາມ ຂໍ້ນີ້ເປັນແນວນີ້ ຂໍ້ນີ້ເປັນແນວນີ້ ເຖິງແນວໃດ ທາຍົກກໍເປັນຜູ້ບໍ່ຂາດຜົນ”

“ທ່ານພຣະໂຄດົມ ພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂໍທ່ານພຣະໂຄດົມ ຈົ່ງຊົງຈໍາຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ”

**ຊານຸດໂສນີສູດທີ ໑໑ ຈົບ**

**ຊານຸດໂສນີວັກທີ ໘ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ພາມມະນະປັດໂຈໂຣຫະນີສູດ
໒. ອະຣິຍະປັດໂຈໂຣຫະນີສູດ
໓. ສະຄາຣະວະສູດ
໔. ໂອຣິມະສູດ
໕. ປະຖົມອະທໍາມະສູດ
໖. ທຸຕິຍະອະທໍາມະສູດ
໗. ຕະຕິຍະອະທໍາມະສູດ
໘. ກໍາມະນິທານະສູດ
໙. ປະຣິກກະມະນະສູດ
໑໐. ຈຸນທະສູດ
໑໑. ຊານຸດໂສນີສູດ

# ໓. ສາທຸວັກ
## ວ່າດ້ວຍທຳທີ່ດີ ແລະທຳທີ່ບໍ່ດີ

## ໑. ສາທຸສູດ
## ວ່າດ້ວຍທຳທີ່ດີ ແລະທຳທີ່ບໍ່ດີ

[໑໗໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ດີແລະທຳທີ່ບໍ່ດີແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ທຳທີ່ບໍ່ດີ ອັນໃດແດ່ ຄື

໑. ປານາຕິບາດ (ການຂ້າສັດ)
໒. ອະທິນນາທານ (ການລັກຊັບ)
໓. ກາເມສຸມິດສາຈານ (ການປະພຶດຜິດໃນກາມ)
໔. ມຸສາວາທະ (ການເວົ້າຕົວະ)
໕. ປິສຸນາວາຈາ (ການເວົ້າສັບສໍ່)
໖. ຜະຣຸສະວາຈາ (ການເວົ້າຄຳຫຍາບ)
໗. ສຳຜັບປະລາປະ (ການເວົ້າບໍ່ມີສາຣະ)
໘. ອະພິດຊາ (ຄວາມເພັ່ງເລັງຢາກໄດ້ຂອງເຂົາ)
໙. ພະຍາບາດ (ຄວາມຄິດຮ້າຍ)
໑໐. ມິດສາທິດຖິ (ເຫັນຜິດ)

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ດີ
ທຳທີ່ດີ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກ ປານາຕິບາດ
໒. ເຈຕະນາງົດເວັ້ນຈາກ ອະທິນນາທານ
໓. ເຈຕະນາງົດເວັ້ນຈາກ ກາເມສຸມິດສາຈານ
໔. ເຈຕະນາງົດເວັ້ນຈາກ ມຸສາວາທະ
໕. ເຈຕະນາງົດເວັ້ນຈາກ ປິສຸນາວາຈາ
໖. ເຈຕະນາງົດເວັ້ນຈາກ ຜະຣຸສະວາຈາ
໗. ເຈຕະນາງົດເວັ້ນຈາກ ສຳຜັບປະລາປະ

໗. ອະນະພິດຊາ (ຄວາມບໍ່ເພ່ງເລັງຍາກໄດ້ຂອງເຂົາ)
໘. ອະພະຍາບາດ (ຄວາມບໍ່ຄິດຮ້າຍ)
໑໐. ສຳມາທິດຖິ (ເຫັນຖືກ)

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ດີ

**ສາທຸສູດທີ 1 ຈົບ**

## ໔. ອະຣິຍະທຳມະສູດ

### ວ່າດ້ວຍອະຣິຍະທຳ ແລະອະນະຣິຍະທຳ

[໑໗໙] ພິກຂຸທັງຫຼາຍ ເຮົາຈັກສະແດງອະຣິຍະທຳ ແລະອະນະຣິຍະທຳແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີ ພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ອະນະຣິຍະທຳ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ອະນະຣິຍະທຳ
ອະຣິຍະທຳ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ອະຣິຍະທຳ

**ອະຣິຍະທຳມະສູດທີ ໔ ຈົບ**

## ໙. ກຸສະລະສູດ

### ວ່າດ້ວຍກຸສົນທຳ ແລະອະກຸສົນທຳ

[໑໘໐] ພິກຂຸທັງຫຼາຍ ເຮົາຈັກສະແດງກຸສົນທຳແລະອະກຸສົນທຳແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ອະກຸສົນທຳ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ອະກຸສົນທຳ
ກຸສົນທຳ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ກຸສົນທຳ

**ກຸສະລະສູດທີ ໓ ຈົບ**

## ໔. ອັດຖະສູດ
## ວ່າດ້ວຍທຳທີ່ເປັນປະໂຫຍດ ແລະທີ່ບໍ່ເປັນປະໂຫຍດ

[໑໗໑] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເປັນປະໂຫຍດແລະທຳທີ່ບໍ່ເປັນປະໂຫຍດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ທຳທີ່ບໍ່ເປັນປະໂຫຍດ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ເປັນປະໂຫຍດ
ທຳທີ່ເປັນປະໂຫຍດ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ເປັນປະໂຫຍດ

**ອັດຖະສູດທີ ໔ ຈົບ**

## ໕. ທຳມະສູດ
## ວ່າດ້ວຍທຳ ແລະອະທຳ

[໑໗໔] ພິກຂຸທັງຫຼາຍ ເຮົາຈັກສະແດງທຳແລະອະທຳແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງ

ຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ອະທຳ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ອະທຳ

ທຳ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳ

**ທຳມະສູດທີ ໕ ຈົບ**

## ໖. ສາສະວະສູດ

## ວ່າດ້ວຍທຳທີ່ມີອາສະວະ ແລະທີ່ບໍ່ມີອາສະວະ

[໑໗໖] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ມີອາສະວະແລະທຳທີ່ບໍ່ມີອາສະວະແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ທຳທີ່ມີອາສະວະ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ມີອາສະວະ

ທຳທີ່ບໍ່ມີອາສະວະ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ມີອາສະວະ

**ສາສະວະສູດທີ ໖ ຈົບ**

## ໗. ວັດຊະສູດ

### ວ່າດ້ວຍທຳທີ່ມີໂທດ ແລະທີ່ບໍ່ມີໂທດ

[໑໗໔] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ມີໂທດແລະທຳທີ່ບໍ່ມີໂທດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງ ພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ທຳທີ່ມີໂທດ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ມີໂທດ

ທຳທີ່ບໍ່ມີໂທດ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ມີໂທດ

**ວັດຊະສູດທີ ໗ ຈົບ**

## ໘. ຕະປະນີຍະສູດ

### ວ່າດ້ວຍທຳທີ່ເປັນເຫດ ແລະບໍ່ເປັນເຫດໃຫ້ເດືອດຮ້ອນ

[໑໗໕] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເປັນເຫດໃຫ້ເດືອດຮ້ອນແລະທຳທີ່ບໍ່ເປັນເຫດໃຫ້ເດືອດຮ້ອນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ທຳທີ່ເປັນເຫດໃຫ້ເດືອດຮ້ອນ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ເປັນເຫດໃຫ້ເດືອດຮ້ອນ

ທຳທີ່ບໍ່ເປັນເຫດໃຫ້ເດືອດຮ້ອນ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ເປັນເຫດໃຫ້ເດືອດຮ້ອນ

**ຕະປະນີຍະສູດທີ ໘ ຈົບ**

## ໙. ອາຈະຍະຄາມີສູດ

## ວ່າດ້ວຍທຳທີ່ເປັນເຫດໃຫ້ເຖິງຈຸຕິ ປະຕິສົນທິ ແລະນິບພານ

[໑໗໙] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເປັນເຫດໃຫ້ເຖິງຈຸຕິ ແລະປະຕິສົນທິ ແລະທຳທີ່ເປັນເຫດໃຫ້ເຖິງນິບພານແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ທຳທີ່ເປັນເຫດໃຫ້ເຖິງຈຸຕິ ແລະປະຕິສົນທິ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ເປັນເຫດໃຫ້ເຖິງຈຸຕິແລະປະຕິສົນທິ

ທຳທີ່ເປັນເຫດໃຫ້ເຖິງນິບພານ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ເປັນເຫດໃຫ້ເຖິງນິບພານ

**ອາຈະຍະຄາມີສູດທີ ໙ ຈົບ**

## ໑໐. ທຸກຂຸທະຣະຍະສູດ

## ວ່າດ້ວຍທຳທີ່ມີທຸກ ແລະທີ່ມີສຸກເປັນກຳໄລ

[໑໗໑] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ມີທຸກເປັນກຳໄລແລະທຳທີ່ມີສຸກເປັນກຳໄລແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ທຳທີ່ມີທຸກເປັນກຳໄລ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ມີທຸກເປັນກຳໄລ

ທຳທີ່ສຸກເປັນກຳໄລ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ມີສຸກເປັນກຳໄລ

**ທຸກຂຸທະຣະຍະສູດທີ ໑໐ ຈົບ**

## ໑໑. ວິປາກະສູດ

### ວ່າດ້ວຍທຳທີ່ມີທຸກ ແລະທີ່ມີສຸກເປັນວິບາກ

[໑໗໗] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ມີທຸກເປັນວິບາກແລະທຳທີ່ມີສຸກເປັນວິບາກ ແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ທຳທີ່ມີທຸກເປັນວິບາກ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ມີທຸກເປັນວິບາກ

ທຳທີ່ສຸກເປັນວິບາກ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ມີສຸກເປັນວິບາກ

**ວິປາກະສູດທີ ໑໑ ຈົບ**

**ສາທຸວັກທີ ໓ ຈົບ**

# ລວມພຣະສູດທີ່ມີໃນວັກນີ້ ຄື

໑. ສາທຸສູດ
໒. ກຸສະລະສູດ
໓. ທຳມະສູດ
໗. ວັດຊະສູດ
໙. ອາຈະຍະຄາມີສູດ
໑໑. ວິປາກະສູດ

໔. ອະຣິຍະທຳມະສູດ
໕. ອັດຖະສູດ
໖. ສາສະວະສູດ
໘. ຕະປະນີຍະສູດ
໑໐. ທຸກຂຸທະຣະຍະສູດ

# ໔. ອະຣິຍະມັກຄະວັກ

## ໝວດວ່າດ້ວຍທຳທີ່ເປັນອະຣິຍະມັກ

## ໑. ອະຣິຍະມັກຄະສູດ

### ວ່າດ້ວຍທຳທີ່ເປັນອະຣິຍະມັກ ແລະທີ່ບໍ່ແມ່ນອະຣິຍະມັກ

[໑໗໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເປັນອະຣິຍະມັກແລະທຳທີ່ບໍ່ແມ່ນອະຣິຍະມັກແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ[១]

ທຳທີ່ບໍ່ແມ່ນອະຣິຍະມັກ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ແມ່ນອະຣິຍະມັກ

ທຳທີ່ເປັນອະຣິຍະມັກ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ເປັນອະຣິຍະມັກ

**ອະຣິຍະມັກຄະສູດທີ ໑ ຈົບ**

## ໒. ກັນຫະມັກຄະສູດ

### ວ່າດ້ວຍທຳທີ່ເປັນຝ່າຍດຳ ແລະທີ່ເປັນຝ່າຍຂາວ

[໑໘໐] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ເປັນຝ່າຍດຳແລະທຳທີ່ເປັນຝ່າຍຂາວແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ

ທຳທີ່ເປັນຝ່າຍດຳ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ເປັນຝ່າຍດຳ

ທຳທີ່ເປັນຝ່າຍຂາວ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ເປັນຝ່າຍຂາວ

**ກັນຫະມັກຄະສູດທີ ໔ ຈົບ**

# ໓. ສັດທຳມະສູດ

## ວ່າດ້ວຍສັດທຳ ແລະອະສັດທຳ

[໑໘໑] ພິກຂຸທັງຫຼາຍ ເຮົາຈັກສະແດງສັດທຳ ແລະອະສັດທຳແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ

ອະສັດທຳ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ອະສັດທຳ

ສັດທຳ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ສັດທຳ

**ສັທທຳມະສູດທີ ໓ ຈົບ**

# ໔. ສັບປຸຣິສະທຳມະສູດ

## ວ່າດ້ວຍທຳຂອງສັດຕະບຸຣຸດ ແລະທຳຂອງອະສັດຕະບຸຣຸດ

[໑໘໔] ພິກຂຸທັງຫຼາຍ ເຮົາຈັກສະແດງທຳຂອງສັດຕະບຸຣຸດ ແລະທຳຂອງອະສັດຕະບຸຣຸດແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ

ທຳຂອງອະສັດຕະບຸຣຸດ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳຂອງອະສັດຕະບຸຣຸດ
ທຳຂອງສັດຕະບຸຣຸດ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳຂອງສັດຕະບຸຣຸດ

**ສັບປຸຣິສະທຳມະສູດທີ ໔ ຈົບ**

## ໕. ອຸບປາເທຕັບພະທຳມະສູດ

## ວ່າດ້ວຍທຳທີ່ຄວນໃຫ້ເກີດຂຶ້ນ ແລະທີ່ບໍ່ຄວນໃຫ້ເກີດຂຶ້ນ

[໑໙໓] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ຄວນໃຫ້ເກີດຂຶ້ນ ແລະທຳທີ່ບໍ່ຄວນໃຫ້ເກີດຂຶ້ນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ

ທຳທີ່ບໍ່ຄວນໃຫ້ເກີດຂຶ້ນ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ຄວນໃຫ້ເກີດຂຶ້ນ
ທຳທີ່ຄວນໃຫ້ເກີດຂຶ້ນ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ຄວນໃຫ້ເກີດຂຶ້ນ

**ອຸບປາເທຕັບພະທຳມະສູດທີ ໕ ຈົບ**

## ໖. ອາເສວິຕັບພະທຳມະສູດ

## ວ່າດ້ວຍທຳທີ່ຄວນເສບ ແລະທີ່ບໍ່ຄວນເສບ[໑]

[໑໙໔] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ຄວນເສບ ແລະທຳທີ່ບໍ່ຄວນເສບແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ

ທຳທີ່ບໍ່ຄວນເສບ ອັນໃດແນ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ຄວນເສບ
ທຳທີ່ຄວນເສບ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ຄວນເສບ

**ອາເສວິຕັບພະທຳມະສູດທີ ໖ ຈົບ**

## ໗. ພາເວຕັບພະທຳມະສູດ
## ວ່າດ້ວຍທຳທີ່ຄວນຈະເລີນ ແລະທີ່ບໍ່ຄວນຈະເລີນ

[໑໙໕] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ຄວນຈະເລີນແລະທຳທີ່ບໍ່ຄວນຈະເລີນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ
ທຳທີ່ບໍ່ຄວນຈະເລີນ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ຄວນຈະເລີນ
ທຳທີ່ຄວນຈະເລີນ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ຄວນຈະເລີນ

**ພາເວຕັບພະທຳມະສູດທີ ໗ ຈົບ**

## ໘. ພະຫຸລີກາຕັບພະສູດ

## ວ່າດ້ວຍທຳທີ່ຄວນເຮັດໃຫ້ຫຼາຍ ແລະທີ່ບໍ່ຄວນເຮັດໃຫ້ຫຼາຍ

[໑໙໖] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ຄວນເຮັດໃຫ້ຫຼາຍ ແລະທຳທີ່ບໍ່ຄວນເຮັດໃຫ້ຫຼາຍແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ

ທຳທີ່ບໍ່ຄວນເຮັດໃຫ້ຫຼາຍ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ຄວນເຮັດໃຫ້ຫຼາຍ
ທຳທີ່ຄວນເຮັດໃຫ້ຫຼາຍ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ຄວນເຮັດໃຫ້ຫຼາຍ

**ພະຫຸລີກາຕັບພະສູດທີ ໘ ຈົບ**

## ໙. ອະນຸດສະຣິຕັບພະສູດ
## ວ່າດ້ວຍທຳທີ່ຄວນຣະນຶກ ແລະທີ່ບໍ່ຄວນຣະນຶກ

[໑໙໗] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ຄວນຣະນຶກ ແລະທຳທີ່ບໍ່ຄວນຣະນຶກແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ

ທຳທີ່ບໍ່ຄວນຣະນຶກ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ຄວນຣະນຶກ
ທຳທີ່ຄວນຣະນຶກ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ຄວນຣະນຶກ

**ອະນຸດສະຣິຕັບພະສູດທີ ໙ ຈົບ**

## ໑໐. ສັດສິກາຕັບພະສູດ
## ວ່າດ້ວຍທຳທີ່ຄວນເຮັດໃຫ້ແຈ້ງ ແລະທີ່ບໍ່ຄວນເຮັດໃຫ້ແຈ້ງ

[໑໙໘] ພິກຂຸທັງຫຼາຍ ເຮົາຈັກສະແດງທຳທີ່ຄວນເຮັດໃຫ້ແຈ້ງແລະທຳທີ່ບໍ່ຄວນເຮັດໃຫ້ແຈ້ງແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຯລຯ

ທຳທີ່ບໍ່ຄວນເຮັດໃຫ້ແຈ້ງ ອັນໃດແດ່ ຄື

໑. ປານາຕິບາດ ຯລຯ ໑໐. ມິດສາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ບໍ່ຄວນເຮັດໃຫ້ແຈ້ງ

ທຳທີ່ຄວນເຮັດໃຫ້ແຈ້ງ ອັນໃດແດ່ ຄື

໑. ເຈຕະນາງົດເວັ້ນຈາກປານາຕິບາດ ຯລຯ ໑໐. ສຳມາທິດຖິ

ພິກຂຸທັງຫຼາຍ ນີ້ຮຽກວ່າ ທຳທີ່ຄວນເຮັດໃຫ້ແຈ້ງ

**ສັດສິກາຕັບພະສູດທີ ໑໐ ຈົບ**

**ອະຣິຍະມັກຄະວັກທີ ໔ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ອະຣິຍະມັກຄະສູດ
໒. ກັນຫະມັກຄະສູດ
໓. ສັທທຳມະສູດ
໔. ສັບປຸຣິສະທຳມະສູດ
໕. ອຸບປາເທຕັບພະທຳມະສູດ
໖. ອາເສວິຕັບພະທຳມະສູດ
໗. ພາເວຕັບພະທຳມະສູດ
໘. ພະຫຸລີກາຕັບພະສູດ
໙. ອະນຸດສະຣິຕັບພະສູດ
໑໐. ສັດສິກາຕັບພະສູດ

# ໕. ອະປະຣະປຸກຄະລະວັກ

## ໝວດວ່າດ້ວຍບຸກຄົນ ອີກໝວດໜຶ່ງ

## ໑. ນເສວິຕັບພາທີສູດ

## ວ່າດ້ວຍບຸກຄົນທີ່ບໍ່ຄວນເສບ[๑]ເປັນຕົ້ນ

[໑໙໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການເປັນຜູ້ບໍ່ຄວນເສບ

ທຳ ໑໐ ປະການ ອັນໃດແດ່ ຄື ບຸກຄົນ

໑. ເປັນຜູ້ຂ້າສັດ
໒. ເປັນຜູ້ລັກຊັບ
໓. ເປັນຜູ້ປະພຶດຜິດໃນກາມ
໔. ເປັນຜູ້ເວົ້າຕົວະ
໕. ເປັນຜູ້ເວົ້າສັບສໍ່
໖. ເປັນຜູ້ເວົ້າຄຳຫຍາບ
໗. ເປັນຜູ້ເວົ້າບໍ່ມີສາຣະ
໘. ເປັນຜູ້ເພ່ງເລັງຍາກໄດ້ຂອງເຂົາ
໙. ເປັນຜູ້ມີຈິດພະຍາບາດ
໑໐. ເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ແລ ເປັນຜູ້ບໍ່ຄວນເສບ

ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ຄວນເສບ

ທຳ ໑໐ ປະການ ອັນໃດແດ່ ຄື ບຸກຄົນ

໑. ເປັນຜູ້ເວັ້ນຂາດຈາກການ ຂ້າສັດ
໒. ເປັນຜູ້ເວັ້ນຂາດຈາກການ ລັກຊັບ
໓. ເປັນຜູ້ເວັ້ນຂາດຈາກການ ປະພຶດຜິດໃນກາມ
໔. ເປັນຜູ້ເວັ້ນຂາດຈາກການ ເວົ້າຕົວະ
໕. ເປັນຜູ້ເວັ້ນຂາດຈາກການ ເວົ້າສັບສໍ່
໖. ເປັນຜູ້ເວັ້ນຂາດຈາກການ ເວົ້າຄຳຫຍາບ
໗. ເປັນຜູ້ເວັ້ນຂາດຈາກການ ເວົ້າບໍ່ມີສາຣະ
໘. ເປັນຜູ້ບໍ່ເພ່ງເລັງຍາກໄດ້ຂອງເຂົາ
໙. ເປັນຜູ້ມີຈິດບໍ່ພະຍາບາດ
໑໐. ເປັນສຳມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ ເປັນຜູ້ຄວນເສບ (໑)

(ໃນບ່ອນນີ້ ຄວນນັບສູດທີ ໔໐໐ ເປັນຕົ້ນໄປຕາມທີ່ ຯລຯ ໄວ້)

[໔໐໐] ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ບໍ່ຄວນຄົບ ຯລຯ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ຄວນຄົບ ຯລຯ

[໔໐໑] ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ບໍ່ຄວນນັ່ງໃກ້ ຯລຯ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ຄວນເຂົ້າໄປນັ່ງໃກ້ ຯລຯ

[໔໐໒] ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ບໍ່ຄວນບູຊາ ຯລຯ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ຄວນບູຊາ ຯລຯ

[໔໐໓] ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ບໍ່ຄວນສັນເສີນ ฯລฯ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ຄວນສັນເສີນ ฯລฯ

[໔໐໔] ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ບໍ່ຄວນເຄົາລົບ ฯລฯ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ຄວນເຄົາລົບ ฯລฯ

[໔໐໕] ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ບໍ່ຄວນຢຳເກງ ฯລฯ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ຄວນຢຳເກງ ฯລฯ

[໔໐໖] ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ບໍ່ຄວນໃຫ້ຍິນດີ ฯລฯ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການ ເປັນຜູ້ຄວນໃຫ້ຍິນດີ ฯລฯ

[໔໐໗] ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມບໍ່ບໍລິສຸດ ฯລฯ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມບໍລິສຸດ ฯລฯ

[໔໐໘] ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມຄອບງຳມານະບໍ່ໄດ້ ฯລฯ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມຄອບງຳມານະໄດ້ ฯລฯ

[໔໐໙] ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມບໍ່ຈະເລີນດ້ວຍປັນຍາ ฯລฯ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມຈະເລີນດ້ວຍປັນຍາ ฯລฯ (໔-໑໑)

[໔໑໐] ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມປະສົບສິ່ງທີ່ບໍ່ແມ່ນບຸນຫຼວງຫຼາຍ ฯລฯ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມປະສົບບຸນຫຼວງຫຼາຍ

ທຳ ໑໐ ປະການ ອັນໃດແດ່ ຄື ບຸກຄົນ

໑. ເປັນຜູ້ເວັ້ນຂາດຈາກການຂ້າສັດ
໒. ເປັນຜູ້ເວັ້ນຂາດຈາກການລັກຊັບ
໓. ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ
໔. ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ
໕. ເປັນຜູ້ເວັ້ນຂາດຈາກການເວົ້າສັບສໍ່
໖. ເປັນຜູ້ເວັ້ນຂາດຈາກການເວົ້າຄຳຫຍາບ
໗. ເປັນຜູ້ເວັ້ນຂາດຈາກການເວົ້າບໍ່ມີສາຣະ
໘. ເປັນຜູ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ
໙. ເປັນຜູ້ມີຈິດບໍ່ພະຍາບາດ

໑໐. ເປັນສຳມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ແລ ຍ່ອມປະສົບບຸນຫຼວງຫຼາຍ (໑໘)

**ນະເສວິຕັບພາທິສູດ ຈົບ**

**ອະປະຣະປຸກຄະລະວັກທີ ໕ ຈົບ**

**ຈະຕຸດຖະປັນນາດ ຈົບບໍລິບູນ**

# ໕. ປັນຈະມະປັນນາດ

## ໑. ກະຣະຊະກາຍວັກ

### ໝວດວ່າດ້ວຍກະຣະຊະກາຍ[1]

## ໑. ປະຖົມນິຣະຍະສັກຄະສູດ

### ວ່າດ້ວຍທຳທີ່ເປັນເຫດໃຫ້ເກີດໃນນະຣົກແລະສະຫວັນ ສູດທີ ໑

[໔໑໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

ທຳ ໑໐ ປະການ ອັນໃດແດ່ ຄື
ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ຂ້າສັດ ຫຍາບຊ້າ ມີມືເປື້ອນເລືອດ ປັກໃຈຢູ່ໃນການຂ້າແລະການທຸບຕີ ບໍ່ມີຄວາມອີດູໃນສັດທັງປວງ

໒. ເປັນຜູ້ລັກຊັບ ຄື ເປັນຜູ້ຖືເອົາຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນເຊິ່ງຢູ່ໃນບ້ານ ຫຼືຢູ່ໃນປ່າທີ່ເຈົ້າຂອງບໍ່ໄດ້ໃຫ້ ດ້ວຍຈິດເປັນເຫດລັກ

໓. ເປັນຜູ້ປະພຶດຜິດໃນກາມ ຄື ເປັນຜູ້ປະພຶດລ່ວງໃນສະຕີທີ່ຢູ່ໃນປົກຄອງຂອງມານດາ ທີ່ຢູ່ໃນປົກຄອງຂອງບິດາ ທີ່ຢູ່ໃນປົກຄອງຂອງບິດາມານດາ ທີ່ຢູ່ໃນປົກຄອງຂອງອ້າຍນ້ອງຊາຍ ທີ່ຢູ່ໃນປົກຄອງຂອງເອື້ອຍນ້ອງສາວ ທີ່ຢູ່ໃນປົກຄອງຂອງຍາດ ທີ່ຢູ່ໃນປົກຄອງຂອງໂຄດ ທີ່ປະພຶດທຳ ມີສາມີ ມີກົດໝາຍຄຸ້ມຄອງ ໂດຍທີ່ສຸດ ແມ່ນສະຕີທີ່ບຸຣຸດໃສ່ດ້ວຍພວງມາໄລ ໝາຍໄວ້

໔. ເປັນຜູ້ເວົ້າຕົວະ ຄື ຢູ່ໃນສະພາ ຢູ່ໃນບໍລິສັດ ຢູ່ທ່າມກາງໝູ່ຍາດ ຢູ່ທ່າມກາງໝູ່ທະຫານ ຫຼືຢູ່ທ່າມກາງຣາດຊະສຳນັກ ຖືກເຂົາອ້າງເປັນພະຍານຊັກຖາມວ່າ "ທ່ານຮູ້ສິ່ງໃດຈົ່ງກ່າວສິ່ງນັ້ນ" ບຸກຄົນນັ້ນບໍ່ຮູ້ກໍກ່າວວ່າ "ຮູ້" ຫຼື ຮູ້ກໍກ່າວວ່າ "ບໍ່ຮູ້" ບໍ່ເຫັນກໍກ່າວວ່າ "ເຫັນ" ຫຼືເຫັນກໍກ່າວວ່າ "ບໍ່ເຫັນ" ກ່າວຕົວະທັງທີ່ຮູ້ຍ້ອນຕົນເປັນເຫດແດ່ ຍ້ອນບຸກຄົນອື່ນເປັນເຫດແດ່ ຍ້ອນເຫດຄືເຫັນແກ່ອາມິດເລັກໜ້ອຍແດ່

໕. ເປັນຜູ້ເວົ້າສັບສໍ່ ຄື ຟັງຄວາມຝ່າຍນີ້ແລ້ວໄປບອກຝ່າຍນັ້ນເພື່ອທຳລາຍຝ່າຍນີ້ ຫຼື ຟັງຄວາມຝ່າຍນັ້ນແລ້ວມາບອກຝ່າຍນີ້ເພື່ອທຳລາຍຝ່າຍນັ້ນ ຍຸຍົງຄົນທີ່ສາມັກຄີກັນ ສົ່ງເສີມຄົນທີ່ແຕກແຍກກັນ ຊົມຊື່ນຍິນດີເພີດເພີນຕໍ່ຜູ້ທີ່ແຕກແຍກກັນ ເວົ້າແຕ່ຄຳເວົ້າທີ່ກໍ່ຄວາມແຕກແຍກກັນ

໖. ເປັນຜູ້ເວົ້າຄຳຫຍາບ ຄື ກ່າວແຕ່ຄຳທີ່ຫຍາບຄາຍ ກ້າແຂງ ເຜັດຮ້ອນຫຍາບຄາຍດຸຮ້າຍແກ່ຜູ້ອື່ນ ກະທົບຜູ້ອື່ນ ໃກ້ຕໍ່ຄວາມໂກດ ບໍ່ເປັນໄປເພື່ອສະມາທິ

໗. ເປັນຜູ້ເວົ້າບໍ່ມີສາຣະ ຄື ເວົ້າບໍ່ຖືກເວລາ ເວົ້າຄຳບໍ່ຈິງ ເວົ້າບໍ່ອີງປະໂຫຍດ ເວົ້າບໍ່ອີງທຳ ເວົ້າບໍ່ອີງວິໄນ ເວົ້າຄຳທີ່ບໍ່ມີຫຼັກຖານ ບໍ່ມີບ່ອນອ້າງອີງ ບໍ່ມີບ່ອນກຳນົດ ບໍ່ປະກອບດ້ວຍປະໂຫຍດ

໘. ເປັນຜູ້ເພ່ງເລັງຢາກໄດ້ຂອງເຂົາ ຄື ເພ່ງເລັງຢາກໄດ້ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນວ່າ “ເຮັດແນວໃດ ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນຈະເພິ່ງເປັນຂອງເຮົາ”

໙. ເປັນຜູ້ມີຈິດພະຍາບາດ ຄື ມີຈິດຄິດຮ້າຍວ່າ “ຂໍສັດເຫຼົ່ານີ້ຈົ່ງຖືກຂ້າ ຈົ່ງຖືກທຳລາຍ ຈົ່ງຂາດສູນ ຈົ່ງພິນາດໄປ ຫຼືຢ່າໄດ້ມີ”

໑໐. ເປັນມິດສາທິດຖິ ມີຄວາມເຫັນວິປະຣິດວ່າ “ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການເຊ່ນສວງບໍ່ມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີແລະຊົ່ວກໍບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ໂອປະປາຕິກະສັດບໍ່ມີ ສະມະນະພາມຜູ້ປະພຶດດີປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວ ສອນຜູ້ອື່ນໃຫ້ຮູ້ແຈ້ງກໍບໍ່ມີໃນໂລກ”

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໑໐ ປະການ ອັນໃດແດ່ ຄື ບຸກຄົນ

໑. ເປັນຜູ້ລະເວັ້ນຂາດຈາກການຂ້າສັດ ວາງທັນດາວຸດ ແລະສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງຫວັງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່

໔. ເປັນຜູ້ລະເວັ້ນຂາດຈາກການລັກຊັບ ຄື ບໍ່ຖືເອົາຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນ ເຊິ່ງຢູ່ໃນເຮືອນຫຼືຢູ່ໃນປ່າທີ່ເຈົ້າຂອງບໍ່ໄດ້ໃຫ້ ດ້ວຍຈິດເປັນເຫດລັກ

໓. ເປັນຜູ້ລະເວັ້ນຂາດຈາກການປະພຶດຜິດໃນກາມ ຄື ບໍ່ເປັນຜູ້ປະພຶດລ່ວງໃນສະຕີທີ່ຢູ່ໃນປົກຄອງຂອງມານດາ ທີ່ຢູ່ໃນປົກຄອງຂອງບິດາ ທີ່ຢູ່ໃນປົກຄອງຂອງບິດາມານດາ ທີ່ຢູ່ໃນປົກຄອງຂອງອ້າຍນ້ອງຊາຍ ທີ່ຢູ່ໃນປົກຄອງຂອງເອື້ອຍນ້ອງສາວ ທີ່ຢູ່ໃນປົກຄອງຂອງຍາດ ທີ່ຢູ່ໃນປົກຄອງຂອງໂຄດ ທີ່ປະພຶດທຳ ມີສາມີ ມີກົດໝາຍຄຸ້ມຄອງ ໂດຍທີ່ສຸດແມ່ນແຕ່ສະຕີທີ່ບຸຣຸດໃສ່ດ້ວຍພວງມາໄລໝາຍໄວ້

໔. ເປັນຜູ້ລະເວັ້ນຂາດຈາກການເວົ້າຕົວະ ຄື ຢູ່ໃນສະພາ ຢູ່ໃນບໍລິສັດ ຢູ່ທ່າມກາງ ໝູ່ຍາດ ຢູ່ທ່າມກາງໝູ່ທະຫານ ຫຼືຢູ່ທ່າມກາງຣາດຊະສຳນັກ ຖືກເຂົາອ້າງເປັນພະຍານຊັກຖາມວ່າ “ທ່ານຮູ້ສິ່ງໃດຈິ່ງກ່າວສິ່ງນັ້ນ” ບຸກຄົນນັ້ນບໍ່ຮູ້ກໍກ່າວວ່າ “ບໍ່ຮູ້” ຫຼື ຮູ້ກໍກ່າວວ່າ “ຮູ້” ບໍ່ເຫັນກໍກ່າວວ່າ “ບໍ່ເຫັນ” ຫຼື ເຫັນກໍກ່າວວ່າ “ເຫັນ” ບໍ່ກ່າວຕົວະທັງທີ່ຮູ້ຍ້ອນຕົນເປັນເຫດແດ່ ຍ້ອນບຸກຄົນອື່ນເປັນເຫດແດ່ ຍ້ອນເຫດຄືເຫັນແກ່ອາມິດເລັກໜ້ອຍແດ່

໕. ເປັນຜູ້ລະເວັ້ນຂາດຈາກການເວົ້າສັບສໍ່ ຄື ຟັງຄວາມຝ່າຍນີ້ແລ້ວບໍ່ໄປບອກຝ່າຍນັ້ນເພື່ອທຳລາຍຝ່າຍນີ້ ຫຼືຟັງຄວາມຝ່າຍນັ້ນແລ້ວ ບໍ່ມາບອກຝ່າຍນີ້ເພື່ອທຳລາຍຝ່າຍນັ້ນ ສະມານຄົນທີ່ແຕກແຍກກັນ ສົ່ງເສີມຄົນທີ່ປອງດອງກັນ ຊົມຊື່ນຍິນດີເພີດເພີນຕໍ່ຜູ້ທີ່ສາມັກຄີກັນ ເວົ້າແຕ່ຄຳເວົ້າທີ່ສ້າງສັນຄວາມສາມັກຄີ

໖. ເປັນຜູ້ລະເວັ້ນຂາດຈາກການເວົ້າຄຳຫຍາບ ຄື ກ່າວແຕ່ຄຳທີ່ບໍ່ມີໂທດ ມ່ວນໜ້າຮັກ ຈັບໃຈ ເປັນຄຳຂອງຊາວເມືອງ ຄົນສ່ວນຫຼາຍຮັກແພງພໍໃຈ

໗. ເປັນຜູ້ລະເວັ້ນຂາດຈາກການເວົ້າບໍ່ມີສາຣະ ຄື ເວົ້າຖືກເວລາ ເວົ້າຄຳຈິງເວົ້າອີງປະໂຫຍດ ເວົ້າອີງທຳ ເວົ້າອີງວິໄນ ເວົ້າຄຳທີ່ມີຫຼັກຖານ ມີບ່ອນອ້າງອີງ ມີບ່ອນກຳນົດ ປະກອບດ້ວຍປະໂຫຍດ

໘. ເປັນຜູ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ ຄື ບໍ່ເພ່ງເລັງຢາກໄດ້ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນວ່າ “ເຮັດແນວໃດ ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນຈະເພິ່ງເປັນຂອງເຮົາ”

໙. ເປັນຜູ້ມີຈິດບໍ່ພະຍາບາດ ຄື ບໍ່ມີຈິດຄິດຮ້າຍວ່າ "ຂໍສັດເຫຼົ່ານີ້ຈົ່ງເປັນຜູ້ບໍ່ມີເວນ ບໍ່ມີ ຈິດພະຍາບາດ ບໍ່ມີທຸກ ມີສຸກ ຮັກສາຕົນເທີ້ນ"

໑໐. ເປັນສໍາມາທິດຖິ ມີຄວາມເຫັນບໍ່ວິປະຣິດວ່າ "ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາ ແລ້ວມີຜົນ ການເຊັ່ນສວງມີຜົນ ຜົນວິບາກແຫ່ງກໍາທີ່ເຮັດດີແລະຊົ່ວມີ ໂລກນີ້ມີ ໂລກໜ້າມີ ມານດາມີຄຸນ ບິດາມີຄຸນ ໂອປະປາຕິກະສັດມີ ສະມະນະພາມຜູ້ປະພຶດດີປະຕິບັດຊອບ ເຮັດໃຫ້ແຈ້ງໂລກນີ້ແລະໂລກໜ້າ ດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງມີຢູ່ໃນໂລກ"

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທໍາ ໑໐ ປະການນີ້ແລ ຍ່ອມດໍາລົງຢູ່ໃນ ສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ປະຖົມນີຣະຍະສັກຄະສູດທີ ໑ ຈົບ**

## ໒. ທຸຕິຍະນີຣະຍະສັກຄະສູດ

## ວ່າດ້ວຍທໍາເປັນເຫດໃຫ້ເກີດໃນນະຣົກແລະສະຫວັນ ສູດທີ ໒

[໒໑໒] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທໍາ ໑໐ ປະການ ຍ່ອມດໍາລົງຢູ່ໃນນະຣົກ ຄືຖືກນໍາໄປຝັງໄວ້

ທໍາ ໑໐ ປະການ ອັນໃດແດ່ ຄື

ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ຂ້າສັດ ຫຍາບຊ້າ ມີມືເປື້ອນເລືອດ ປັກໃຈຢູ່ໃນການຂ້າ ແລະການທຸບຕີ ບໍ່ມີຄວາມອີດູໃນສັດທັງປວງ

໒. ເປັນຜູ້ລັກຊັບ ຯລຯ

໓. ເປັນຜູ້ປະພຶດຜິດໃນກາມ ຯລຯ

໔. ເປັນຜູ້ເວົ້າຕົວະ ຯລຯ

໕. ເປັນຜູ້ເວົ້າສັບສໍ່ ຯລຯ

໖. ເປັນຜູ້ເວົ້າຄໍາຫຍາບ ຯລຯ

໗. ເປັນຜູ້ເວົ້າບໍ່ມີສາຣະ ຯລຯ

໘. ເປັນຜູ້ເພ່ງເລັງຢາກໄດ້ຂອງເຂົາ ຯລຯ

໙. ເປັນຜູ້ມີຈິດພະຍາບາດ ຯລຯ

໑໐. ເປັນມິດສາທິດຖິ ມີຄວາມເຫັນວິປະຣິດວ່າ "ທານທີ່ໃຫ້ແລ້ວບໍ່ມີຜົນ ຯລຯ

ເຮັດໃຫ້ແຈ້ງໂລກນີ້ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງກໍບໍ່ມີໃນໂລກ"

ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້

ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄື ໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໑໐ ປະການ ອັນໃດແດ່ ຄື

ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ລະເວັ້ນຂາດຈາກການຂ້າສັດ ວາງທັນດາວຸດ ແລະສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງຫວັງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່
໒. ເປັນຜູ້ລະເວັ້ນຂາດຈາກການລັກຊັບ ຯລຯ
໓. ເປັນຜູ້ລະເວັ້ນຂາດຈາກການປະພຶດຜິດໃນກາມ ຯລຯ
໔. ເປັນຜູ້ລະເວັ້ນຂາດຈາກການເວົ້າຕົວະ ຯລຯ
໕. ເປັນຜູ້ລະເວັ້ນຂາດຈາກການເວົ້າສັບສໍ່ ຯລຯ
໖. ເປັນຜູ້ລະເວັ້ນຂາດຈາກການເວົ້າຄຳຫຍາບ ຯລຯ
໗. ເປັນຜູ້ລະເວັ້ນຂາດຈາກການເວົ້າບໍ່ມີສາຣະ ຯລຯ
໘. ເປັນຜູ້ບໍ່ເພ່ງເລັງຍາກໄດ້ຂອງເຂົາ ຯລຯ
໙. ເປັນຜູ້ມີຈິດບໍ່ພະຍາບາດ ຯລຯ
໑໐. ເປັນສຳມາທິດຖິ ມີຄວາມເຫັນບໍ່ວິປະຣິດວ່າ "ທານທີ່ໃຫ້ແລ້ວມີຜົນ ຯລຯ ເຮັດໃຫ້ແຈ້ງໂລກນີ້ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງມີຢູ່ ໃນໂລກ"

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄື ໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ທຸຕິຍະນິຣະຍະສັກຄະສູດທີ ໒ ຈົບ**

## ໓. ມາຕຸຄາມະສູດ
## ວ່າດ້ວຍທຳເປັນເຫດໃຫ້ມາຕຸຄາມເກີດໃນນະຮົກແລະສະຫວັນ

[໒໑໓] ພິກຂຸທັງຫຼາຍ ມາຕຸຄາມປະກອບດ້ວຍທຳ ໑໐ ປະການ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້

ທຳ ໑໐ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າສັດ ຯລຯ ໑໐. ເປັນມິດສາທິດຖິ

ພິກຂຸທັງຫຼາຍ ມາຕຸຄາມປະກອບດ້ວຍທຳ ໑໐ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຮົກຄື ຖືກນຳໄປຝັງໄວ້

ມາຕຸຄາມປະກອບດ້ວຍທຳ ໑໐ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໑໐ ປະການ ອັນໃດແດ່ ຄື

໑. ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ໑໐. ເປັນສຳມາທິດຖິ

ພິກຂຸທັງຫຼາຍ ມາຕຸຄາມປະກອບດ້ວຍທຳ ໑໐ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ມາຕຸຄາມະສູດທີ ໓ ຈົບ**

# ໔. ອຸປາຊິກາສູດ

## ວ່າດ້ວຍທຳເປັນເຫດໃຫ້ອຸປາສິກາເກີດໃນນະຮົກແລະສະຫວັນ

[໔໑໔] ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໑໐ ປະການ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້

ທຳ ໑໐ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າສັດ ຯລຯ ໑໐. ເປັນມິດສາທິດຖິ

ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໑໐ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຮົກ ຄືຖືກນຳໄປຝັງໄວ້

ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໑໐ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໑໐ ປະການ ອັນໃດແດ່ ຄື

໑. ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ໑໐. ເປັນສຳມາທິດຖິ

ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໑໐ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

**ອຸປາຊິກາສູດທີ ໔ ຈົບ**

## ໕. ວິສາຣະທະສູດ

## ວ່າດ້ວຍທຳເປັນເຫດໃຫ້ອຸປາສິກາເປັນຜູ້ບໍ່ແກ່ກ້າແລະຜູ້ແກ່ກ້າ

[໔໑໕] ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໑໐ ປະການ ເປັນຜູ້ບໍ່ ແກ່ກ້າຢູ່ຄອງເຮືອນ ທຳ ໑໐ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າສັດ ຯລຯ ໑໐. ເປັນມິດສາທິດຖິ

ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໑໐ ປະການນີ້ແລ ເປັນຜູ້ບໍ່ແກ່ກ້າ ຢູ່ຄອງເຮືອນ

ອຸປາສິກາປະກອບດ້ວຍທຳ ໑໐ ປະການ ເປັນຜູ້ແກ່ກ້າຢູ່ຄອງເຮືອນ

ທຳ ໑໐ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າສັດ ຯລຯ ໑໐. ເປັນມິດສາທິດຖິ

ພິກຂຸທັງຫຼາຍ ອຸປາສິກາປະກອບດ້ວຍທຳ ໑໐ ປະການນີ້ແລ ເປັນຜູ້ແກ່ກ້າຢູ່ຄອງເຮືອນ

**ວິສາຣະທະສູດທີ ໕ ຈົບ**

## ໖. ສັງສັບປະຕິປະຣິຍາຍະສູດ

## ວ່າດ້ວຍເຫດແຫ່ງຄວາມກະເສືອກກະສົນ

[໔໑໖] ພິກຂຸທັງຫຼາຍ ເຮົາຈັກສະແດງທຳບັນລະຍາຍ[໑]ທີ່ສະແດງເຫດແຫ່ງຄວາມ ກະເສືອກກະສົນແກ່ທ່ານທັງຫຼາຍ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ທຳບັນລະຍາຍທີ່ສະແດງເຫດແຫ່ງຄວາມກະເສືອກກະສົນ ເປັນແນວໃດ?

ຄື ສັດທັງຫຼາຍເປັນຜູ້ມີກຳເປັນຂອງຕົນ ເປັນຜູ້ຮັບຜົນຂອງກຳ ມີກຳເປັນກຳເນີດ ມີກຳເປັນເຜົ່າພັນ ມີກຳເປັນບ່ອນເພິ່ງອາໄສ ເຮັດກຳໃດໄວ້ ຈະເປັນກຳດີຫຼືກຳຊົ່ວກໍຕາມ ຍ່ອມເປັນຜູ້ຮັບຜົນຂອງກຳນັ້ນ

໑. ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າສັດ ຫຍາບຊ້າ ມີມືເປື້ອນເລືອດ ປັກໃຈຢູ່ໃນການຂ້າແລະການທຸບຕີ ບໍ່ມີຄວາມອີດູໃນສັດທັງປວງ ບຸກຄົນນັ້ນ ຍ່ອມກະເສືອກກະສົນດ້ວຍກາຍ ວາຈາ ແລະໃຈ ກາຍຍະກຳ ວະຈີກຳ ແລະມະໂນກຳຂອງເຂົາຄົດຄ້ຽວ ຄະຕິຂອງເຂົາກໍຄົດຄ້ຽວ ການອຸບັດຂອງເຂົາກໍຄົດຄ້ຽວ

ສຳລັບຜູ້ມີຄະຕິຄົດຄ້ຽວ ມີອຸບັດຄົດຄ້ຽວ ເຮົາກ່າວວ່າມີຄະຕິແນວ ໑ ໃນ ໒ ແນວ ຄືນະຮົກມີທຸກໂດຍສ່ວນດຽວ ຫຼືກຳເນີດສັດເດຍຣັດສານທີ່ມີປົກກະຕິກະເສືອກກະສົນ

ກຳເນີດສັດເດຍຣັດສານທີ່ມີປົກກະຕິກະເສືອກກະສົນ ເປັນແນວໃດ?

ຄື ງູ ແມງງອດ ຂີ້ເຂັບ ພັງພອນ ແມວ ໜູ ນົກເຄົ້າແມວ ຫຼື ສັດຜູ້ເຂົ້າເຖິງກຳເນີດສັດເດຍຣັດສານເຫຼົ່າໃດເຫຼົ່າໜຶ່ງແມ່ນອື່ນ ໆ ເຫັນມະນຸດແລ້ວ ຍ່ອມກະເສືອກກະສົນ ການອຸບັດຂອງສັດທັງຫຼາຍ ຍ່ອມມີໄດ້ຍ້ອນກຳທີ່ມີແລ້ວແນວນີ້ ຄື ສັດນັ້ນຍ່ອມອຸບັດດ້ວຍກຳທີ່ຕົນເຮັດໄວ້ ຜັດສະອັນເປັນວິບາກທັງຫຼາຍ ຍ່ອມຖືກຕ້ອງສັດນີ້ຜູ້ອຸບັດແລ້ວ

ພິກຂຸທັງຫຼາຍ ເຮົາກ່າວວ່າ ສັດທັງຫຼາຍເປັນຜູ້ຮັບຜົນຂອງກຳແນວນີ້

໒. ບຸກຄົນລາງຄົນໃນໂລກນີ້ເປັນຜູ້ລັກຊັບ ຯລຯ
໓. ເປັນຜູ້ປະພຶດຜິດໃນກາມ ຯລຯ
໔. ເປັນຜູ້ເວົ້າຕົວະ ຯລຯ
໕. ເປັນຜູ້ເວົ້າສັບສໍ່ ຯລຯ
໖. ເປັນຜູ້ເວົ້າຄຳຫຍາບ ຯລຯ
໗. ເປັນຜູ້ເວົ້າບໍ່ມີສາຣະ ຯລຯ
໘. ເປັນຜູ້ເພ່ງເລັງຢາກໄດ້ຂອງເຂົາ ຯລຯ
໙. ເປັນຜູ້ມີຈິດພະຍາບາດ ຯລຯ

໑໐. ເປັນມິດສາທິດຖິ ມີຄວາມເຫັນວິປະຣິດວ່າ "ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການເຊັ່ນສວງບໍ່ມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີແລະຊົ່ວກໍບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ໂອປະປາຕິກະສັດບໍ່ມີ ສະມະນະພາມຜູ້ປະພຶດດີປະຕິບັດຊອບເຮັດ

ໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງກໍບໍ່ມີໃນໂລກ" ບຸກຄົນນັ້ນ ຍ່ອມກະເສືອກກະສົນດ້ວຍກາຍ ວາຈາ ແລະໃຈ ກາຍຍະກຳ ວະຈີກຳ ແລະມະໂນກຳຂອງເຂົາຄົດຄ້ຽວ ຄະຕິຂອງເຂົາກໍຄົດຄ້ຽວ ການອຸບັດຂອງເຂົາກໍຄົດຄ້ຽວ

ສຳລັບບຸກຄົນຜູ້ມີຄະຕິຄົດຄ້ຽວ ມີອຸບັດຄົດຄ້ຽວ ເຮົາກ່າວວ່າມີຄະຕິແນວ ໑ ໃນ ໒ ແນວ ຄື ນະຣົກມີທຸກໂດຍສ່ວນດຽວ ຫຼືກຳເນີດສັດເດຍຣັດສານທີ່ມີປົກກະຕິກະເສືອກ ກະສົນ

ກຳເນີດສັດເດຍຣັດສານທີ່ມີປົກກະຕິກະເສືອກກະສົນ ເປັນແນວໃດ?

ຄື ງູ ແມງງອດ ຂີ້ເຂັບ ພັງພອນ ແມວ ໜູ ນົກເຄົ້າແມວ ຫຼືສັດຜູ້ເຂົ້າເຖິງ ກຳເນີດສັດເດຍຣັດສານເຫຼົ່າໃດເຫຼົ່າໜຶ່ງແມ່ນອື່ນ ໆ ເຫັນມະນຸດແລ້ວ ຍ່ອມກະເສືອກກະສົນ ການອຸບັດຂອງສັດທັງຫຼາຍຍ່ອມມີໄດ້ຍ້ອນກຳທີ່ມີແລ້ວແນວນີ້ ຄື ສັດນັ້ນຍ່ອມອຸບັດດ້ວຍກຳທີ່ຕົນເຮັດໄວ້ ຜັດສະອັນເປັນວິບາກທັງຫຼາຍຍ່ອມຖືກຕ້ອງສັດນີ້ຜູ້ອຸບັດແລ້ວ

ພິກຂຸທັງຫຼາຍ ເຮົາກ່າວວ່າ ສັດທັງຫຼາຍເປັນຜູ້ຮັບຜົນຂອງກຳແນວນີ້

ພິກຂຸທັງຫຼາຍ ສັດທັງຫຼາຍເປັນຜູ້ມີກຳເປັນຂອງຕົນ ເປັນຜູ້ຮັບຜົນຂອງກຳ ມີກຳເປັນກຳເນີດ ມີກຳເປັນເຜົ່າພັນ ມີກຳເປັນບ່ອນເພິ່ງອາໄສ ເຮັດກຳໃດໄວ້ ຈະເປັນກຳດີຫຼືກຳຊົ່ວກໍຕາມ ຍ່ອມເປັນຜູ້ຮັບຜົນຂອງກຳນັ້ນ

໑. ບຸກຄົນລາງຄົນໃນໂລກນີ້ເປັນຜູ້ລະເວັ້ນຂາດຈາກການຂ້າສັດ ວາງທັນດາວຸດແລະສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງຫວັງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່ ບຸກຄົນນັ້ນຍ່ອມບໍ່ກະເສືອກກະສົນດ້ວຍກາຍ ວາຈາ ແລະໃຈ ກາຍຍະກຳ ວະຈີກຳ ແລະມະໂນກຳຂອງເຂົາກົງ ຄະຕິຂອງເຂົາກໍ່ກົງ ການອຸບັດຂອງເຂົາກໍກົງ

ສຳລັບບຸກຄົນຜູ້ມີຄະຕິກົງ ມີອຸບັດກົງ ເຮົາກ່າວວ່າມີຄະຕິແນວ ໑ ໃນ ໒ ແນວ ຄື ເປັນຄົນມີສຸກໂດຍສ່ວນດຽວ ຫຼືເປັນຄົນມີຕະກູນສູງ ເຊັ່ນ ຕະກູນກະສັດມະຫາສານ ຕະກູນພາມມະຫາສານ ຫຼືຕະກູນຄະຫະບໍດີມະຫາສານທີ່ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີເງິນຄຳຫຼາຍ ມີຊັບອັນເປັນອຸປະກອນເຄື່ອງພໍໃຈຫຼາຍ ມີຊັບແລະ ເຂົ້າເປືອກຫຼາຍ ການອຸບັດຂອງສັດທັງຫຼາຍຍ່ອມມີໄດ້ຍ້ອນກຳທີ່ມີແລ້ວແນວນີ້ ຄືສັດນັ້ນຍ່ອມອຸບັດດ້ວຍກຳທີ່ຕົນເຮັດໄວ້ ຜັດສະອັນເປັນວິບາກຍ່ອມຖືກຕ້ອງສັດນີ້ຜູ້ອຸບັດແລ້ວ

ພິກຂຸທັງຫຼາຍ ເຮົາກ່າວວ່າ ສັດທັງຫຼາຍເປັນຜູ້ຮັບຜົນຂອງກຳແນວນີ້

໒. ບຸກຄົນລາງຄົນໃນໂລກນີ້ເປັນຜູ້ລະເວັ້ນຂາດຈາກການລັກຊັບ ຯລຯ

໓. ເປັນຜູ້ລະເວັ້ນຂາດຈາກການປະພຶດຜິດໃນກາມ ຯລຯ
໔. ເປັນຜູ້ລະເວັ້ນຂາດຈາກການເວົ້າຕົວະ ຯລຯ
໕. ເປັນຜູ້ລະເວັ້ນຂາດຈາກການເວົ້າສັບສໍ່ ຯລຯ
໖. ເປັນຜູ້ລະເວັ້ນຂາດຈາກການເວົ້າຄໍາຫຍາບ ຯລຯ
໗. ເປັນຜູ້ລະເວັ້ນຂາດຈາກການເວົ້າບໍ່ມີສາຣະ ຯລຯ
໘. ເປັນຜູ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ ຯລຯ
໙. ເປັນຜູ້ມີຈິດບໍ່ພະຍາບາດ ຯລຯ

໑໐. ເປັນສໍາມາທິດຖິ ມີຄວາມເຫັນບໍ່ວິປະຣິດວ່າ "ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວມີຜົນ ການເຊັ່ນສວງມີຜົນ ຜົນວິບາກແຫ່ງກໍາທີ່ເຮັດດີແລະຊົ່ວມີ ໂລກນີ້ມີ ໂລກໜ້າມີ ມານດາມີຄຸນ ບິດາມີຄຸນ ໂອປະປາຕິກະສັດມີ ສະມະນະພາມຜູ້ປະພຶດດີປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງມີຢູ່ໃນໂລກ" ບຸກຄົນນັ້ນຍ່ອມບໍ່ກະເສືອກກະສົນ ດ້ວຍກາຍ ວາຈາ ແລະໃຈ ກາຍຍະກໍາ ວະຈີກໍາ ແລະມະໂນກໍາຂອງເຂົາກໍ່ງ ຄະຕິຂອງເຂົາກໍ່ກົ່ງ ການອຸ ບັດຂອງເຂົາກໍ່ກົ່ງ

ສໍາລັບບຸກຄົນຜູ້ມີຄະຕິກົ່ງ ມີອຸບັດກົ່ງ ເຮົາກ່າວວ່າມີຄະຕິແນວ ໑ ໃນ ໔ ແນວ ຄື ເປັນຄົນມີສຸກໂດຍສ່ວນດຽວ ຫຼື ເປັນຄົນມີຕະກູນສູງ ເຊັ່ນ ຕະກູນກະສັດມະຫາສານ ຕະກູນພາມມະຫາສານ ຫຼືຕະກູນຄະຫະບໍດີມະຫາສານທີ່ຮັ່ງມີ ມີຊັບຫຼາຍ ມີໂພຄະຫຼາຍ ມີເງິນຄໍາຫຼາຍ ມີຊັບອັນເປັນອຸປະກອນເຄື່ອງພໍໃຈຫຼາຍ ມີຊັບແລະເຂົ້າເປືອກ ຫຼາຍ ການອຸບັດຂອງສັດທັງຫຼາຍຍ່ອມມີໄດ້ຍ້ອນກໍາທີ່ມີແລ້ວແນວນີ້ ຄື ສັດນັ້ນຍ່ອມອຸບັດດ້ວຍກໍາທີ່ຕົນເຮັດໄວ້ ຜັດສະອັນເປັນວິບາກຍ່ອມຖືກຕ້ອງສັດນີ້ຜູ້ອຸບັດແລ້ວ

ພິກຂຸທັງຫຼາຍ ເຮົາກ່າວວ່າ ສັດທັງຫຼາຍເປັນຜູ້ຮັບຜົນຂອງກໍາແນວນີ້

ສັດທັງຫຼາຍເປັນຜູ້ມີກໍາເປັນຂອງຕົນ ເປັນຜູ້ຮັບຜົນຂອງກໍາ ມີກໍາເປັນກໍາເນີດ ມີກໍາເປັນເຜົ່າພັນ ມີກໍາເປັນບ່ອນເພິ່ງອາໄສ ເຮັດກໍາໃດໄວ້ ຈະເປັນກໍາດີຫຼືກໍາຊົ່ວ ກໍຕາມ ຍ່ອມເປັນຜູ້ຮັບຜົນຂອງກໍານັ້ນ

ພິກຂຸທັງຫຼາຍ ນີ້ແລ ເປັນທໍາບັນລະຍາຍທີ່ສະແດງເຫດແຫ່ງຄວາມກະເສືອກກະສົນ

**ສັງສັບປະຕິປະຣິຍາຍສູດທີ ໖ ຈົບ**

## ໗. ປະຖົມສັນເຈຕະນິກະສູດ
## ວ່າດ້ວຍກໍາທີ່ສັດເຈຕະນາສັ່ງສົມ ສູດທີ ໑

[໔໑໗] ພິກຂຸທັງຫຼາຍ ເຮົາຍັງບໍ່ຮູ້ວິບາກກໍາ ຈະບໍ່ກ່າວເຖິງຄວາມສິ້ນສຸດແຫ່ງກໍາທີ່ສັດເຈຕະນາເຮັດຂຶ້ນ ສັ່ງສົມຂຶ້ນ ກໍວິບາກນັ້ນເອງທີ່ສັດເພິ່ງສະເຫວີຍໃນປັດຈຸບັນກໍມີ ໃນອັດຕະພາບຖັດໄປກໍ

ມີ ຫຼືໃນອັດຕະພາບຕໍ່ ໆ ໄປກໍມີ ພິກຂຸທັງຫຼາຍ ເຮົາຍັງບໍ່ຮູ້ວິບາກກໍາ ຈະບໍ່ກ່າວເຖິງການເຮັດບ່ອນສຸດແຫ່ງທຸກຂອງກໍາທີ່ສັດເຈຕະນາເຮັດຂຶ້ນ ສັ່ງສົມຂຶ້ນ ໃນຂໍ້ນັ້ນແລ ວິບັດຕິໂທດແຫ່ງກາຍຍະກໍາທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກໍາໄລ ມີທຸກເປັນວິບາກ ໓ ປະການ ວິບັດຕິໂທດແຫ່ງວະຈີກໍາທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກໍາໄລ ມີທຸກເປັນວິບາກ ໔ ປະການ ວິບັດຕິໂທດແຫ່ງມະໂນກໍາທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກໍາໄລ ມີທຸກເປັນວິບາກ ໓ ປະການ

ວິບັດຕິໂທດແຫ່ງກາຍຍະກໍາທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກໍາໄລ ມີທຸກເປັນວິບາກ ໓ ປະການ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ຂ້າສັດ ຫຍາບຊ້າ ມີມືເປື້ອນເລືອດ ປັກໃຈຢູ່ໃນການຂ້າ ແລະການທຸບຕີ ບໍ່ມີຄວາມອີດູໃນສັດທັງປວງ

໔. ເປັນຜູ້ລັກຊັບ ຄື ເປັນຜູ້ຖືເອົາຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນເຊິ່ງຢູ່ໃນເຮືອນ ຫຼືຢູ່ໃນປ່າທີ່ເຈົ້າຂອງບໍ່ໄດ້ໃຫ້ ດ້ວຍຈິດເປັນເຫດລັກ

໓. ເປັນຜູ້ປະພຶດຜິດໃນກາມ ຄື ເປັນຜູ້ປະພຶດລ່ວງໃນສະຕີທີ່ຢູ່ໃນປົກຄອງຂອງມານດາ ທີ່ຢູ່ໃນປົກຄອງຂອງບິດາ ທີ່ຢູ່ໃນປົກຄອງຂອງອ້າຍນ້ອງຊາຍ ທີ່ຢູ່ໃນປົກຄອງຂອງເອື້ອຍນ້ອງສາວ ທີ່ຢູ່ໃນປົກຄອງຂອງຍາດ ທີ່ປະພຶດທໍາ ມີສາມີ ມີກົດໝາຍຄຸ້ມຄອງ ໂດຍທີ່ສຸດ ແມ່ນສະຕີທີ່ບຸຣຸດໃສ່ດ້ວຍພວງມາໄລໝາຍໄວ້

ວິບັດຕິໂທດແຫ່ງກາຍຍະກໍາທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກໍາໄລ ມີທຸກເປັນວິບາກ ໓ ປະການ ເປັນແນວນີ້ແລ

ວິບັດຕິໂທດແຫ່ງວະຈີກໍາທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກໍາໄລ ມີທຸກເປັນ ວິບາກ ໔ ປະການ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ເວົ້າຕົວະ ຄື ຢູ່ໃນສະພາ ຢູ່ໃນບໍລິສັດ ຢູ່ທ່າມກາງໝູ່ຍາດ ຢູ່ທ່າມກາງໝູ່ທະຫານ ຫຼື ຢູ່ທ່າມກາງຣາດຊະສໍານັກ ຖືກເຂົາອ້າງເປັນພະຍານຊັກຖາມວ່າ “ທ່ານຮູ້ສິ່ງໃດຈົ່ງກ່າວສິ່ງນັ້ນ” ບຸກຄົນນັ້ນບໍ່ຮູ້ກໍກ່າວວ່າ “ຮູ້” ຫຼື ຮູ້ກໍກ່າວວ່າ “ບໍ່ຮູ້” ບໍ່ເຫັນກໍກ່າວວ່າ “ເຫັນ” ຫຼື ເຫັນກໍກ່າວວ່າ “ບໍ່ເຫັນ” ກ່າວ

ຕົວະທັງທີ່ຮູ້ຍ້ອນຕົນເປັນເຫດແດ່ ຍ້ອນບຸກຄົນອື່ນເປັນເຫດແດ່ ຍ້ອນ ເຫດ ຄືເຫັນແກ່ອາມິດເລັກໜ້ອຍແດ່

໒. ເປັນຜູ້ເວົ້າສັບສໍ່ ຄື ຟັງຄວາມຝ່າຍນີ້ແລ້ວໄປບອກຝ່າຍນັ້ນເພື່ອທຳລາຍຝ່າຍນີ້ ຫຼື ຟັງຄວາມຝ່າຍນັ້ນແລ້ວມາບອກຝ່າຍນີ້ເພື່ອທຳລາຍຝ່າຍນັ້ນ ຍຸຍົງຄົນທີ່ສາມັກຄີກັນ ສົ່ງເສີມຄົນທີ່ແຕກແຍກກັນ ຊົມຊື່ນຍິນດີເພີດເພີນຕໍ່ຜູ້ທີ່ແຕກແຍກກັນ ເວົ້າແຕ່ຄຳເວົ້າທີ່ກໍ່ຄວາມແຕກແຍກກັນ

໓. ເປັນຜູ້ເວົ້າຄຳຫຍາບ ຄື ກ່າວແຕ່ຄຳທີ່ຫຍາບຄາຍ ກ້າແຂງ ເຜັດຮ້ອນ ຫຍາບຄາຍດຸຮ້າຍແກ່ຜູ້ອື່ນ ກະທົບຜູ້ອື່ນ ໃກ້ຕໍ່ຄວາມໂກດ ບໍ່ເປັນໄປເພື່ອສະມາທິ

໔. ເປັນຜູ້ເວົ້າບໍ່ມີສາຣະ ຄື ເວົ້າບໍ່ຖືກເວລາ ເວົ້າຄຳບໍ່ຈິງ ເວົ້າບໍ່ອີງປະໂຫຍດ ເວົ້າບໍ່ອີງທຳ ເວົ້າບໍ່ອີງວິໄນ ເວົ້າຄຳທີ່ບໍ່ມີຫຼັກຖານ ບໍ່ມີບ່ອນອ້າງອີງ ບໍ່ມີບ່ອນກຳນົດ ບໍ່ປະກອບດ້ວຍປະໂຫຍດ

ວິບັດຄືໂທດແຫ່ງວະຈີກຳທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ໔ ປະການ ເປັນແນວນີ້ແລ

ວິບັດຄືໂທດແຫ່ງມະໂນກຳທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ໓ ປະການ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ເພ່ງເລັງຢາກໄດ້ຂອງເຂົາ ຄື ເພ່ງເລັງຢາກໄດ້ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນວ່າ “ເຮັດແນວໃດ ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນຈະເພິ່ງເປັນຂອງເຮົາ”

໒. ເປັນຜູ້ມີຈິດພະຍາບາດ ຄື ມີຈິດຄິດຮ້າຍວ່າ “ຂໍສັດເຫຼົ່ານີ້ຈົ່ງຖືກຂ້າ ຈົ່ງຖືກທຳລາຍ ຈົ່ງຂາດສູນ ຈົ່ງພິນາດໄປ ຫຼື ຢ່າໄດ້ມີ”

໓. ເປັນມິດສາທິດຖິ ມີຄວາມເຫັນວິປະຣິດວ່າ “ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການເຊັ່ນສວງບໍ່ມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີແລະຊົ່ວກໍບໍ່ມີ ໂລກນີ້ບໍ່ມີ ໂລກໜ້າບໍ່ມີ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ໂອປະປາຕິກະສັດບໍ່ມີ ສະມະນະພາມຜູ້ປະພຶດດີປະຕິບັດຊອບ ເຮັດໃຫ້ແຈ້ງໂລກນີ້ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວ ສອນຜູ້ອື່ນໃຫ້ຮູ້ແຈ້ງກໍບໍ່ມີໃນໂລກ”

ວິບັດຄືໂທດແຫ່ງມະໂນກຳທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ໓ ປະການ ເປັນແນວນີ້ແລ

ຍ້ອນວິບັດຄືໂທດແຫ່ງກາຍຍະກຳທີ່ມີເຈຕະນາເປັນອະກຸສົນ ໓ ປະການ ຍ້ອນວິບັດຄືໂທດແຫ່ງວະຈີກຳທີ່ມີເຈຕະນາເປັນອະກຸສົນ ໔ ປະການ ຫຼືຍ້ອນວິບັດຄືໂທດແຫ່ງມະໂນກຳທີ່ມີເຈຕະນາເປັນອະກຸສົນ ໓ ປະການ ສັດທັງຫຼາຍຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ພິກຂຸທັງຫຼາຍ ຍ້ອນວິບັດຄືໂທດແຫ່ງກາຍຍະກຳທີ່ມີເຈຕະນາເປັນອະກຸສົນ ໓ ປະການ ຍ້ອນວິບັດຄືໂທດແຫ່ງວະຈີກຳທີ່ມີເຈຕະນາເປັນອະກຸສົນ ໔ ປະການ ຫຼືຍ້ອນວິບັດຄືໂທດແຫ່ງມະໂນກຳທີ່ມີເຈຕະນາເປັນອະກຸສົນ ໓ ປະການ ສັດທັງຫຼາຍຫຼັງຈາກຕາຍແລ້ວ ຈຶ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ປຽບຄືແກ້ວມະນີທີ່ກຫຼ່ຽມຖືກໂຍນຂຶ້ນສູງກໍກັບລົງມາຕັ້ງຢູ່ດ້ວຍດີຕາມປົກກະຕິ ສັນນັ້ນ

ພິກຂຸທັງຫຼາຍ ເຮົາຍັງບໍ່ຮູ້ວິບາກກຳ ຈະບໍ່ກ່າວເຖິງຄວາມສິ້ນສຸດແຫ່ງກຳທີ່ສັດເຈຕະນາເຮັດຂຶ້ນ ສັ່ງສົມຂຶ້ນ ກໍວິບາກນັ້ນເອງທີ່ສັດເພິ່ງສະເຫວີຍໃນປັດຈຸບັນກໍມີ ໃນອັດຕະພາບ ຖັດໄປກໍມີ ຫຼືໃນອັດຕະພາບຕໍ່ ໆ ໄປກໍມີ ພິກຂຸທັງຫຼາຍ ເຮົາຍັງບໍ່ຮູ້ວິບາກກຳ ຈະບໍ່ກ່າວເຖິງການເຮັດບ່ອນສຸດແຫ່ງທຸກຂອງກຳທີ່ສັດເຈຕະນາເຮັດຂຶ້ນ ສັ່ງສົມຂຶ້ນ ໃນຂໍ້ນັ້ນແລ ສົມບັດແຫ່ງກາຍຍະກຳທີ່ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໓ ປະການ ສົມບັດແຫ່ງວະຈີກຳທີ່ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໔ ປະການ ສົມບັດແຫ່ງມະໂນກຳທີ່ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໓ ປະການ

ສົມບັດແຫ່ງກາຍຍະກຳທີ່ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໓ ປະການ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ລະເວັ້ນຂາດຈາກການຂ້າສັດ ວາງທັນດາວຸດແລະສັດຕາວຸດ ມີຄວາມລະອາຍ ມີຄວາມອີດູ ມຸ້ງຫວັງປະໂຫຍດເກື້ອກູນຕໍ່ສັບພະສັດຢູ່

໒. ເປັນຜູ້ລະເວັ້ນຂາດຈາກການລັກຊັບ ຄື ບໍ່ຖືເອົາຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນ ເຊິ່ງຢູ່ໃນເຮືອນຫຼືຢູ່ໃນປ່າທີ່ເຈົ້າຂອງບໍ່ໄດ້ໃຫ້ ດ້ວຍຈິດເປັນເຫດລັກ

໓. ເປັນຜູ້ລະເວັ້ນຂາດຈາກການປະພຶດຜິດໃນກາມ ຄື ບໍ່ເປັນຜູ້ປະພຶດລ່ວງໃນ

ສະຕີທັງຫຼາຍທີ່ຢູ່ໃນປົກຄອງຂອງມານດາ ທີ່ຢູ່ໃນປົກຄອງຂອງບິດາ ທີ່ຢູ່ໃນປົກຄອງຂອງອ້າຍນ້ອງຊາຍ ທີ່ຢູ່ໃນປົກຄອງຂອງເອື້ອຍນ້ອງສາວ ທີ່ຢູ່ໃນປົກຄອງຂອງຍາດ ທີ່ປະພຶດທຳ ມີສາມີ ມີກົດໝາຍຄຸ້ມຄອງ ໂດຍທີ່ສຸດແມ່ນແຕ່ສະຕີທີ່ບຸຣຸດໃສ່ດ້ອຍພວງມາໄລໝາຍໄວ້

ສົມບັດແຫ່ງກາຍຍະກຳທີ່ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໓ ປະການ ເປັນແນວນີ້ແລ

ສົມບັດແຫ່ງວະຈີກຳທີ່ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໔ ປະການ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກ

໑. ເປັນຜູ້ລະເວັ້ນຂາດຈາກການເວົ້າຕົວະ ຄືຢູ່ໃນສະພາ ຢູ່ໃນບໍລິສັດ ຢູ່ທ່າມກາງໝູ່ຍາດ ຢູ່ທ່າມກາງໝູ່ທະຫານ ຫຼືຢູ່ທ່າມກາງຣາດຊະສຳນັກ ຖືກເຂົາອ້າງເປັນພະຍານຊັກຖາມວ່າ “ທ່ານຮູ້ສິ່ງໃດຈົ່ງກ່າວສິ່ງນັ້ນ” ບຸກຄົນນັ້ນບໍ່ຮູ້ກໍກ່າວວ່າ “ບໍ່ຮູ້” ຫຼືຮູ້ກໍກ່າວວ່າ “ຮູ້” ບໍ່ເຫັນກ່າວວ່າ “ບໍ່ເຫັນ” ຫຼືເຫັນກໍກ່າວວ່າ “ເຫັນ” ບໍ່ກ່າວຕົວະທັງທີ່ຮູ້ຍ້ອນຕົນເປັນເຫດແດ່ ຍ້ອນບຸກຄົນອື່ນເປັນເຫດແດ່ ຍ້ອນເຫດຄືເຫັນແກ່ອາມິດເລັກໜ້ອຍແດ່

໒. ເປັນຜູ້ລະເວັ້ນຂາດຈາກການເວົ້າສັບສໍ່ ຄື ຟັງຄວາມຝ່າຍນີ້ແລ້ວບໍ່ໄປບອກຝ່າຍນັ້ນເພື່ອທຳລາຍຝ່າຍນີ້ ຫຼືຟັງຄວາມຝ່າຍນັ້ນແລ້ວບໍ່ມາບອກຝ່າຍນີ້ເພື່ອທຳລາຍຝ່າຍນັ້ນ ສະມານຄົນທີ່ແຕກແຍກກັນ ສົ່ງເສີມຄົນທີ່ປອງດອງກັນ ຊົມຊື່ນຍິນດີເພີດເພີນຕໍ່ຜູ້ທີ່ສາມັກຄີກັນ ເວົ້າແຕ່ຄຳເວົ້າທີ່ສ້າງສັນຄວາມສາມັກຄີ

໓. ເປັນຜູ້ລະເວັ້ນຂາດຈາກການເວົ້າຄຳຫຍາບ ຄືກ່າວແຕ່ຄຳທີ່ບໍ່ມີໂທດ ມ່ວນໜ້າຮັກ ຈັບໃຈ ເປັນຄຳຂອງຊາວເມືອງ ຄົນສ່ວນຫຼາຍຮັກແພງພໍໃຈ

໔. ເປັນຜູ້ລະເວັ້ນຂາດຈາກການເວົ້າບໍ່ມີສາຣະ ຄື ເວົ້າຖືກເວລາ ເວົ້າຄຳຈິງ ເວົ້າ ອີງປະໂຫຍດ ເວົ້າອີງທຳ ເວົ້າອີງວິໄນ ເວົ້າຄຳທີ່ມີຫຼັກຖານ ມີບ່ອນອ້າງອີງ ມີທີ່ກຳນົດ ປະກອບດ້ວຍປະໂຫຍດ

ສົມບັດແຫ່ງວະຈີກຳທີ່ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໔ ປະການ ເປັນແນວນີ້ແລ

ສົມບັດແຫ່ງມະໂນກຳທີ່ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໓ ປະການ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້

໑. ເປັນຜູ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ ຄື ບໍ່ເພ່ງເລັງຢາກໄດ້ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນວ່າ "ເຮັດແນວໃດ ຊັບອັນເປັນອຸປະກອນເຄື່ອງພໍໃຈຂອງຜູ້ອື່ນຈະເພິ່ງເປັນຂອງເຮົາ"

໒. ເປັນຜູ້ມີຈິດບໍ່ພະຍາບາດ ຄື ບໍ່ມີຈິດຄິດຮ້າຍວ່າ "ຂໍສັດເຫຼົ່ານີ້ຈົ່ງເປັນຜູ້ບໍ່ມີເວນ ບໍ່ມີຈິດພະຍາບາດ ບໍ່ມີທຸກ ມີສຸກ ຮັກສາຕົນເທີ້ນ"

໓. ເປັນສຳມາທິດຖິ ມີຄວາມເຫັນບໍ່ວິປະຣິດວ່າ "ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວ ມີຜົນ ການເຊ່ນສວງມີຜົນ ຯລຯ ສະມະນະພາມຜູ້ປະພຶດດີປະຕິບັດຊອບ ເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງ ມີຢູ່ໃນໂລກ"

ສົມບັດແຫ່ງມະໂນກຳທີ່ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໓ ປະການ ເປັນແນວນີ້ແລ

ຍ້ອນສົມບັດແຫ່ງກາຍຍະກຳທີ່ມີເຈຕະນາເປັນກຸສົນ ໓ ປະການ ຍ້ອນສົມບັດແຫ່ງ ວະຈີກຳທີ່ມີເຈຕະນາເປັນກຸສົນ ໔ ປະການ ຫຼືຍ້ອນສົມບັດແຫ່ງມະໂນກຳທີ່ມີເຈຕະນາ ເປັນກຸສົນ ໓ ປະການ ສັດທັງຫຼາຍ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ

ພິກຂຸທັງຫຼາຍ ຍ້ອນສົມບັດແຫ່ງກາຍຍະກຳທີ່ມີເຈຕະນາເປັນກຸສົນ ໓ ປະການ ຍ້ອນສົມບັດແຫ່ງວະຈີກຳທີ່ມີເຈຕະນາເປັນກຸສົນ ໔ ປະການ ຫຼືຍ້ອນສົມບັດແຫ່ງ ມະໂນກຳທີ່ມີເຈຕະນາເປັນກຸສົນ ໓ ປະການ ສັດທັງຫຼາຍ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນ ສຸກຄະຕິໂລກສະຫວັນ ປຽບຄືແກ້ວມະນີ ໔ ຫຼ່ຽມທີ່ບຸກຄົນໂຍນຂຶ້ນຂ້າງເທິງ ຕົກລົງມາ ທາງຫຼ່ຽມໃດ ໆ ກໍຕັ້ງຢູ່ໄດ້ຕາມຫຼ່ຽມທີ່ຕົກລົງນັ້ນ ໆ

**ປະຖົມສັນເຈຕະນິກະສູດທີ ໗ ຈົບ**

# ໗. ທຸຕິຍະສັນເຈຕະນິກະສູດ

## ວ່າດ້ວຍກຳທີ່ສັດເຈຕະນາສັ່ງສົມ ສູດທີ ໘

[໔໑໗] ພິກຂຸທັງຫຼາຍ ເຮົາຍັງບໍ່ຮູ້ວິບາກກຳ ຈະບໍ່ກ່າວເຖິງຄວາມສິ້ນສຸດແຫ່ງກຳທີ່ສັດເຈຕະນາເຮັດຂຶ້ນ ສັ່ງສົມຂຶ້ນ ກໍວິບາກນັ້ນທີ່ສັດເພິ່ງສະເຫວີຍໃນປັດຈຸບັນກໍມີ ໃນອັດຕະພາບຖັດໄປກໍມີ ຫຼື ໃນອັດຕະພາບຕໍ່ ໆ ໄປກໍມີ ພິກຂຸທັງຫຼາຍ ເຮົາຍັງບໍ່ຮູ້ວິບາກກຳ ຈະບໍ່ກ່າວເຖິງການເຮັດບ່ອນສຸດແຫ່ງທຸກຂອງກຳທີ່ສັດເຈຕະນາເຮັດຂຶ້ນ ສັ່ງສົມຂຶ້ນ ໃນຂໍ້ນັ້ນແລ ວິບັດຄືໂທດແຫ່ງກາຍຍະກຳທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ໓ ປະການ ວິບັດຄືໂທດແຫ່ງວະຈີກຳທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນ ວິບາກ ໔ ປະການ ວິບັດຄືໂທດແຫ່ງມະໂນກຳທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ໓ ປະການ

ວິບັດຄືໂທດແຫ່ງກາຍຍະກຳທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ໓ ປະການ ເປັນແນວໃດ? ໆລໆ໑ ວິບັດຄືໂທດແຫ່ງກາຍຍະກຳ ທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ໓ ປະການ ເປັນແນວນີ້ແລ

ວິບັດຄືໂທດແຫ່ງວະຈີກຳທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນ ວິບາກ ໔ ປະການ ເປັນແນວໃດ? ໆລໆ ວິບັດຄືໂທດແຫ່ງວະຈີກຳທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ໔ ປະການ ເປັນແນວນີ້ແລ

ວິບັດຄືໂທດແຫ່ງມະໂນກຳທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ໓ ປະການ ເປັນແນວໃດ? ໆລໆ ວິບັດຄືໂທດແຫ່ງມະໂນກຳທີ່ມີເຈຕະນາເປັນອະກຸສົນ ມີທຸກເປັນກຳໄລ ມີທຸກເປັນວິບາກ ໔ ປະການ ເປັນແນວນີ້ແລ

ຍ້ອນວິບັດຄືໂທດແຫ່ງກາຍຍະກຳທີ່ມີເຈຕະນາເປັນອະກຸສົນ ໓ ປະການ ຍ້ອນວິບັດຄືໂທດແຫ່ງວະຈີກຳທີ່ມີເຈຕະນາເປັນອະກຸສົນ ໔ ປະການ ຫຼືຍ້ອນວິບັດຄືໂທດແຫ່ງ ມະໂນກຳທີ່ມີເຈຕະນາເປັນອະກຸສົນ ໓ ປະການ ສັດທັງຫຼາຍຫຼັງ ຈາກຕາຍແລ້ວຈຶ່ງໄປເກີດໃນອະບາຍທຸກຄະຕິ ວິນິບາດ ນະຮົກ

ພິກຂຸທັງຫຼາຍ ເຮົາຍັງບໍ່ຮູ້ວິບາກກຳ ຈະບໍ່ກ່າວເຖິງຄວາມສິ້ນສຸດແຫ່ງກຳທີ່ສັດເຈຕະນາເຮັດຂຶ້ນ ສັ່ງສົມຂຶ້ນ ກໍວິບາກນັ້ນເອງທີ່ສັດເພິ່ງສະເຫວີຍໃນປັດຈຸບັນກໍມີ ໃນອັດຕະພາບ ຖັດໄປກໍມີ ຫຼືໃນອັດຕະພາບຕໍ່ ໆ ໄປກໍມີ ພິກຂຸທັງຫຼາຍ ເຮົາຍັງບໍ່ຮູ້ວິບາກກຳ ຈະບໍ່ກ່າວເຖິງການເຮັດບ່ອນສຸດແຫ່ງທຸກຂອງກຳທີ່ສັດເຈຕະນາເຮັດຂຶ້ນ ສັ່ງສົມຂຶ້ນ ໃນຂໍ້ນັ້ນແລ ສົມບັດແຫ່ງກາຍຍະກຳທີ່ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໓ ປະການ ສົມບັດແຫ່ງວະຈີກຳທີ່

ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໔ ປະການ ສົມບັດແຫ່ງມະໂນກຳທີ່ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໓ ປະການ

ສົມບັດແຫ່ງກາຍຍະກຳທີ່ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໓ ປະການ ເປັນແນວໃດ? ຯລຯ ສົມບັດແຫ່ງກາຍຍະກຳທີ່ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໓ ປະການ ເປັນແນວນີ້ແລ

ສົມບັດແຫ່ງວະຈີກຳທີ່ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໔ ປະການ ເປັນແນວໃດ? ຯລຯ ສົມບັດແຫ່ງວະຈີກຳທີ່ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໔ ປະການ ເປັນແນວນີ້ແລ

ສົມບັດແຫ່ງມະໂນກຳທີ່ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໓ ປະການ ເປັນແນວໃດ? ຯລຯ ສົມບັດແຫ່ງມະໂນກຳທີ່ມີເຈຕະນາເປັນກຸສົນ ມີສຸກເປັນກຳໄລ ມີສຸກເປັນວິບາກ ໓ ປະການ ເປັນແນວນີ້ແລ

ພິກຂຸທັງຫຼາຍ ຍ້ອນສົມບັດແຫ່ງກາຍຍະກຳທີ່ມີເຈຕະນາເປັນກຸສົນ ໓ ປະການ ຍ້ອນສົມບັດແຫ່ງວະຈີກຳທີ່ມີເຈຕະນາເປັນກຸສົນ ໔ ປະການ ຫຼືຍ້ອນສົມບັດແຫ່ງ ມະໂນກຳທີ່ມີເຈຕະນາເປັນກຸສົນ ໓ ປະການ ສັດທັງຫຼາຍຫຼັງຈາກຕາຍແລ້ວ ຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ

**ທຸຕິຍະສັນເຈຕະນິກະສູດທີ ໖ ຈົບ**

## ໗. ກະຣະຊະກາຍະສູດ

## ວ່າດ້ວຍບາບກຳທີ່ກະຣະຊະກາຍເຄີຍເຮັດ

[໒໑໗] ພິກຂຸທັງຫຼາຍ ເຮົາຍັງບໍ່ຮູ້ວິບາກກຳ ຈະບໍ່ກ່າວເຖິງຄວາມສິ້ນສຸດແຫ່ງກຳທີ່ສັດເຈຕະນາເຮັດຂຶ້ນ ສັ່ງສົມຂຶ້ນ ກໍວິບາກນັ້ນເອງທີ່ສັດເພິ່ງສະເຫວີຍໃນປັດຈຸບັນກໍມີ ໃນອັດຕະພາບຖັດໄປກໍມີ ຫຼື ໃນອັດຕະພາບຕໍ່ ໆ ໄປກໍມີ ເຮົາຍັງບໍ່ຮູ້ວິບາກກຳ ຈະບໍ່ກ່າວເຖິງການເຮັດບ່ອນສຸດແຫ່ງທຸກຂອງກຳທີ່ສັດເຈຕະນາເຮັດຂຶ້ນ ສັ່ງສົມຂຶ້ນ ອະຣິຍະສາວົກນັ້ນ ປາສະຈາກອະພິດຊາ ປາສະຈາກພະຍາ ບາດ ບໍ່ລຸ້ມຫຼົງ ມີສຳປະຊັນຍະ ມີສະຕິໝັ້ນຄົງ ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ທິດທີ ໓ ທິດທີ ໔ ທິດເບື້ອງເທິງ[໑] ທິດເບື້ອງລ່າງ[໒] ທິດສຽງ[໓] ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານ ດ້ວຍເມດຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ອະຣິຍະສາວົກນັ້ນຍ່ອມຮູ້ແຈ້ງແນວນີ້ວ່າ "ແຕ່ກ່ອນ ຈິດຂອງເຮົານີ້ເປັນປະຣິດຕະຈິດ[໔]ຍັງບໍ່ໄດ້ອົບຮົມ ແຕ່ບັດນີ້ ເປັນ ອັບປະມານະຈິດ[໕] ໄດ້ອົບຮົມດີ

ແລ້ວ ການາວະຈອນກຳແນວໃດແນວໜຶ່ງນັ້ນ ຍ່ອມບໍ່ເຫຼືອຢູ່ ບໍ່ຕັ້ງຢູ່ໃນຈິດຂອງເຮົາ" ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ຄື ຫາກເດັກນີ້ເພິ່ງຈະເລີນເມດຕາເຈໂຕວິ ມຸດຕິຕັ້ງແຕ່ເວລາຍັງເປັນເດັກຢູ່ ເຂົາຈະເພິ່ງເຮັດບາບກຳໄດ້ບໍ?"

ພິກຂຸທັງຫຼາຍ ຂາບທູນວ່າ "ບໍ່ແມ່ນແນວນັ້ນ ຂ້ານ້ອຍ"

"ທຸກເພິ່ງຖືກຕ້ອງບຸກຄົນຜູ້ບໍ່ເຮັດບາບກຳເລີຍບໍ?"

"ເປັນໄປບໍ່ໄດ້ເລີຍທີ່ທຸກຈັກຖືກຕ້ອງບຸກຄົນຜູ້ບໍ່ເຮັດບາບກຳ ຂ້ານ້ອຍ"

"ພິກຂຸທັງຫຼາຍ ເມດຕາເຈໂຕວິມຸດຕິນີ້ ສະຕີຫຼືບຸຣຸດຄວນຈະເລີນແທ້ ສະຕີຫຼືບຸຣຸດຈະພາເອົາກາຍນີ້ໄປບໍ່ໄດ້ ສັດຜູ້ຈະຕ້ອງຕາຍນີ້ເປັນຜູ້ມີຈິດເປັນເຫດ ສັດນັ້ນຍ່ອມຮູ້ແຈ້ງແນວນີ້ວ່າ "ບາບກຳອັນໃດ ໆ ຂອງເຮົານີ້ທີ່ກະຣະຊະກາຍນີ້ເຄີຍເຮັດມາແລ້ວ ບາບກຳນັ້ນທັງໝົດເຮົາເພິ່ງສະເຫວີຍໃນອັດຕະພາບນີ້ ຈັກບໍ່ຕິດຕາມໄປ" ພິກຂຸທັງຫຼາຍ ເມດຕາເຈໂຕວິມຸດຕິທີ່ພິກຂຸຜູ້ມີປັນຍາໃນທຳວິໄນນີ້ຍັງບໍ່ແທງຕະຫຼອດວິມຸດຕິອັນຍິ່ງ ອົບຮົມແລ້ວແນວນີ້ ຍ່ອມເປັນໄປເພື່ອຄວາມເປັນອະນາຄາມີ ອະຣິຍະສາວົກມີກະລຸນາຈິດ ຯລຯ ມຸທິຕາຈິດ ຯລຯ ອຸເປກຂາຈິດ ແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ທິດທີ ໓ ທິດທີ ໔ ທິດເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກ ທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍອຸເປກຂາຈິດອັນເຕັມປ່ຽມເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ອະຣິຍະສາວົກນັ້ນຍ່ອມຮູ້ແຈ້ງແນວນີ້ວ່າ "ແຕ່ກ່ອນ ຈິດ ຂອງເຮົານີ້ເປັນປະຣິຕຕະຈິດ ຍັງບໍ່ໄດ້ອົບຮົມ ແຕ່ບັດນີ້ ຈິດຂອງເຮົານີ້ເປັນອັບປະມານະຈິດໄດ້ອົບຮົມດີແລ້ວ ການາວະຈອນກຳແນວໃດແນວໜຶ່ງນັ້ນຍ່ອມບໍ່ເຫຼືອຢູ່ ບໍ່ຕັ້ງຢູ່ໃນຈິດຂອງເຮົາ" ພິກຂຸທັງຫຼາຍ ທ່ານທັງຫຼາຍເຂົ້າໃຈເລື້ອງນັ້ນແນວໃດ ຄື ຫາກເດັກນີ້ຈະເພິ່ງຈະເລີນອຸເປກຂາເຈໂຕວິມຸດຕິຕັ້ງແຕ່ເວລາຍັງເປັນເດັກ ເຂົາເພິ່ງເຮັດບາບກຳໄດ້ບໍ?"

"ບໍ່ແມ່ນແນວນັ້ນ ຂ້ານ້ອຍ"

"ທຸກເພິ່ງຖືກຕ້ອງບຸກຄົນຜູ້ບໍ່ເຮັດບາບກຳເລີຍບໍ?"

"ເປັນໄປບໍ່ໄດ້ເລີຍທີ່ທຸກຈັກຖືກຕ້ອງບຸກຄົນຜູ້ບໍ່ເຮັດບາບກຳ ຂ້ານ້ອຍ"

"ພິກຂຸທັງຫຼາຍ ອຸເປກຂາເຈໂຕວິມຸດຕິນີ້ ສະຕີຫຼືບຸຣຸດຄວນຈະເລີນແທ້ ສະຕີຫຼືບຸຣຸດຈະພາເອົາກາຍນີ້ໄປບໍ່ໄດ້ ສັດຜູ້ຈະຕ້ອງຕາຍນີ້ເປັນຜູ້ມີຈິດເປັນເຫດ ສັດນັ້ນຍ່ອມຮູ້ແຈ້ງແນວນີ້ວ່າ "ບາບກຳອັນໃດ ໆ ຂອງເຮົານີ້ ທີ່ກະຣະຊະກາຍນີ້ເຄີຍເຮັດມາແລ້ວ ບາບກຳນັ້ນທັງໝົດເຮົາເພິ່ງສະເຫວີຍໃນອັດຕະພາບນີ້ ຈັກບໍ່ຕິດຕາມໄປ" ພິກຂຸທັງຫຼາຍ ອຸເປກຂາເຈໂຕວິມຸດຕິທີ່ພິກຂຸຜູ້ມີ

ປັນຍາໃນທຳວິໄນນີ້ຍັງບໍ່ແທງຕະຫຼອດວິມຸດຕິອັນຍິ່ງ ອົບຮົມແລ້ວແນວນີ້ ຍ່ອມເປັນໄປເພື່ອຄວາມເປັນອະນາຄາມີ"

**ກະຣະຊະກາຍສູດທີ ໙ ຈົບ**

## ໑໐. ອະທຳມະຈະຣິຍາສູດ

## ວ່າດ້ວຍຄວາມປະພຶດອະທຳ

[໔໘໐] ຄັ້ງນັ້ນ ພາມຄົນໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ທ່ານພຣະໂຄດົມ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພາມ ຍ້ອນຄວາມປະພຶດອະທຳແລະຄວາມປະພຶດບໍ່ສະໝ່ຳສະເໝີເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວ ຈຶ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ"

"ທ່ານພຣະໂຄດົມ ອັນໃດນໍ ເປັນເຫດເປັນປັດໄຈໃຫ້ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວໄປເກີດໃນສຸກຄະຕິໂລກສະຫວັນ"

"ພາມ ຍ້ອນຄວາມປະພຶດທຳ ແລະຄວາມປະພຶດສະໝ່ຳສະເໝີເປັນເຫດ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວ ຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ"

"ຂ້າພະເຈົ້າຍັງບໍ່ຮູ້ທົ່ວເຖິງເນື້ອຄວາມແຫ່ງພຣະດຳຣັດທີ່ທ່ານພຣະໂຄດົມຕັດໄວ້ໂດຍຫຍໍ້ນີ້ໂດຍພິດສະດານ ຂໍປະທານວະໂຣກາດ ຂໍທ່ານພຣະໂຄດົມໂຜດສະແດງທຳແກ່ຂ້າພະເຈົ້າແນວທີ່ຂ້າພະເຈົ້າຈະ ເພິ່ງຮູ້ທົ່ວເຖິງເນື້ອຄວາມແຫ່ງພຣະດຳຣັດທີ່ທ່ານພຣະໂຄດົມຕັດໄວ້ໂດຍຫຍໍ້ນີ້ ໂດຍພິດສະດານ ເທີ້ນ"

"ພາມ ຖ້າເປັນແນວນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ພາມນັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພາມ ຄວາມປະພຶດອະທຳ ແລະຄວາມປະພຶດບໍ່ສະໝໍ່າສະເໝີທາງກາຍ ໓ ປະການ ຄວາມປະພຶດອະທຳແລະຄວາມປະພຶດບໍ່ສະໝໍ່າສະເໝີທາງວາຈາ ໔ ປະການ ຄວາມປະພຶດອະທຳ ແລະຄວາມປະພຶດບໍ່ສະໝໍ່າສະເໝີທາງໃຈ ໓ ປະການ

ຄວາມປະພຶດອະທຳ ແລະຄວາມປະພຶດບໍ່ສະໝໍ່າສະເໝີທາງກາຍ ໓ ປະການ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ຂ້າສັດ ຯລຯ[1] ຄວາມປະພຶດອະທຳ ແລະຄວາມປະພຶດບໍ່ສະໝໍ່າສະເໝີທາງກາຍ ໓ ປະການ ເປັນແນວນີ້ແລ

ຄວາມປະພຶດອະທຳ ແລະຄວາມປະພຶດບໍ່ສະໝໍ່າສະເໝີທາງວາຈາ ໔ ປະການ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ເວົ້າຕົວະ ຯລຯ ຄວາມປະພຶດອະທຳແລະຄວາມປະພຶດບໍ່ສະໝໍ່າສະເໝີທາງວາຈາ ໔ ປະການ ເປັນແນວນີ້ແລ

ຄວາມປະພຶດອະທຳ ແລະຄວາມປະພຶດບໍ່ສະໝໍ່າສະເໝີທາງໃຈ ໓ ປະການ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ ເປັນຜູ້ເພ່ງເລັງຢາກໄດ້ຂອງເຂົາ ຯລຯ ຄວາມປະພຶດອະທຳ ແລະຄວາມປະພຶດບໍ່ສະໝໍ່າສະເໝີທາງໃຈ ໓ ປະການ ເປັນແນວນີ້ແລ

ຍ້ອນຄວາມປະພຶດອະທຳ ແລະຄວາມປະພຶດບໍ່ສະໝໍ່າສະເໝີເປັນເຫດແນວນີ້ແລ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ພາມ ຄວາມປະພຶດທຳ ແລະຄວາມປະພຶດສະໝໍ່າສະເໝີທາງກາຍ ໓ ປະການ ຄວາມປະພຶດທຳ ແລະຄວາມປະພຶດສະໝໍ່າສະເໝີທາງວາຈາ ໔ ປະການ ຄວາມປະພຶດທຳ ແລະຄວາມປະພຶດສະໝໍ່າສະເໝີທາງໃຈ ໓ ປະການ

ຄວາມປະພຶດທຳແລະຄວາມປະພຶດສະໝໍ່າສະເໝີທາງກາຍ ໓ ປະການ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ລະເວັ້ນຂາດຈາກການຂ້າສັດ ຯລຯ ຄວາມປະພຶດທຳແລະຄວາມປະພຶດສະໝໍ່າສະເໝີທາງກາຍ ໓ ປະການ ເປັນແນວນີ້ແລ

ຄວາມປະພຶດທຳແລະຄວາມປະພຶດສະໝໍ່າສະເໝີທາງວາຈາ ໔ ປະການ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ລະເວັ້ນຂາດຈາກການເວົ້າຕົວະ ຯລຯ ຄວາມປະພຶດທຳແລະຄວາມປະພຶດສະໝ່ຳສະເໝີທາງວາຈາ ໔ ປະການ ເປັນແນວນີ້ແລ

ຄວາມປະພຶດທຳແລະຄວາມປະພຶດສະໝ່ຳສະເໝີທາງໃຈ ໓ ປະການ ເປັນແນວໃດ?

ຄື ບຸກຄົນລາງຄົນໃນໂລກນີ້ເປັນຜູ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ ຯລຯ ຄວາມປະພຶດທຳແລະຄວາມປະພຶດສະໝ່ຳສະເໝີທາງໃຈ ໓ ປະການ ເປັນແນວນີ້ແລ

ພາມ ຍ້ອນຄວາມປະພຶດທຳແລະຄວາມປະພຶດສະໝ່ຳສະເໝີເປັນເຫດແນວນີ້ແລ ສັດລາງພວກໃນໂລກນີ້ ຫຼັງຈາກຕາຍແລ້ວຈຶ່ງໄປເກີດໃນສຸກຄະຕິໂລກສະຫວັນ”

ພາມຂາບທູນວ່າ “ຂ້າແດ່ທ່ານພຣະໂຄດົມ ພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ຯລຯ ຂໍທ່ານພຣະໂຄດົມຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດ ຊີວິດ”

**ອະທຳມະຈະຣິຍາສູດທີ ໑໐ ຈົບ**

**ກະຣະຊະກາຍວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມນິຣະຍະສັກຄະສູດ
໒. ທຸຕິຍະນິຣະຍະສັກຄະສູດ
໓. ມາຕຸຄາມະສູດ
໔. ອຸປາຊິກາສູດ
໕. ວິສາຣະທະສູດ
໖. ສັງສັບປະຕິປະຣິຍາຍະສູດ
໗. ປະຖົມສັນເຈຕະນິກະສູດ
໘. ທຸຕິຍະສັນເຈຕະນິກະສູດ
໙. ກະຣະຊະກາຍະສູດ
໑໐. ອະທຳມະຈະຣິຍາສູດ

# ໔. ສາມັນຍະວັກ

## ໝວດວ່າດ້ວຍທຳທົ່ວໄປ

### ທຳທີ່ໃຫ້ສັດເກີດໃນນະຣົກ ໑໐ ປະການ

[໔໔໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

ທຳ ໑໐ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າສັດ
໒. ເປັນຜູ້ລັກຊັບ
໓. ເປັນຜູ້ປະພຶດຜິດໃນກາມ
໔. ເປັນຜູ້ເວົ້າຕົວະ
໕. ເປັນຜູ້ເວົ້າສັບສໍ່
໖. ເປັນຜູ້ເວົ້າຄຳຫຍາບ
໗. ເປັນຜູ້ເວົ້າບໍ່ມີສາຣະ
໘. ເປັນຜູ້ເພ່ງເລັງຍາກໄດ້ຂອງເຂົາ
໙. ເປັນຜູ້ມີຈິດພະຍາບາດ
໑໐. ເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຣົກ ຄືຖືກນຳໄປຝັງໄວ້

ທຳທີ່ໃຫ້ສັດເກີດໃນສະຫວັນ ໑໐ ປະການ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໑໐ ປະການ ອັນໃດແດ່ ຄື

໑. ເປັນຜູ້ເວັ້ນຂາດຈາກການຂ້າສັດ
໒. ເປັນຜູ້ເວັ້ນຂາດຈາກການລັກຊັບ
໓. ເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ
໔. ເປັນຜູ້ເວັ້ນຂາດຈາກການເວົ້າຕົວະ
໕. ເປັນຜູ້ເວັ້ນຂາດຈາກການເວົ້າສັບສໍ່
໖. ເປັນຜູ້ເວັ້ນຂາດຈາກການເວົ້າຄຳຫຍາບ
໗. ເປັນຜູ້ເວັ້ນຂາດຈາກການເວົ້າບໍ່ມີສາຣະ
໘. ເປັນຜູ້ບໍ່ເພ່ງເລັງຍາກໄດ້ຂອງເຂົາ

໙. ເປັນຜູ້ມີຈິດບໍ່ພະຍາບາດ
໑໐. ເປັນສຳມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ແລ ຍ່ອມດຳລົງຢູ່ໃນສະຫວັນ ຄື ໄດ້ຮັບອັນເຊີນໄປປະດິດສະຖານໄວ້ (໑)

## ທຳທີ່ໃຫ້ສັດເກີດໃນນະຮົກ ໒໐ ປະການ

[໒໒໒] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໒໐ ປະການ ຍ່ອມດຳລົງຢູ່ໃນນະຮົກ ຄື ຖືກນຳໄປຝັງໄວ້

ທຳ ໒໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ຂ້າສັດ
໒. ຊັກຊວນຜູ້ອື່ນໃຫ້ຂ້າສັດ
໓. ຕົນເອງເປັນຜູ້ລັກຊັບ
໔. ຊັກຊວນຜູ້ອື່ນໃຫ້ລັກຊັບ
໕. ຕົນເອງເປັນຜູ້ປະພຶດຜິດໃນກາມ
໖. ຊັກຊວນຜູ້ອື່ນໃຫ້ປະພຶດຜິດໃນກາມ
໗. ຕົນເອງເປັນຜູ້ເວົ້າຕົວະ
໘. ຊັກຊວນຜູ້ອື່ນໃຫ້ເວົ້າຕົວະ
໙. ຕົນເອງເປັນຜູ້ເວົ້າສັບສໍ່
໑໐. ຊັກຊວນຜູ້ອື່ນໃຫ້ເວົ້າສັບສໍ່
໑໑. ຕົນເອງເປັນຜູ້ເວົ້າຄຳຫຍາບ
໑໒. ຊັກຊວນຜູ້ອື່ນໃຫ້ເວົ້າຄຳຫຍາບ
໑໓. ຕົນເອງເປັນຜູ້ເວົ້າບໍ່ມີສາຣະ
໑໔. ຊັກຊວນຜູ້ອື່ນໃຫ້ເວົ້າບໍ່ມີສາຣະ
໑໕. ຕົນເອງເປັນຜູ້ເພັ່ງເລັງຢາກໄດ້ຂອງເຂົາ
໑໖. ຊັກຊວນຜູ້ອື່ນໃຫ້ເພັ່ງເລັງຢາກໄດ້ຂອງເຂົາ
໑໗. ຕົນເອງເປັນຜູ້ມີຈິດພະຍາບາດ
໑໘. ຊັກຊວນຜູ້ອື່ນໃຫ້ມີຈິດພະຍາບາດ
໑໙. ຕົນເອງເປັນມິດສາທິດຖິ
໒໐. ຊັກຊວນຜູ້ອື່ນໃຫ້ເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໒໐ ປະການນີ້ແລ ຍ່ອມດຳລົງຢູ່ໃນນະຮົກ ຄື ຖືກນຳໄປຝັງໄວ້

## ທຳທີ່ໃຫ້ສັດເກີດໃນສະຫວັນ ໒໐ ປະການ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໒໐ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໒໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ
໒. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການຂ້າສັດ
໓. ຕົນເອງເປັນຜູ້ເວັ້ນຂາດຈາກການລັກຊັບ
໔. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການລັກຊັບ
໕. ຕົນເອງເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ
໖. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການປະພຶດຜິດໃນກາມ
໗. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຕົວະ
໘. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າຕົວະ
໙. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າສັບສໍ່
໑໐. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າສັບສໍ່
໑໑. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຄຳຫຍາບ
໑໒. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າຄຳຫຍາບ
໑໓. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າບໍ່ມີສາລະ
໑໔. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າບໍ່ມີສາລະ
໑໕. ຕົນເອງເປັນຜູ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ
໑໖. ຊັກຊວນຜູ້ອື່ນໃຫ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ
໑໗. ຕົນເອງເປັນຜູ້ມີຈິດບໍ່ພະຍາບາດ
໑໘. ຊັກຊວນຜູ້ອື່ນໃຫ້ມີຈິດບໍ່ພະຍາບາດ
໑໙. ຕົນເອງເປັນສຳມາທິດຖິ
໒໐. ຊັກຊວນຜູ້ອື່ນໃຫ້ເປັນສຳມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໒໐ ປະການນີ້ແລ ຍ່ອມດຳລົງຢູ່ໃນ ສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້ (໒)

## ທຳທີ່ໃຫ້ສັດເກີດໃນນະຣົກ ໓໐ ປະການ

[໒໒໓] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓໐ ປະການ ຍ່ອມດຳລົງຢູ່ໃນນະຣົກ ຄື ຖືກນຳໄປຝັງໄວ້

ທຳ ໓໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ຂ້າສັດ
໒. ຊັກຊວນຜູ້ອື່ນໃຫ້ຂ້າສັດ
໓. ເປັນຜູ້ພໍໃຈການຂ້າສັດ
໔. ຕົນເອງເປັນຜູ້ລັກຊັບ
໕. ຊັກຊວນຜູ້ອື່ນໃຫ້ລັກຊັບ
໖. ເປັນຜູ້ພໍໃຈການລັກຊັບ
໗. ຕົນເອງເປັນຜູ້ປະພຶດຜິດໃນກາມ
໘. ຊັກຊວນຜູ້ອື່ນໃຫ້ປະພຶດຜິດໃນກາມ
໙. ເປັນຜູ້ພໍໃຈການປະພຶດຜິດໃນກາມ
໑໐. ຕົນເອງເປັນຜູ້ເວົ້າຕົວະ
໑໑. ຊັກຊວນຜູ້ອື່ນໃຫ້ເວົ້າຕົວະ
໑໒. ເປັນຜູ້ພໍໃຈການເວົ້າຕົວະ
໑໓. ຕົນເອງເປັນຜູ້ເວົ້າສັບສໍ່
໑໔. ຊັກຊວນຜູ້ອື່ນໃຫ້ເວົ້າສັບສໍ່
໑໕. ເປັນຜູ້ພໍໃຈການເວົ້າສັບສໍ່
໑໖. ຕົນເອງເປັນຜູ້ເວົ້າຄຳຫຍາບ
໑໗. ຊັກຊວນຜູ້ອື່ນໃຫ້ເວົ້າຄຳຫຍາບ
໑໘. ເປັນຜູ້ພໍໃຈການເວົ້າຄຳຫຍາບ
໑໙. ຕົນເອງເປັນຜູ້ເວົ້າບໍ່ມີສາຣະ
໒໐. ຊັກຊວນຜູ້ອື່ນໃຫ້ເວົ້າບໍ່ມີສາຣະ
໒໑. ເປັນຜູ້ພໍໃຈການເວົ້າບໍ່ມີສາຣະ
໒໒. ຕົນເອງເປັນຜູ້ເພ່ງເລັງຢາກໄດ້ຂອງເຂົາ
໒໓. ຊັກຊວນຜູ້ອື່ນໃຫ້ເພ່ງເລັງຢາກໄດ້ຂອງເຂົາ
໒໔. ເປັນຜູ້ພໍໃຈຄວາມເພ່ງເລັງຢາກໄດ້ຂອງເຂົາ
໒໕. ຕົນເອງເປັນຜູ້ມີຈິດພະຍາບາດ
໒໖. ຊັກຊວນຜູ້ອື່ນໃຫ້ມີຈິດພະຍາບາດ

໔໗. ເປັນຜູ້ພໍໃຈຄວາມມີຈິດພະຍາບາດ

໔໘. ຕົນເອງເປັນມິດສາທິດຖິ

໔໙. ຊັກຊວນຜູ້ອື່ນໃຫ້ເປັນມິດສາທິດຖິ

໕໐. ເປັນຜູ້ພໍໃຈຄວາມເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໕໐ ປະການນີ້ແລ ຍ່ອມດຳລົງຢູ່ໃນ ນະຣົກ ຄືຖືກນຳໄປຝັງໄວ້

ທຳທີ່ໃຫ້ສັດເກີດໃນສະຫວັນ ໕໐ ປະການ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໕໐ ປະການ ຍ່ອມດຳລົງຢູ່ໃນສະຫວັນຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໕໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ

໒. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການຂ້າສັດ

໓. ເປັນຜູ້ພໍໃຈການງົດເວັ້ນຈາກການຂ້າສັດ

໔. ຕົນເອງເປັນຜູ້ເວັ້ນຂາດຈາກການລັກຊັບ

໕. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການລັກຊັບ

໖. ເປັນຜູ້ພໍໃຈການງົດເວັ້ນຈາກການລັກຊັບ

໗. ຕົນເອງເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ

໘. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການປະພຶດຜິດໃນກາມ

໙. ເປັນຜູ້ພໍໃຈການງົດເວັ້ນຈາກການປະພຶດຜິດໃນກາມ

໑໐. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຕົວະ

໑໑. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າຕົວະ

໑໒. ເປັນຜູ້ພໍໃຈການງົດເວັ້ນຈາກການເວົ້າຕົວະ

໑໓. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າສັບສໍ່

໑໔. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າສັບສໍ່

໑໕. ເປັນຜູ້ພໍໃຈການງົດເວັ້ນຈາກການເວົ້າສັບສໍ່

໑໖. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຄຳຫຍາບ

໑໗. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າຄຳຫຍາບ

໑໘. ເປັນຜູ້ພໍໃຈການງົດເວັ້ນຈາກການເວົ້າຄຳຫຍາບ

໑໙. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າບໍ່ມີສາຣະ

໔໐. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າບໍ່ມີສາຣະ
໔໑. ເປັນຜູ້ພໍໃຈການງົດເວັ້ນຈາກການເວົ້າບໍ່ມີສາຣະ
໔໒. ຕົນເອງເປັນຜູ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ
໔໓. ຊັກຊວນຜູ້ອື່ນໃຫ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ
໔໔. ເປັນຜູ້ພໍໃຈຄວາມບໍ່ເພ່ງເລັງຢາກໄດ້ຂອງເຂົາ
໔໕. ຕົນເອງເປັນຜູ້ມີຈິດບໍ່ພະຍາບາດ
໔໖. ຊັກຊວນຜູ້ອື່ນໃຫ້ມີຈິດບໍ່ພະຍາບາດ
໔໗. ເປັນຜູ້ພໍໃຈຄວາມມີຈິດບໍ່ພະຍາບາດ
໔໘. ຕົນເອງເປັນສໍາມາທິດຖິ
໔໙. ຊັກຊວນຜູ້ອື່ນໃຫ້ເປັນສໍາມາທິດຖິ
໕໐. ເປັນຜູ້ພໍໃຈຄວາມເປັນສໍາມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທໍາ ໕໐ ປະການນີ້ແລ ຍ່ອມດໍາລົງຢູ່ໃນສະຫວັນ ຄື ໄດ້ຮັບອັນເຊີນໄປປະດິດສະຖານໄວ້ (໓)

## ທໍາທີ່ໃຫ້ສັດເກີດໃນນະຣົກ ໔໐ ປະການ

[໒໒໔] ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທໍາ ໔໐ ປະການ ຍ່ອມດໍາລົງຢູ່ໃນນະຣົກ ຄື ຖືກນໍາໄປຝັງໄວ້

ທໍາ ໔໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ຂ້າສັດ
໒. ຊັກຊວນຜູ້ອື່ນໃຫ້ຂ້າສັດ
໓. ເປັນຜູ້ພໍໃຈການຂ້າສັດ
໔. ສັນເສີນການຂ້າສັດ
໕. ຕົນເອງເປັນຜູ້ລັກຊັບ
໖. ຊັກຊວນຜູ້ອື່ນໃຫ້ລັກຊັບ
໗. ເປັນຜູ້ພໍໃຈການລັກຊັບ
໘. ສັນເສີນການລັກຊັບ
໙. ຕົນເອງເປັນຜູ້ປະພຶດຜິດໃນກາມ
໑໐. ຊັກຊວນຜູ້ອື່ນໃຫ້ປະພຶດຜິດໃນກາມ
໑໑. ເປັນຜູ້ພໍໃຈການປະພຶດຜິດໃນກາມ

໑໒. ສັນເສີນການປະພຶດຜິດໃນກາມ
໑໓. ຕົນເອງເປັນຜູ້ເວົ້າຕົວະ
໑໔. ຊັກຊວນຜູ້ອື່ນໃຫ້ເວົ້າຕົວະ
໑໕. ເປັນຜູ້ພໍໃຈການເວົ້າຕົວະ
໑໖. ສັນເສີນການເວົ້າຕົວະ
໑໗. ຕົນເອງເປັນຜູ້ເວົ້າສັບສໍ່
໑໘. ຊັກຊວນຜູ້ອື່ນໃຫ້ເວົ້າສັບສໍ່
໑໙. ເປັນຜູ້ພໍໃຈການເວົ້າສັບສໍ່
໒໐. ສັນເສີນການເວົ້າສັບສໍ່
໒໑. ຕົນເອງເປັນຜູ້ເວົ້າຄໍາຫຍາບ
໒໒. ຊັກຊວນຜູ້ອື່ນໃຫ້ເວົ້າຄໍາຫຍາບ
໒໓. ເປັນຜູ້ພໍໃຈການເວົ້າຄໍາຫຍາບ
໒໔. ສັນເສີນການເວົ້າຄໍາຫຍາບ
໒໕. ຕົນເອງເປັນຜູ້ເວົ້າບໍ່ມີສາຣະ
໒໖. ຊັກຊວນຜູ້ອື່ນໃຫ້ເວົ້າບໍ່ມີສາຣະ
໒໗. ເປັນຜູ້ພໍໃຈການເວົ້າບໍ່ມີສາຣະ
໒໘. ສັນເສີນການເວົ້າບໍ່ມີສາຣະ
໒໙. ຕົນເອງເປັນຜູ້ເພ່ງເລັງຢາກໄດ້ຂອງເຂົາ
໓໐. ຊັກຊວນຜູ້ອື່ນໃຫ້ເພ່ງເລັງຢາກໄດ້ຂອງເຂົາ
໓໑. ເປັນຜູ້ພໍໃຈຄວາມເພ່ງເລັງຢາກໄດ້ຂອງເຂົາ
໓໒. ສັນເສີນຄວາມເພ່ງເລັງຢາກໄດ້ຂອງເຂົາ
໓໓. ຕົນເອງເປັນຜູ້ມີຈິດພະຍາບາດ
໓໔. ຊັກຊວນຜູ້ອື່ນໃຫ້ມີຈິດພະຍາບາດ
໓໕. ເປັນຜູ້ພໍໃຈຄວາມມີຈິດພະຍາບາດ
໓໖. ສັນເສີນຄວາມມີຈິດພະຍາບາດ
໓໗. ຕົນເອງເປັນມິດສາທິດຖິ
໓໘. ຊັກຊວນຜູ້ອື່ນໃຫ້ເປັນມິດສາທິດຖິ
໓໙. ເປັນຜູ້ພໍໃຈຄວາມເປັນມິດສາທິດຖິ
໔໐. ສັນເສີນຄວາມເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທໍາ ໔໐ ປະການນີ້ແລ ຍ່ອມດໍາລົງຢູ່ໃນນະຣົກຄືຖືກນໍາໄປຝັງໄວ້

## ທຳທີ່ໃຫ້ສັດເກີດໃນສະຫວັນ ໔໐ ປະການ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໔໐ ປະການ ຍ່ອມດຳລົງຢູ່ໃນສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້

ທຳ ໔໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ
໒. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການຂ້າສັດ
໓. ເປັນຜູ້ພໍໃຈການງົດເວັ້ນຈາກການຂ້າສັດ
໔. ສັນເສີນການງົດເວັ້ນຈາກການຂ້າສັດ
໕. ຕົນເອງເປັນຜູ້ເວັ້ນຂາດຈາກການລັກຊັບ
໖. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການລັກຊັບ
໗. ເປັນຜູ້ພໍໃຈການງົດເວັ້ນຈາກການລັກຊັບ
໘. ສັນເສີນການງົດເວັ້ນຈາກການລັກຊັບ
໙. ຕົນເອງເປັນຜູ້ເວັ້ນຂາດຈາກການປະພຶດຜິດໃນກາມ
໑໐. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການປະພຶດຜິດໃນກາມ
໑໑. ເປັນຜູ້ພໍໃຈການງົດເວັ້ນຈາກການປະພຶດຜິດໃນກາມ
໑໒. ສັນເສີນການງົດເວັ້ນຈາກການປະພຶດຜິດໃນກາມ
໑໓. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຕົວະ
໑໔. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າຕົວະ
໑໕. ເປັນຜູ້ພໍໃຈການງົດເວັ້ນຈາກການເວົ້າຕົວະ
໑໖. ສັນເສີນການງົດເວັ້ນຈາກການເວົ້າຕົວະ
໑໗. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າສັບສໍ່
໑໘. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າສັບສໍ່
໑໙. ເປັນຜູ້ພໍໃຈໃນການງົດເວັ້ນຈາກການເວົ້າສັບສໍ່
໒໐. ສັນເສີນການງົດເວັ້ນຈາກການເວົ້າສັບສໍ່
໒໑. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າຄຳຫຍາບ
໒໒. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າຄຳຫຍາບ
໒໓. ເປັນຜູ້ພໍໃຈການງົດເວັ້ນຈາກການເວົ້າຄຳຫຍາບ
໒໔. ສັນເສີນການງົດເວັ້ນຈາກການເວົ້າຄຳຫຍາບ
໒໕. ຕົນເອງເປັນຜູ້ເວັ້ນຂາດຈາກການເວົ້າບໍ່ມີສາລະ
໒໖. ຊັກຊວນຜູ້ອື່ນໃຫ້ງົດເວັ້ນຈາກການເວົ້າບໍ່ມີສາລະ

໒໗. ເປັນຜູ້ພໍໃຈການງົດເວັ້ນຈາກການເວົ້າບໍ່ມີສາຣະ
໒໘. ສັນເສີນການງົດເວັ້ນຈາກການເວົ້າບໍ່ມີສາຣະ
໒໙. ຕົນເອງເປັນຜູ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ
໓໐. ຊັກຊວນຜູ້ອື່ນໃຫ້ບໍ່ເພ່ງເລັງຢາກໄດ້ຂອງເຂົາ
໓໑. ເປັນຜູ້ພໍໃຈຄວາມບໍ່ເພ່ງເລັງຢາກໄດ້ຂອງເຂົາ
໓໒. ສັນເສີນຄວາມບໍ່ເພ່ງເລັງຢາກໄດ້ຂອງເຂົາ
໓໓. ຕົນເອງເປັນຜູ້ມີຈິດບໍ່ພະຍາບາດ
໓໔. ຊັກຊວນຜູ້ອື່ນໃຫ້ມີຈິດບໍ່ພະຍາບາດ
໓໕. ເປັນຜູ້ພໍໃຈຄວາມມີຈິດບໍ່ພະຍາບາດ
໓໖. ສັນເສີນຄວາມມີຈິດບໍ່ພະຍາບາດ
໓໗. ຕົນເອງເປັນສຳມາທິດຖິ
໓໘. ຊັກຊວນຜູ້ອື່ນໃຫ້ເປັນສຳມາທິດຖິ
໓໙. ເປັນຜູ້ພໍໃຈຄວາມເປັນສຳມາທິດຖິ
໔໐. ສັນເສີນຄວາມເປັນສຳມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໔໐ ປະການນີ້ແລ ຍ່ອມດຳລົງຢູ່ໃນ ສະຫວັນ ຄືໄດ້ຮັບອັນເຊີນໄປປະດິດສະຖານໄວ້ (໔)

## ທຳທີ່ໃຫ້ຖືກກຳຈັດ ແລະທີ່ບໍ່ໃຫ້ຖືກກຳຈັດ

[໒໒໕-໒໒໘] ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ

ທຳ ໑໐ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າສັດ ຯລຯ ໑໐. ເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ແລ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ

ບຸກຄົນປະກອບດ້ວຍທຳ ໑໐ ປະການ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ

ທຳ ໑໐ ປະການ ອັນໃດແດ່ ຄື

໑. ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ໑໐. ເປັນສຳມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ແລ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ

ບຸກຄົນປະກອບດ້ວຍທຳ ໒໐ ປະການ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ

ທຳ ໒໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ຂ້າສັດ
ຯລຯ
໒໐. ຊັກຊວນຜູ້ອື່ນໃຫ້ເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໒໐ ປະການນີ້ແລ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ

ບຸກຄົນປະກອບດ້ວຍທຳ ໒໐ ປະການ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ

ທຳ ໒໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ
ຯລຯ
໒໐. ຊັກຊວນຜູ້ອື່ນໃຫ້ເປັນສຳມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໒໐ ປະການນີ້ແລ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ

ບຸກຄົນປະກອບດ້ວຍທຳ ໓໐ ປະການ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ

ທຳ ໓໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ຂ້າສັດ
ຯລຯ
໓໐. ເປັນຜູ້ພໍໃຈຄວາມເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓໐ ປະການນີ້ແລ ຍ່ອມບໍລິຫານຕົນໃຫ້ ຖືກກຳຈັດ ຖືກທຳລາຍ

ບຸກຄົນປະກອບດ້ວຍທຳ ໓໐ ປະການ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ

ທຳ ໓໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ

ฯลฯ

໓໐. ເປັນຜູ້ພໍໃຈຄວາມເປັນ ສຳມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓໐ ປະການນີ້ແລ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ

ບຸກຄົນປະກອບດ້ວຍທຳ ໔໐ ປະການ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ

ທຳ ໔໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ຂ້າສັດ

ฯลฯ

໔໐. ສັນເສີນຄວາມເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໔໐ ປະການນີ້ແລ ຍ່ອມບໍລິຫານຕົນໃຫ້ຖືກກຳຈັດ ຖືກທຳລາຍ

ບຸກຄົນປະກອບດ້ວຍທຳ ໔໐ ປະການ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ

ທຳ ໔໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ

ฯลฯ

໔໐. ສັນເສີນຄວາມເປັນສຳມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໔໐ ປະການນີ້ແລ ຍ່ອມບໍລິຫານຕົນບໍ່ໃຫ້ຖືກກຳຈັດ ບໍ່ໃຫ້ຖືກທຳລາຍ (໕-໘)

## ທຳທີ່ໃຫ້ເກີດໃນອະບາຍ ແລະທີ່ໃຫ້ເກີດໃນສະຫວັນ

[໔໔໙-໔໖໔] ພິກຂຸທັງຫຼາຍ ບຸກຄົນລາງຄົນໃນໂລກນີ້ປະກອບດ້ວຍທຳ ໑໐ ປະການ ຫຼັງຈາກຕາຍແລ້ວ ເຂົາຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ທຳ ໑໐ ປະການ ອັນໃດແດ່ ຄື

໑. ເປັນຜູ້ຂ້າສັດ ຯລຯ ໑໐. ເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ແລ ຫຼັງຈາກຕາຍແລ້ວ ເຂົາຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ບຸກຄົນລາງຄົນໃນໂລກນີ້ປະກອບດ້ວຍທຳ ໑໐ ປະການ ຫຼັງຈາກຕາຍແລ້ວ ເຂົາຈະໄປເກີດໃນສຸກຄະຕິໂລກສະຫວັນ

ທຳ ໑໐ ປະການ ອັນໃດແດ່ ຄື

໑. ເປັນຜູ້ເວັ້ນຂາດຈາກການຂ້າສັດ ຯລຯ ໑໐. ເປັນສຳມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ແລ ຫຼັງຈາກຕາຍແລ້ວເຂົາຈະໄປເກີດໃນສຸກຄະຕິໂລກສະຫວັນ

ບຸກຄົນລາງຄົນໃນໂລກນີ້ປະກອບດ້ວຍທຳ ໒໐ ປະການ ຫຼັງຈາກຕາຍແລ້ວ ເຂົາ ຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ທຳ ໒໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ຂ້າສັດ
ຯລຯ
໒໐. ຊັກຊວນຜູ້ອື່ນໃຫ້ເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໒໐ ປະການນີ້ແລ ຫຼັງຈາກຕາຍແລ້ວເຂົາຈະໄປບັງເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ບຸກຄົນລາງຄົນໃນໂລກນີ້ປະກອບດ້ວຍທຳ ໒໐ ປະການ ຫຼັງຈາກຕາຍແລ້ວ ເຂົາຈະໄປບັງເກີດໃນສຸກຄະຕິໂລກສະຫວັນ

ທຳ ໒໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ

ຯລຯ

໒໐. ຊັກຊວນຜູ້ອື່ນໃຫ້ເປັນສຳມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໒໐ ປະການນີ້ແລ ຫຼັງຈາກຕາຍແລ້ວເຂົາຈະໄປເກີດໃນສຸກຄະຕິໂລກສະຫວັນ

ບຸກຄົນລາງຄົນໃນໂລກນີ້ປະກອບດ້ວຍທຳ ໓໐ ປະການ ຫຼັງຈາກຕາຍແລ້ວ ເຂົາຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ທຳ ໓໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ຂ້າສັດ

ຯລຯ

໓໐. ເປັນຜູ້ພໍໃຈຄວາມເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓໐ ປະການນີ້ແລ ຫຼັງຈາກຕາຍແລ້ວເຂົາຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ບຸກຄົນລາງຄົນໃນໂລກນີ້ປະກອບດ້ວຍທຳ ໓໐ ປະການ ຫຼັງຈາກຕາຍແລ້ວ ເຂົາຈະໄປເກີດໃນສຸກຄະຕິໂລກສະຫວັນ

ທຳ ໓໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ

ຯລຯ

໓໐. ເປັນຜູ້ພໍໃຈຄວາມເປັນ ສຳມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໓໐ ປະການນີ້ແລ ຫຼັງຈາກຕາຍແລ້ວເຂົາຈະໄປເກີດໃນສຸກຄະຕິໂລກສະຫວັນ

ບຸກຄົນລາງຄົນໃນໂລກນີ້ປະກອບດ້ວຍທຳ ໔໐ ປະການ ຫຼັງຈາກຕາຍແລ້ວ ເຂົາຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ທຳ ໔໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ຂ້າສັດ

ฯลฯ

໔໐. ສັນເສີນຄວາມເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໔໐ ປະການນີ້ແລ ຫຼັງຈາກຕາຍແລ້ວເຂົາຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ບຸກຄົນລາງຄົນໃນໂລກນີ້ ປະກອບດ້ວຍທຳ ໔໐ ປະການ ຫຼັງຈາກຕາຍແລ້ວ ເຂົາຈະໄປເກີດໃນສຸກຄະຕິໂລກສະຫວັນ

ທຳ ໔໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ

ฯลฯ

໔໐. ສັນເສີນຄວາມເປັນ ສຳມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໔໐ ປະການນີ້ແລ ຫຼັງຈາກຕາຍແລ້ວເຂົາຈະໄປເກີດໃນສຸກຄະຕິໂລກສະຫວັນ (ຓ-໑໘)

ທຳທີ່ໃຫ້ຮູ້ວ່າເປັນພາລ ແລະທີ່ໃຫ້ຮູ້ວ່າເປັນບັນດິດ

[໘໓໓-໘໓໖] ບຸກຄົນປະກອບດ້ວຍທຳ ໑໐ ປະການ ເພິ່ງຮູ້ວ່າເປັນພາລ

ທຳ ໑໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ຂ້າສັດ ฯลฯ ໑໐. ເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ແລ ເພິ່ງຮູ້ວ່າເປັນພາລ

ບຸກຄົນປະກອບດ້ວຍທຳ ໑໐ ປະການ ເພິ່ງຮູ້ວ່າເປັນບັນດິດ

ທຳ ໑໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ

ฯลฯ

໑໐. ເປັນສຳມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໑໐ ປະການນີ້ແລ ເພິ່ງຮູ້ວ່າເປັນບັນດິດ

ບຸກຄົນປະກອບດ້ວຍທຳ ໒໐ ປະການ ເພິ່ງຮູ້ວ່າເປັນພາລ

ທຳ ໒໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ຂ້າສັດ

ຯລຯ

໒໐. ຊັກຊວນຜູ້ອື່ນໃຫ້ເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໒໐ ປະການນີ້ແລ ເພິ່ງຮູ້ວ່າ ເປັນພາລ

ບຸກຄົນປະກອບດ້ວຍທຳ ໒໐ ປະການ ເພິ່ງຮູ້ວ່າເປັນບັນດິດ

ທຳ ໒໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ

ຯລຯ

໒໐. ຊັກຊວນຜູ້ອື່ນໃຫ້ເປັນສຳມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໒໐ ປະການນີ້ແລ ເພິ່ງຮູ້ວ່າເປັນບັນດິດ

ບຸກຄົນປະກອບດ້ວຍທຳ ໓໐ ປະການ ເພິ່ງຮູ້ວ່າເປັນພາລ

ທຳ ໓໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ຂ້າສັດ

ຯລຯ

໓໐. ເປັນຜູ້ພໍໃຈຄວາມເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທຳ ໒໐ ປະການນີ້ແລ ເພິ່ງຮູ້ວ່າ ເປັນພາລ

ບຸກຄົນປະກອບດ້ວຍທຳ ໓໐ ປະການ ເພິ່ງຮູ້ວ່າເປັນບັນດິດ

ທຳ ໓໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ

ຯລຯ

໓໐. ເປັນຜູ້ພໍໃຈຄວາມເປັນ ສໍາມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທໍາ ໓໐ ປະການນີ້ແລ ເພິ່ງຮູ້ວ່າເປັນ ບັນດິດ

ບຸກຄົນປະກອບດ້ວຍທໍາ ໔໐ ປະການ ເພິ່ງຮູ້ວ່າເປັນພາລ

ທໍາ ໔໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ຂ້າສັດ

ຯລຯ

໔໐. ສັນເສີນຄວາມເປັນມິດສາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທໍາ ໔໐ ປະການນີ້ແລ ເພິ່ງຮູ້ວ່າ ເປັນພາລ

ບຸກຄົນປະກອບດ້ວຍທໍາ ໔໐ ປະການ ເພິ່ງຮູ້ວ່າເປັນບັນດິດ

ທໍາ ໔໐ ປະການ ອັນໃດແດ່ ຄື

໑. ຕົນເອງເປັນຜູ້ເວັ້ນຂາດຈາກການຂ້າສັດ

ຯລຯ

໔໐. ສັນເສີນຄວາມເປັນ ສໍາມາທິດຖິ

ພິກຂຸທັງຫຼາຍ ບຸກຄົນປະກອບດ້ວຍທໍາ ໔໐ ປະການນີ້ແລ ເພິ່ງຮູ້ວ່າເປັນ ບັນດິດ (໑໓-໑໖)

**ສາມັນຍະວັກທີ ໔ ຈົບ**

(ເພິ່ງຮູ້ການນັບສູດໃນວັກທີ ໔ ແລະທີ ໕ ນີ້ ຕາມທີ່ ຯລຯ ໄວ້)

# ຣາຄະເປີຍຍາລະ

[໔໓໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທໍາ ໑໐ ປະການ ເພື່ອຮູ້ຍິ່ງຣາຄະ (ຄວາມກໍາໜັດ)

ທໍາ ໑໐ ປະການ ອັນໃດແດ່ ຄື

໑. ອະສຸພະສັນຍາ (ກໍານົດໝາຍຄວາມບໍ່ງາມແຫ່ງກາຍ)

໒. ມໍຣະນະສັນຍາ (ກໍານົດໝາຍຄວາມຕາຍທີ່ຈະຕ້ອງມາເຖິງເປັນທໍາມະດາ)

໓. ອາຫາເຣ ປະຕິກູນສັນຍາ (ກຳນົດໝາຍຄວາມປະຕິກູນໃນອາຫານ)
໔. ສັບພະໂລເກ ອະນະພິຣະຕະສັນຍາ (ກຳນົດໝາຍຄວາມບໍ່ໜ້າເພີດເພີນໃນໂລກທັງປວງ)
໕. ອະນິດຈະສັນຍາ (ກຳນົດໝາຍຄວາມບໍ່ທ່ຽງແທ່ງສັງຂານ)
໖. ອະນິດເຈ ທຸກຂະສັນຍາ (ກຳນົດໝາຍຄວາມທຸກໃນຄວາມບໍ່ທ່ຽງແທ່ງສັງຂານ)
໗. ທຸກເຂ ອະນັດຕະສັນຍາ (ກຳນົດໝາຍຄວາມເປັນອະນັດຕາໃນຄວາມເປັນທຸກ)
໘. ປະຫານະສັນຍາ (ກຳນົດໝາຍເພື່ອລະອະກຸສົນວິຕົກແລະບາບທຳທັງຫຼາຍ)
໙. ວິຣາຄະສັນຍາ (ກຳນົດໝາຍວິຣາຄະວ່າເປັນທຳລະອຽດປະນີດ)
໑໐. ນິໂຣທະສັນຍາ (ກຳນົດໝາຍນິໂຣດວ່າເປັນທຳລະອຽດປະນີດ)

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໑໐ ປະການນີ້ ເພື່ອຮູ້ຍິ່ງຣາຄະ (໑)

[໔໓໗] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໑໐ ປະການ ເພື່ອຮູ້ຍິ່ງຣາຄະ

ທຳ ໑໐ ປະການ ອັນໃດແດ່ ຄື

໑. ອະນິດຈະສັນຍາ
໒. ອະນັດຕະສັນຍາ
໓. ອາຫາເຣ ປະຕິກູນສັນຍາ
໔. ສັບພະໂລເກ ອະນະພິຣະຕະສັນຍາ
໕. ອັດຖິກະສັນຍາ (ກຳນົດໝາຍຊາກສົບທີ່ຍັງເຫຼືອຢູ່ ແຕ່ຮ່າງກະດູກຫຼືກະດູກທ່ອນ)
໖. ປຸລຸວະກະສັນຍາ (ກຳນົດໝາຍຊາກສົບທີ່ມີໜອນຈຳນວນຫຼາຍເຕັມໄປໝົດ)
໗. ວິນີລະກະສັນຍາ (ກຳນົດໝາຍຊາກສົບທີ່ມີສີຂຽວເຄັ້ມປົນດ້ວຍສີຕ່າງ ໆ)
໘. ວິປຸບພະກະສັນຍາ (ກຳນົດໝາຍຊາກສົບທີ່ມີນ້ຳເຫຼືອງໄຫຼຍ້ອຍຢູ່ຕາມທີ່ແຕກຍະອອກ)
໙. ວິດສິດທະກະສັນຍາ (ກຳນົດໝາຍຊາກສົບທີ່ຂາດຈາກກັນເປັນ ໒ ທ່ອນ)
໑໐. ອຸດທຸມາຕະກະສັນຍາ (ກຳນົດໝາຍຊາກສົບທີ່ເນົ່າພອງໄຄ່ເບັງ)

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໑໐ ປະການນີ້ ເພື່ອຮູ້ຍິ່ງຣາຄະ (໒)

[໔໓໙] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໑໐ ປະການ ເພື່ອຮູ້ຍິ່ງຣາຄະ

ທຳ ໑໐ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ (ເຫັນຖືກ)
໒. ສຳມາສັງກັບປະ (ຄິດຖືກ)
໓. ສຳມາວາຈາ (ເຈຣະຈາຖືກ)
໔. ສຳມາກຳມັນຕະ (ການງານຖືກ)
໕. ສຳມາອາຊີວະ (ລ້ຽງຊີວິດຖືກ)
໖. ສຳມາວາຍາມະ (ພະຍາຍາມຖືກ)
໗. ສຳມາສະຕິ (ຣະນຶກຖືກ)
໘. ສຳມາສະມາທິ (ຕັ້ງຈິດໝັ້ນຖືກ)
໙. ສຳມາຍານະ (ຮູ້ຖືກ)
໑໐. ສຳມາວິມຸດຕິ (ລຸດພົ້ນຖືກ)

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໑໐ ປະການນີ້ ເພື່ອຮູ້ຍິ່ງຣາຄະ (໓)

[໒໔໐-໒໖໖] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໑໐ ປະການ ເພື່ອກຳນົດຮູ້ຣາຄະ

ຯລຯ ເພື່ອຄວາມສິ້ນຣາຄະ
ຯລຯ ເພື່ອລະຣາຄະ
ຯລຯ ເພື່ອຄວາມສິ້ນໄປແຫ່ງຣາຄະ
ຯລຯ ເພື່ອຄວາມເສື່ອມໄປແຫ່ງຣາຄະ
ຯລຯ ເພື່ອຄວາມຄາຍອອກແຫ່ງຣາຄະ
ຯລຯ ເພື່ອຄວາມດັບໄປແຫ່ງຣາຄະ
ຯລຯ ເພື່ອຄວາມສະລະຣາຄະ
ຯລຯ ເພື່ອຄວາມສະລະຄືນຣາຄະ

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໑໐ ປະການນີ້ ເພື່ອຄວາມສະລະຄືນຣາຄະ (໔-໓໐)

[໒໖໗-໗໔໖] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໑໐ ປະການ ເພື່ອຮູ້ຍິ່ງໂທສະ (ຄວາມຄິດປະທຸດສະຮ້າຍ)

ຯລຯ ເພື່ອກຳນົດຮູ້ໂທສະ
ຯລຯ ເພື່ອຄວາມສິ້ນໂທສະ
ຯລຯ ເພື່ອລະໂທສະ
ຯລຯ ເພື່ອຄວາມສິ້ນໄປແຫ່ງໂທສະ
ຯລຯ ເພື່ອຄວາມເສື່ອມໄປແຫ່ງໂທສະ
ຯລຯ ເພື່ອຄວາມຄາຍອອກແຫ່ງໂທສະ
ຯລຯ ເພື່ອຄວາມດັບໄປແຫ່ງໂທສະ

ຯລຯ ເພື່ອຄວາມສະລະໂທສະ
ຯລຯ ເພື່ອຄວາມສະລະຄືນໂທສະ

ຯລຯ ໂມຫະ(ຄວາມຫຼົງ) ຯລຯ ໂກທະ(ຄວາມໂກດ) ຯລຯ ອຸປະນາຫະ(ຄວາມຜູກໂກດ) ຯລຯ ມັກຂະ (ຄວາມລົບຫຼູ່ຄຸນທ່ານ) ຯລຯ ປະລາສະ(ຄວາມຕີສະເໝີ) ຯລຯ ອິດສາ(ຄວາມຣິດສະຫຍາ) ຯລຯ ມັດສະຣິຍະ (ຄວາມຂີ້ຖີ່) ຯລຯ ມາຍາ(ມານຍາ) ຯລຯ ສາເຖຍຍະ(ຄວາມໂອ້ອວດ) ຯລຯ ຖໍາພະ(ຄວາມຫົວດື້) ຯລຯ ສາຣໍາພະ(ຄວາມແຂ່ງດີ) ຯລຯ ມານະ (ຄວາມຖືໂຕ) ຯລຯ ອະຕິມານະ(ຄວາມດູໝິ່ນເຂົາ) ຯລຯ ມະທະ (ຄວາມມົວເມົາ) ຯລຯ ປະມາທະ (ຄວາມຜະໝາດ)

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທໍາ ໑໐ ປະການນີ້ ເພື່ອຄວາມສະລະຄືນປະມາທະ ຯລຯ (໓໑-໔໑໐)

**ຣາຄະເປີຍຍາລະ ຈົບ**

**ປັນຈະມະປັນນາດ ຈົບ**

**ທະສະກະນິບາດ ຈົບບໍລິບູນ**

# ພຣະສູດຕັນຕະປິດົກ

## ອັງຄຸດຕະຣະນິກາຍ ເອກາທະສະກະນິບາດ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກເຈົ້າ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າພຣະອົງນັ້ນ**

## ໑. ນິດສະຍະວັກ

### ໝວດວ່າດ້ວຍນິດໄສ

## ໑. ກິມັດຖິຍະສູດ[១]

### ວ່າດ້ວຍຄໍາຖາມກ່ຽວກັບຜົນແຫ່ງສິນ

[໑] ຂ້າພະເຈົ້າໄດ້ຟັງມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນແລ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ສິນທີ່ເປັນກຸສົນມີອັນໃດເປັນຜົນ ມີອັນໃດເປັນອານິສົງ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ສິນທີ່ເປັນກຸສົນມີອະວິບປະຕິສານ (ຄວາມບໍ່ຮ້ອນໃຈ) ເປັນຜົນ ມີອະວິບປະຕິສານເປັນອານິສົງ"

"ອະວິບປະຕິສານມີອັນໃດເປັນຜົນ ມີອັນໃດເປັນອານິສົງ ຂ້ານ້ອຍ"
"ອານົນ ອະວິບປະຕິສານມີປາໂມດ (ຄວາມບັນເທີງໃຈ) ເປັນຜົນ ມີປາໂມດເປັນອານິສົງ"
"ປາໂມດມີອັນໃດເປັນຜົນ ມີອັນໃດເປັນອານິສົງ ຂ້ານ້ອຍ"
"ອານົນ ປາໂມດມີປີຕິ (ຄວາມອິ່ມໃຈ) ເປັນຜົນ ມີປີຕິເປັນອານິສົງ"
"ປີຕິມີອັນໃດເປັນຜົນ ມີອັນໃດເປັນອານິສົງ ຂ້ານ້ອຍ"
"ອານົນ ປີຕິມີປັດສັດທິ (ຄວາມສະງົບກາຍສະງົບໃຈ) ເປັນຜົນ ມີປັດສັດທິເປັນອານິສົງ"
"ປັດສັດທິມີອັນໃດເປັນຜົນ ມີອັນໃດເປັນອານິສົງ ຂ້ານ້ອຍ"
"ອານົນ ປັດສັດທິມີສຸກເປັນຜົນ ມີສຸກເປັນອານິສົງ"

"ສຸກມີອັນໃດເປັນຜົນ ມີອັນໃດເປັນອານິສົງ ຂ້ານ້ອຍ"

"ອານົນ ສຸກມີສະມາທິເປັນຜົນ ມີສະມາທິເປັນອານິສົງ"

"ສະມາທິມີອັນໃດເປັນຜົນ ມີອັນໃດເປັນອານິສົງ ຂ້ານ້ອຍ"

"ອານົນ ສະມາທິມີຍະຖາພູຕະຍານທັດສະນະ (ຄວາມຮູ້ຄວາມເຫັນຕາມຄວາມເປັນຈິງ) ເປັນຜົນ ມີຍະຖາພູຕະຍານທັດສະນະເປັນອານິສົງ"

"ຍະຖາພູຕະຍານທັດສະນະມີອັນໃດເປັນຜົນ ມີອັນໃດເປັນອານິສົງ ຂ້ານ້ອຍ"

"ອານົນ ຍະຖາພູຕະຍານທັດສະນະມີນິບພິທາ (ຄວາມເບື່ອໜ່າຍ) ເປັນຜົນ ມີນິບພິທາເປັນອານິສົງ"

"ນິບພິທາມີອັນໃດເປັນຜົນ ມີອັນໃດເປັນອານິສົງ ຂ້ານ້ອຍ"

"ອານົນ ນິບພິທາມີວິຣາຄະ (ຄວາມຄາຍກຳໜັດ) ເປັນຜົນ ມີວິຣາຄະເປັນອານິສົງ"

"ວິຣາຄະມີອັນໃດເປັນຜົນ ມີອັນໃດເປັນອານິສົງ ຂ້ານ້ອຍ"

"ອານົນ ວິຣາຄະມີວິມຸດຕິຍານທັດສະນະ (ຄວາມຮູ້ຄວາມເຫັນໃນວິມຸດຕິ)ເປັນຜົນ ມີວິມຸດຕິຍານທັດສະນະເປັນອານິສົງ

ອານົນ ສິນທີ່ເປັນກຸສົນມີອະວິບປະຕິສານເປັນຜົນ ມີອະວິບປະຕິສານເປັນອານິສົງ ອະວິບປະຕິສານມີປາໂມດເປັນຜົນ ມີປາໂມດເປັນອານິສົງ ປາໂມດມີປີຕິເປັນຜົນ ມີປີຕິເປັນອານິສົງ ປີຕິມີປັດສັດທິເປັນຜົນ ມີປັດສັດທິເປັນອານິສົງ ປັດສັດທິມີສຸກເປັນຜົນ ມີສຸກເປັນອານິສົງ ສຸກມີສະມາທິເປັນຜົນ ມີສະມາທິເປັນອານິສົງ ສະມາທິມີຍະຖາພູຕະຍານທັດສະນະເປັນຜົນ ມີຍະຖາພູຕະຍານທັດສະນະເປັນອານິສົງ ຍະຖາພູຕະຍານທັດສະນະມີນິບພິທາເປັນຜົນ ມີນິບພິທາເປັນອານິສົງ ນິບພິທາມີວິຣາຄະເປັນຜົນ ມີວິຣາຄະເປັນອານິສົງ ວິຣາຄະມີວິມຸດຕິຍານທັດສະນະເປັນຜົນ ມີວິມຸດຕິຍານທັດສະນະເປັນອານິສົງ ອານົນ ສິນທີ່ເປັນກຸສົນ ຍ່ອມເຮັດອະຣະຫັດຕະຜົນໃຫ້ບໍລິບູນໂດຍລຳດັບ ແນວນີ້ແລ"

**ກິມັດຖິຍະສູດທີ ໑ ຈົບ**

## ໒. ເຈຕະນາກະຣະນີຍະສູດ

## ວ່າດ້ວຍກຳທີ່ບໍ່ຕ້ອງເຮັດດ້ວຍຄວາມຕັ້ງໃຈ

[໒] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ບຸກຄົນຜູ້ມີສິນ ສົມບູນດ້ວຍສິນ ບໍ່ຕ້ອງຕັ້ງໃຈວ່າ "ຂໍອະວິບປະຕິສານຈົ່ງເກີດຂຶ້ນແກ່ເຮົາ" ການທີ່ອະວິບປະຕິສານເກີດຂຶ້ນແກ່ບຸກຄົນຜູ້ມີສິນ ສົມບູນດ້ວຍສິນນີ້ ເປັນທຳມະດາ[໑]

ບຸກຄົນຜູ້ມີອະວິບປະຕິສານບໍ່ຕ້ອງຕັ້ງໃຈວ່າ “ຂໍປາໂມດຈົ່ງເກີດຂຶ້ນແກ່ເຮົາ” ການທີ່ປາໂມດເກີດຂຶ້ນແກ່ບຸກຄົນຜູ້ມີອະວິບປະຕິສານນີ້ ເປັນທຳມະດາ

ບຸກຄົນຜູ້ມີປາໂມດບໍ່ຕ້ອງຕັ້ງໃຈວ່າ “ຂໍປີຕິຈົ່ງເກີດຂຶ້ນແກ່ເຮົາ” ການທີ່ປີຕິເກີດຂຶ້ນແກ່ບຸກຄົນຜູ້ມີປາໂມດນີ້ ເປັນທຳມະດາ

ບຸກຄົນຜູ້ມີໃຈປະກອບດ້ວຍປີຕິບໍ່ຕ້ອງຕັ້ງໃຈວ່າ “ຂໍກາຍຂອງເຮົາຈົ່ງສະງົບ” ການທີ່ບຸກຄົນຜູ້ມີໃຈປະກອບດ້ວຍປີຕິມີກາຍສະງົບນີ້ ເປັນທຳມະດາ

ບຸກຄົນຜູ້ມີກາຍສະງົບບໍ່ຕ້ອງຕັ້ງໃຈວ່າ “ຂໍເຮົາຈົ່ງສະເຫວີຍສຸກ” ການທີ່ບຸກຄົນຜູ້ມີກາຍສະງົບສະເຫວີຍສຸກນີ້ ເປັນທຳມະດາ

ບຸກຄົນຜູ້ມີສຸກບໍ່ຕ້ອງຕັ້ງໃຈວ່າ “ຂໍຈິດຂອງເຮົາຈົ່ງເປັນສະມາທິ” ການທີ່ບຸກຄົນຜູ້ມີສຸກມີຈິດ ເປັນສະມາທິນີ້ ເປັນທຳມະດາ

ບຸກຄົນຜູ້ມີຈິດເປັນສະມາທິບໍ່ຕ້ອງຕັ້ງໃຈວ່າ “ຂໍເຮົາຈົ່ງຮູ້ເຫັນຕາມຄວາມເປັນຈິງ” ການທີ່ບຸກຄົນຜູ້ມີຈິດເປັນສະມາທິຮູ້ເຫັນຕາມຄວາມເປັນຈິງນີ້ ເປັນທຳມະດາ

ບຸກຄົນຜູ້ຮູ້ເຫັນຕາມຄວາມເປັນຈິງບໍ່ຕ້ອງຕັ້ງໃຈວ່າ “ຂໍເຮົາຈົ່ງເບື່ອໜ່າຍ” ການທີ່ບຸກຄົນຜູ້ຮູ້ເຫັນຕາມຄວາມເປັນຈິງເບື່ອໜ່າຍນີ້ ເປັນທຳມະດາ

ບຸກຄົນຜູ້ເບື່ອໜ່າຍບໍ່ຕ້ອງຕັ້ງໃຈວ່າ “ຂໍເຮົາຈົ່ງຄາຍກຳໜັດ” ການທີ່ບຸກຄົນຜູ້ເບື່ອໜ່າຍຄາຍກຳໜັດນີ້ ເປັນທຳມະດາ

ບຸກຄົນຜູ້ຄາຍກຳໜັດບໍ່ຕ້ອງຕັ້ງໃຈວ່າ “ຂໍເຮົາຈົ່ງເຮັດໃຫ້ແຈ້ງວິມຸດຕິຍານທັດສະນະ” ການທີ່ບຸກຄົນຜູ້ຄາຍກຳໜັດແລ້ວເຮັດໃຫ້ແຈ້ງວິມຸດຕິຍານທັດສະນະນີ້ ເປັນທຳມະດາ

ວິຣາຄະມີວິມຸດຕິຍານທັດສະນະເປັນຜົນ ມີວິມຸດຕິຍານທັດສະນະເປັນອານິສົງ ນິບພິທາມີວິຣາຄະເປັນຜົນ ມີວິຣາຄະເປັນອານິສົງ ຍະຖາພູຕະຍານທັດສະນະມີນິບພິທາເປັນຜົນ ມີນິບພິທາເປັນອານິສົງ ສະມາທິມີຍະຖາພູຕະຍານທັດສະນະເປັນຜົນ ມີຍະຖາພູຕະຍານທັດສະນະເປັນອານິສົງ ສຸກມີສະມາທິເປັນຜົນ ມີສະມາທິເປັນອານິສົງ ປັດສັດທິມີສຸກເປັນຜົນ ມີສຸກເປັນອານິສົງ ປີຕິມີປັດສັດທິເປັນຜົນ ມີປັດສັດທິເປັນອານິສົງ ປາໂມດມີປີຕິເປັນຜົນ ມີປີຕິເປັນອານິສົງ ອະວິບປະຕິສານມີປາໂມດເປັນຜົນ ມີປາໂມດເປັນອານິສົງ ສີນທີ່ເປັນ ກຸສົນມີອະວິບປະຕິສານເປັນຜົນ ມີອະວິບປະຕິສານເປັນອານິສົງ

ພິກຂຸທັງຫຼາຍ ທໍາທັງຫຼາຍຍ່ອມຫຼັ່ງໄຫຼໄປສູ່ທໍາທັງຫຼາຍ ທໍາທັງຫຼາຍຍ່ອມໃຫ້ທໍາທັງຫຼາຍບໍລິບູນເພື່ອອອກຈາກຝັ່ງນີ້ສູ່ຝັ່ງນັ້ນ[๑] ແນວນີ້ແລ

**ເຈຕະນາກະຣະນີຍະສູດທີ ໘ ຈົບ**

## ໓. ປະຖົມອຸປະນິສາສູດ

## ວ່າດ້ວຍທໍາມີເຫດໃຫ້ຖືກກໍາຈັດ ສູດທີ ໑

[໓] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ອະວິບປະຕິສານຂອງບຸກຄົນຜູ້ທຸສີນມີສີນວິບັດຊື່ວ່າມີເຫດຖືກກໍາຈັດແລ້ວ ເມື່ອອະວິບປະຕິສານບໍ່ມີ ປາໂມດຂອງບຸກຄົນຜູ້ມີອະວິບປະຕິສານວິບັດຊື່ວ່າມີເຫດຖືກກໍາຈັດແລ້ວ ເມື່ອປາໂມດບໍ່ມີ ປີຕິຂອງບຸກຄົນຜູ້ມີປາໂມດວິບັດຊື່ວ່າມີເຫດຖືກກໍາຈັດແລ້ວ ເມື່ອປີຕິບໍ່ມີ ປັດສັດທິຂອງບຸກຄົນຜູ້ມີປີຕິວິບັດ ຊື່ວ່າມີເຫດຖືກກໍາຈັດແລ້ວ ເມື່ອປັດສັດທິບໍ່ມີ ສຸກຂອງບຸກຄົນຜູ້ມີປັດສັດທິວິບັດຊື່ວ່າມີເຫດຖືກກໍາຈັດແລ້ວ ເມື່ອສຸກບໍ່ມີ ສໍາມາສະມາທິຂອງບຸກຄົນຜູ້ມີສຸກວິບັດຊື່ວ່າມີເຫດຖືກກໍາຈັດແລ້ວ ເມື່ອສໍາມາສະມາທິບໍ່ມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ມີສໍາມາສະມາທິວິບັດ ຊື່ວ່າ ມີເຫດຖືກກໍາຈັດແລ້ວ ເມື່ອຍະຖາພູຕະຍານທັດສະນະບໍ່ມີ ນິບພິທາຂອງບຸກຄົນຜູ້ມີຍະຖາພູຕະຍານທັດສະນະວິບັດຊື່ວ່າມີເຫດຖືກກໍາຈັດແລ້ວ ເມື່ອນິບພິທາບໍ່ມີ ວິຣາຄະຂອງບຸກຄົນຜູ້ມີນິບພິທາວິບັດ ຊື່ວ່າ ມີເຫດຖືກກໍາຈັດແລ້ວ ເມື່ອວິຣາຄະບໍ່ມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີວິຣາຄະວິບັດ ຊື່ວ່າ ມີເຫດຖືກກໍາຈັດແລ້ວ

ອະວິບປະຕິສານຂອງບຸກຄົນຜູ້ທຸສີນ ມີສີນວິບັດຊື່ວ່າມີເຫດຖືກກໍາຈັດແລ້ວ ເມື່ອອະວິບປະຕິສານ ບໍ່ມີ ປາໂມດຂອງບຸກຄົນຜູ້ມີອະວິບປະຕິສານວິບັດຊື່ວ່າມີເຫດຖືກກໍາຈັດແລ້ວ ฯລฯ ເມື່ອວິຣາຄະ ບໍ່ມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີວິຣາຄະວິບັດ ຊື່ວ່າ ມີເຫດຖືກກໍາຈັດແລ້ວ ປຽບຄື ຕົ້ນໄມ້ທີ່ມີງ່າແລະໃບວິບັດແລ້ວ ເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນຍ່ອມບໍ່ເຖິງຄວາມບໍລິບູນ ສັນນັ້ນ

ອະວິບປະຕິສານຂອງບຸກຄົນຜູ້ມີສີນ ສົມບູນດ້ວຍສີນ ຊື່ວ່າ ມີເຫດສົມບູນ ເມື່ອ ອະວິບປະຕິສານມີ ປາໂມດຂອງບຸກຄົນຜູ້ສົມບູນດ້ວຍອະວິບປະຕິສານຊື່ວ່າມີເຫດສົມບູນ ເມື່ອປາໂມດມີ ປີຕິຂອງບຸກຄົນຜູ້ສົມບູນດ້ວຍປາໂມດຊື່ວ່າມີເຫດສົມບູນ ເມື່ອປີຕິມີ ປັດສັດທິຂອງບຸກຄົນຜູ້ສົມບູນດ້ວຍປີຕິຊື່ວ່າມີເຫດສົມບູນ ເມື່ອປັດສັດທິມີ ສຸກຂອງບຸກຄົນຜູ້ສົມບູນດ້ວຍປັດສັດທິຊື່ວ່າມີເຫດສົມບູນ ເມື່ອສຸກມີ ສໍາມາສະມາທິຂອງບຸກຄົນຜູ້ສົມບູນດ້ວຍສຸກຊື່ວ່າມີເຫດສົມບູນ ເມື່ອສໍາມາສະມາທິມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍສໍາມາສະມາທິຊື່ວ່າມີເຫດ

ສົມບູນ ເມື່ອຍະຖາພູຕະຍານທັດສະນະມີ ນິບພິທາຂອງບຸກຄົນຜູ້ສົມບູນດ້ວຍຍະຖາພູຕະຍານທັດສະນະຊື່ວ່າ ມີເຫດສົມບູນ ເມື່ອນິບພິທາມີ ວິຣາຄະຂອງບຸກຄົນຜູ້ສົມບູນດ້ວຍນິບພິທາຊື່ວ່າມີເຫດສົມບູນ ເມື່ອວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍວິຣາຄະຊື່ວ່າມີເຫດສົມບູນ

ພິກຂຸທັງຫຼາຍ ອະວິບປະຕິສານຂອງບຸກຄົນຜູ້ມີສີນ ສົມບູນດ້ວຍສີນ ຊື່ວ່າມີເຫດສົມ ບູນ ເມື່ອອະວິບປະຕິສານມີ ປາໂມດຂອງບຸກຄົນຜູ້ສົມບູນດ້ວຍອະວິບປະຕິສານຊື່ວ່າ ມີເຫດສົມບູນ ຯລຯ ເມື່ອວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍອະວິບປະຕິສານຊື່ວ່າມີເຫດສົມບູນ ປຽບຄືຕົ້ນໄມ້ທີ່ມີງ່າແລະໃບສົມບູນ ເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນຍ່ອມເຖິງຄວາມບໍລິບູນ ສັນນັ້ນ

**ປະຖົມອຸປະນິສາສູດທີ ๓ ຈົບ**

## ๔. ທຸຕິຍະອຸປະນິສາສູດ

## ວ່າດ້ວຍທຳມີເຫດໃຫ້ຖືກກຳຈັດ ສູດທີ ๔

[๔] ໃນບ່ອນນັ້ນແລ ທ່ານພຣະສາຣີບຸດໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວເລື້ອງນີ້ ວ່າ

ຜູ້ມີອາຍຸທັງຫຼາຍ ອະວິບປະຕິສານຂອງບຸກຄົນຜູ້ທຸສີນ ມີສີນວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອອະວິບປະຕິສານບໍ່ມີ ປາໂມດຂອງບຸກຄົນຜູ້ມີອະວິບປະຕິສານວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອປາໂມດບໍ່ມີ ປີຕິຂອງບຸກຄົນຜູ້ມີປາໂມດວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອປີຕິບໍ່ມີ ປັດສັດທິຂອງບຸກຄົນຜູ້ມີປີຕິວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອປັດສັດທິບໍ່ມີ ສຸກຂອງບຸກຄົນຜູ້ມີປັດສັດທິວິບັດຊື່ວ່າ ມີເຫດຖືກກຳຈັດແລ້ວ ເມື່ອສຸກບໍ່ມີ ສຳມາສະມາທິຂອງບຸກຄົນຜູ້ມີສຸກວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອສຳມາສະມາທິບໍ່ມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ມີສຳມາສະມາທິວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອຍະຖາພູຕະຍານທັດສະນະບໍ່ມີ ນິບພິທາຂອງບຸກຄົນຜູ້ມີຍະຖາພູຕະຍານທັດສະນະວິບັດຊື່ວ່າ ມີເຫດຖືກກຳຈັດແລ້ວ ເມື່ອນິບພິທາບໍ່ມີ ວິຣາຄະຂອງບຸກຄົນຜູ້ມີນິບພິທາວິບັດຊື່ວ່າ ມີເຫດຖືກກຳຈັດແລ້ວ ເມື່ອວິຣາຄະບໍ່ມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີວິຣາຄະວິບັດຊື່ວ່າມີເຫດຖືກກຳຈັດແລ້ວ

ອະວິບປະຕິສານຂອງບຸກຄົນຜູ້ທຸສີນ ມີສີນວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອອະວິບປະຕິສານ ບໍ່ມີ ປາໂມດຂອງບຸກຄົນຜູ້ມີອະວິບປະຕິສານວິບັດຊື່ວ່າ ມີເຫດຖືກກຳຈັດແລ້ວ ຯລຯ ເມື່ອວິຣາຄະ ບໍ່ມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີວິຣາຄະວິບັດຊື່ວ່າ ມີເຫດຖືກກຳຈັດ

แล้ว ປງບຄື ຕົ້ນໄມ້ທີ່ມີງ່າແລະໃບວິບັດແລ້ວ ເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນ ຍ່ອມບໍ່ເຖິງຄວາມບໍລິບູນ ສັນນັ້ນ

ອະວິບປະຕິສານຂອງບຸກຄົນຜູ້ມີສິນ ສົມບູນດ້ວຍສິນຊື່ວ່າມີເຫດສົມບູນ ເມື່ອອະວິບປະຕິສານມີ ປາໂມດຂອງບຸກຄົນຜູ້ສົມບູນດ້ວຍອະວິບປະຕິສານຊື່ວ່າມີເຫດສົມບູນ ເມື່ອປາໂມດມີ ປີຕິຂອງບຸກຄົນຜູ້ສົມບູນດ້ວຍປາໂມດຊື່ວ່າມີເຫດສົມບູນ ເມື່ອປີຕິມີ ປັດສັດທິຂອງບຸກຄົນຜູ້ສົມບູນດ້ວຍປີຕິຊື່ວ່າມີເຫດສົມບູນ ເມື່ອປັດສັດທິມີ ສຸກຂອງບຸກຄົນຜູ້ສົມບູນດ້ວຍປັດສັດທິຊື່ວ່າມີເຫດສົມບູນ ເມື່ອສຸກມີສຳມາສະມາທິຂອງບຸກຄົນຜູ້ສົມບູນດ້ວຍສຸກຊື່ວ່າມີເຫດສົມບູນ ເມື່ອສຳມາສະມາທິມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍສຳມາສະມາທິຊື່ວ່າມີເຫດສົມບູນ ເມື່ອຍະຖາພູຕະຍານທັດສະນະມີ ນິບພິທາຂອງບຸກຄົນຜູ້ສົມບູນດ້ວຍຍະຖາພູຕະຍານທັດສະນະຊື່ວ່າມີເຫດສົມບູນ ເມື່ອນິບພິທາມີ ວິຣາຄະຂອງບຸກຄົນຜູ້ສົມບູນດ້ວຍນິບພິທາຊື່ວ່າມີເຫດສົມບູນ ເມື່ອວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍວິຣາຄະຊື່ວ່າມີເຫດສົມບູນ

ຜູ້ມີອາຍຸທັງຫຼາຍ ອະວິບປະຕິສານຂອງບຸກຄົນຜູ້ມີສິນ ສົມບູນດ້ວຍສິນຊື່ວ່າມີເຫດສົມບູນ ເມື່ອອະວິບປະຕິສານມີ ປາໂມດຂອງບຸກຄົນຜູ້ສົມບູນດ້ວຍອະວິບປະຕິສານຊື່ວ່າມີເຫດສົມບູນ ຯລຯ ເມື່ອວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍວິຣາຄະຊື່ວ່າມີເຫດສົມບູນ ປຽບຄື ຕົ້ນໄມ້ທີ່ມີງ່າແລະໃບສົມບູນ ເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນຍ່ອມເຖິງຄວາມບໍລິບູນ ສັນນັ້ນ

**ທຸຕິຍະອຸປະນິສາສູດທີ ๔ ຈົບ**

## ๕. ຕະຕິຍະອຸປະນິສາສູດ

## ວ່າດ້ວຍທຳມີເຫດໃຫ້ຖືກກຳຈັດ ສູດທີ ๓

[๕] ໃນບ່ອນນັ້ນແລ ທ່ານພຣະອານົນ ຮຽກພິກຂຸທັງຫຼາຍມາກ່າວວ່າ ຯລຯ ທ່ານພຣະອານົນຈຶ່ງໄດ້ກ່າວເລື້ອງນີ້ ວ່າ

ຜູ້ມີອາຍຸທັງຫຼາຍ ອະວິບປະຕິສານຂອງບຸກຄົນຜູ້ທຸສິນ ມີສິນວິບັດຊື່ວ່າມີເຫດຖືກ ກຳຈັດແລ້ວ ເມື່ອອະວິບປະຕິສານບໍ່ມີ ປາໂມດຂອງບຸກຄົນຜູ້ມີອະວິບປະຕິສານວິບັດຊື່ວ່າ ມີເຫດຖືກກຳຈັດແລ້ວ ເມື່ອປາໂມດບໍ່ມີ ປີຕິຂອງບຸກຄົນຜູ້ມີປາໂມດວິບັດຊື່ວ່າມີເຫດຖືກ ກຳຈັດແລ້ວ ເມື່ອປີຕິບໍ່ມີ ປັດສັດທິຂອງບຸກຄົນຜູ້ມີປີຕິວິບັດຊື່ວ່າ ມີເຫດຖືກກຳຈັດແລ້ວ ເມື່ອປັດສັດທິບໍ່ມີ ສຸກຂອງບຸກຄົນຜູ້ມີປັດສັດທິວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອສຸກບໍ່ມີ ສຳມາສະມາທິຂອງບຸກຄົນຜູ້ມີສຸກວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອສຳມາສະມາທິບໍ່ມີ ຍະຖາພູຕະຍານທັດສະນະຂອງ

ບຸກຄົນຜູ້ມີສຳມາສະມາທິວິບັດຊື່ວ່າ ມີເຫດຖືກກຳຈັດແລ້ວ ເມື່ອຍະຖາພູຕະຍານທັດສະນະບໍ່ມີນິບພິທາຂອງບຸກຄົນຜູ້ມີຍະຖາພູຕະຍານທັດສະນະວິບັດຊື່ວ່າ ມີເຫດຖືກກຳຈັດແລ້ວ ເມື່ອນິບພິທາບໍ່ມີ ວິຣາຄະຂອງບຸກຄົນຜູ້ມີນິບພິທາວິບັດຊື່ວ່າມີເຫດຖືກ ກຳຈັດແລ້ວ ເມື່ອວິຣາຄະບໍ່ມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີວິຣາຄະວິບັດຊື່ວ່າ ມີເຫດຖືກກຳຈັດແລ້ວ

ອະວິບປະຕິສານຂອງບຸກຄົນຜູ້ທຸສິນ ມີສິນວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ເມື່ອອະວິບປະຕິສານ ບໍ່ມີ ປາໂມດຂອງບຸກຄົນຜູ້ມີອະວິບປະຕິສານວິບັດຊື່ວ່າມີເຫດຖືກກຳຈັດແລ້ວ ຯລຯ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ມີວິຣາຄະວິບັດຊື່ວ່າ ມີເຫດຖືກກຳຈັດແລ້ວ ປຽບຄື ຕົ້ນໄມ້ທີ່ມີງ່າແລະໃບວິບັດແລ້ວ ເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນຍ່ອມບໍ່ເຖິງຄວາມ ບໍລິບູນສັນນັ້ນ

ອະວິບປະຕິສານຂອງບຸກຄົນຜູ້ມີສິນ ສົມບູນດ້ວຍສິນຊື່ວ່າມີເຫດສົມບູນ ເມື່ອອະວິບປະຕິສານມີ ປາໂມດຂອງບຸກຄົນຜູ້ສົມບູນດ້ວຍອະວິບປະຕິສານຊື່ວ່າ ມີເຫດສົມບູນ ເມື່ອປາໂມດມີປີຕິຂອງບຸກຄົນຜູ້ສົມບູນດ້ວຍປາໂມດຊື່ວ່າ ມີເຫດສົມບູນ ເມື່ອປີຕິມີ ປັດສັດທິຂອງບຸກຄົນຜູ້ສົມບູນດ້ວຍປີຕິຊື່ວ່າ ມີເຫດສົມບູນ ເມື່ອປັດສັດທິມີ ສຸກຂອງບຸກຄົນຜູ້ສົມບູນດ້ວຍປັດສັດທິຊື່ວ່າ ມີເຫດສົມບູນ ເມື່ອສຸກມີ ສຳມາສະມາທິຂອງບຸກຄົນຜູ້ສົມບູນດ້ວຍສຸກຊື່ວ່າ ມີເຫດສົມບູນ ເມື່ອສຳມາສະມາທິມີ ຍະຖາພູຕະຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍສຳມາສະມາທິຊື່ວ່າມີເຫດສົມບູນ ເມື່ອຍະຖາພູຕະຍານທັດສະນະມີ ນິບພິທາຂອງບຸກຄົນຜູ້ສົມບູນດ້ວຍຍະຖາພູຕະຍານທັດສະນະຊື່ວ່າມີເຫດສົມບູນ ເມື່ອນິບພິທາມີ ວິຣາຄະຂອງບຸກຄົນຜູ້ສົມບູນດ້ວຍນິບພິທາຊື່ວ່າມີເຫດສົມບູນ ເມື່ອວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍວິຣາຄະຊື່ວ່າ ມີເຫດສົມບູນ

ຜູ້ມີອາຍຸທັງຫຼາຍ ອະວິບປະຕິສານຂອງບຸກຄົນຜູ້ມີສິນ ສົມບູນດ້ວຍສິນຊື່ວ່າມີເຫດສົມບູນ ເມື່ອອະວິບປະຕິສານມີ ປາໂມດຂອງບຸກຄົນຜູ້ສົມບູນດ້ວຍອະວິບປະຕິສານຊື່ວ່າມີເຫດສົມບູນ ຯລຯ ເມື່ອວິຣາຄະມີ ວິມຸດຕິຍານທັດສະນະຂອງບຸກຄົນຜູ້ສົມບູນດ້ວຍ ວິຣາຄະຊື່ວ່າມີເຫດສົມບູນ ປຽບຄື ຕົ້ນໄມ້ທີ່ມີງ່າແລະໃບສົມບູນ ເກັດ ເປືອກ ມອກ ແມ່ນແກ່ນຂອງຕົ້ນໄມ້ນັ້ນຍ່ອມເຖິງຄວາມບໍລິບູນ ສັນນັ້ນ

**ຕະຕິຍະອຸປະນິສາສູດທີ ໕ ຈົບ**

# ៦. ພະຍະສະນະສູດ

## ວ່າດ້ວຍຄວາມພິນາດ

[៦] ພິກຂຸທັງຫຼາຍ ພິກຂຸໃດກໍຕາມດ່າກ່າວໂທດ[១]ເພື່ອນພົມມະຈາຣີທັງຫຼາຍ ວ່າຮ້າຍພຣະອະຣິຍະ ເປັນໄປໄດ້[២]ທີ່ພິກຂຸນັ້ນຈະເຖິງຄວາມພິນາດຢ່າງ ໑ ໃນ ໑໑ ຢ່າງ

ຄວາມພິນາດ ໑໑ ແນວ ອັນໃດແດ່ ຄື

໑. ບໍ່ບັນລຸທຳທີ່ຍັງບໍ່ໄດ້ບັນລຸ
໒. ເສື່ອມຈາກທຳທີ່ໄດ້ບັນລຸແລ້ວ
໓. ສັດທຳຂອງພິກຂຸນັ້ນຍ່ອມບໍ່ຜ່ອງແຜ້ວ
໔. ເປັນຜູ້ເຂົ້າໃຈຜິດວ່າໄດ້ບັນລຸສັດທຳ
໕. ເປັນຜູ້ບໍ່ຍິນດີປະພຶດພົມມະຈັນ
໖. ຕ້ອງອາບັດທີ່ເສົ້າໝອງແນວໃດແນວໜຶ່ງ
໗. ບອກຄືນສິກຂາກັບມາເປັນຄະລືຫັດ
໘. ເປັນພະຍາດຮ້າຍແຮງ
໙. ເຖິງຄວາມວິກົນຈະລິດ ຫຼືຈິດຟຸ້ງຊ່ານ
໑໐. ຫຼົງລືມສະຕິມໍຣະນະພາບ
໑໑. ຫຼັງຈາກມໍຣະນະພາບແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຣົກ

ພິກຂຸທັງຫຼາຍ ພິກຂຸໃດກໍຕາມດ່າກ່າວໂທດເພື່ອນພົມມະຈາຣີທັງຫຼາຍ ວ່າຮ້າຍພຣະອະຣິຍະ ເປັນໄປໄດ້ທີ່ພິກຂຸນັ້ນຈະເຖິງຄວາມພິນາດຢ່າງ ໑ ໃນ ໑໑ ຢ່າງ

ພິກຂຸໃດກໍຕາມ ດ່າກ່າວໂທດເພື່ອນພົມມະຈາຣີທັງຫຼາຍ ວ່າຮ້າຍພຣະອະຣິຍະ ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນ ຈະບໍ່ເຖິງຄວາມພິນາດຢ່າງ ໑ ໃນ ໑໑ ຢ່າງ

ຄວາມພິນາດ ໑໑ ແນວ ອັນໃດແດ່ ຄື

໑. ບໍ່ບັນລຸທຳທີ່ຍັງບໍ່ໄດ້ບັນລຸ
໒. ເສື່ອມຈາກທຳທີ່ໄດ້ບັນລຸແລ້ວ
໓. ສັດທຳຂອງພິກຂຸນັ້ນຍ່ອມບໍ່ຜ່ອງແຜ້ວ
໔. ເປັນຜູ້ເຂົ້າໃຈຜິດວ່າໄດ້ບັນລຸສັດທຳ
໕. ເປັນຜູ້ບໍ່ຍິນດີປະພຶດພົມມະຈັນ
໖. ຕ້ອງອາບັດທີ່ເສົ້າໝອງແນວໃດແນວໜຶ່ງ

໗. ບອກຄືນສິກຂາກັບມາເປັນຄະລືຫັດ

໘. ເປັນພະຍາດຮ້າຍແຮງ

໙. ເຖິງຄວາມວິກົນຈະລິດ ຫຼືຈິດຟຸ້ງຊ່ານ

໑໐. ຫຼົງລືມສະຕິມໍຣະນະພາບ

໑໑. ຫຼັງຈາກມໍຣະນະພາບແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ

ພິກຂຸທັງຫຼາຍ ພິກຂຸໃດ ກໍຕາມດ່າກ່າວໂທດເພື່ອນພົມມະຈາຣີທັງຫຼາຍ ວ່າຮ້າຍ ພຣະອະຣິຍະ ເປັນໄປບໍ່ໄດ້ເລີຍທີ່ພິກຂຸນັ້ນຈະບໍ່ເຖິງຄວາມພິນາດຢ່າງ ໑ ໃນ ໑໑ ຢ່າງ

**ພະຍະສະນະສູດທີ ໖ ຈົບ**

# ໗. ປະຖົມສັນຍາສູດ

## ວ່າດ້ວຍສັນຍາ ສູດທີ ໑

[໗] ຄັ້ງນັ້ນແລ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ມີໄດ້ບໍນໍ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາ (ຄວາມຈື່ໄດ້ໝາຍຮູ້) ໃນທາດດິນວ່າເປັນທາດດິນ[๑] ໃນທາດນ້ຳວ່າເປັນທາດນ້ຳ ໃນທາດໄຟວ່າເປັນທາດໄຟ ໃນທາດລົມວ່າເປັນທາດລົມ ໃນອາກາສານັນຈາຍະຕະນະຊານວ່າເປັນ ອາກາສານັນຈາຍະຕະນະຊານ ໃນວິນຍານັນຈາຍະຕະນະຊານວ່າເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍະຕະນະຊານວ່າ ເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າ ເປັນໂລກນີ້ ໃນໂລກໜ້າວ່າເປັນໂລກໜ້າ ບໍ່ຕ້ອງມີສັນຍາແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້[๒] ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ມີໄດ້ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ໃນທາດນ້ຳວ່າເປັນທາດນ້ຳ ໃນທາດໄຟວ່າເປັນທາດໄຟ ໃນທາດລົມວ່າເປັນທາດລົມ ໃນອາກາສານັນຈາຍະຕະນະຊານ ວ່າເປັນອາກາສານັນຈາຍະຕະນະຊານ ໃນວິນຍານັນຈາຍະຕະນະຊານວ່າເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍະຕະນະຊານວ່າເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າເປັນໂລກນີ້ ໃນໂລກໜ້າວ່າເປັນໂລກໜ້າ ບໍ່

ຕ້ອງມີສັນຍາແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

ທ່ານພຣະອານົນທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ມີໄດ້ແນວໃດ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ໃນທາດນໍ້າວ່າເປັນທາດນໍ້າ ໃນທາດໄຟວ່າເປັນທາດໄຟ ໃນທາດລົມວ່າເປັນທາດລົມ ໃນອາກາສານັນຈາຍະຕະນະຊານວ່າເປັນ ອາກາສານັນຈາຍະຕະນະຊານ ໃນວິນຍານັນຈາຍະຕະນະຊານວ່າ ເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍະຕະນະຊານວ່າເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າເປັນໂລກນີ້ ໃນໂລກໜ້າວ່າ ເປັນໂລກໜ້າ ບໍ່ຕ້ອງມີສັນຍາແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ພິກຂຸໃນທຳວິໄນນີ້ເປັນຜູ້ມີສັນຍາແນວນີ້ວ່າ ພາວະທີ່ສະງົບ ປະນີດ ຄືຄວາມລະງັບສັງຂານທັງປວງ ຄວາມສະລະຄືນອຸປະທິກິເລດ ທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບ ນິບພານ[໑] ອານົນມີໄດ້ຢ່າງນີ້ແລ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ໃນທາດນໍ້າວ່າເປັນທາດນໍ້າ ໃນທາດໄຟວ່າເປັນທາດໄຟ ໃນທາດລົມວ່າເປັນທາດລົມ ໃນອາກາສານັນຈາຍະຕະນະຊານວ່າເປັນອາກາສານັນຈາຍະຕະນະຊານ ໃນວິນຍານັນຈາຍະຕະນະຊານວ່າເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍະຕະນະຊານວ່າເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າ ເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າເປັນໂລກນີ້ ໃນໂລກໜ້າວ່າເປັນໂລກໜ້າ ບໍ່ຕ້ອງມີສັນຍາແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

ຄັ້ງນັ້ນ ທ່ານພຣະອານົນຊົມຊື່ນອະນຸໂມທະນາພາສິດຂອງພຣະຜູ້ມີພຣະພາກເຈົ້າແລ້ວລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວເຂົ້າໄປຫາທ່ານ ພຣະສາຣີບຸດຮອດບ່ອນຢູ່ ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະສາຣີບຸດດັ່ງນີ້ ວ່າ

"ທ່ານສາຣີບຸດ ມີໄດ້ບໍນໍ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນ ວ່າເປັນທາດດິນ ຯລຯ ໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

ທ່ານພຣະສາຣີບຸດຕອບວ່າ "ທ່ານອານົນ ມີໄດ້ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ຯລຯ ໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

"ທ່ານສາຣີບຸດ ມີໄດ້ແນວໃດ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ຯລຯ ບໍ່ຕ້ອງມີສັນຍາແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຍິນ ອາລົມທີ່ ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

"ທ່ານອານົນ ພິກຂຸໃນທຳວິໄນນີ້ເປັນຜູ້ມີສັນຍາແນວນີ້ວ່າ ພາວະທີ່ສະງົບ ປະນີດ ຄືຄວາມລະງັບສັງຂານທັງປວງ ຄວາມສະລະຄືນອຸປະທິກິເລດທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບ ນິບພານ ທ່ານອານົນ ມີໄດ້ ແນວນີ້ແລ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາແມ່ນໃນທາດດິນວ່າເປັນທາດດິນ ຯລຯ ໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

"ຜູ້ມີອາຍຸ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ການທີ່ອັດຖະກັບອັດຖະ ພະຍັນຊະນະກັບພະຍັນຊະນະຂອງພຣະສາດສະດາແລະພຣະສາວົກ ປຽບທຽບກັນໄດ້ ສະເໝີກັນ ບໍ່ຜິດກັນ ໃນບົດອັນເລີດ[១] ທ່ານຜູ້ມີອາຍຸ ເມື່ອຈັກນອຍນີ້ ຂ້ານ້ອຍເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ໄດ້ທູນຖາມເນື້ອຄວາມນີ້ແລ້ວ ແມ່ນພຣະຜູ້ມີພຣະພາກເຈົ້າກໍຊົງຕອບເນື້ອຄວາມນີ້ແກ່ຂ້ານ້ອຍ ດ້ວຍບົດເຫຼົ່ານີ້ ດ້ວຍພະຍັນຊະນະເຫຼົ່ານີ້ ຄືທີ່ທ່ານສາຣີບຸດຕອບ ຜູ້ມີອາຍຸ ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ການທີ່ອັດຖະກັບອັດຖະ ພະຍັນຊະນະກັບພະຍັນຊະນະຂອງພຣະສາດສະດາແລະພຣະສາວົກ ປຽບທຽບກັນໄດ້ ສະເໝີກັນ ບໍ່ຜິດກັນ ໃນບົດອັນເລີດນີ້"

**ປະຖົມສັນຍາສູດທີ ໗ ຈົບ**

## ໘. ມະນະສິການສູດ
## ວ່າດ້ວຍມະນະສິການ

[໘] ຄັ້ງນັ້ນແລ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ມີໄດ້ບໍນໍ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມະນະສິການ ຕາ ຮູບ ຫູ ສຽງ ດັງ ກິ່ນ ລີ້ນ ຣົດ ກາຍ ໂຜດຖັບພະ (ການສຳຜັດທາງກາຍ) ທາດດິນ ທາດນ້ຳ ທາດໄຟ ທາດລົມ ອາກາສານັນຈາຍະຕະນະຊານ ວິນຍານັນຈາຍະຕະນະຊານ ອາກິນຈັນຍາຍະຕະນະຊານ ເນວະສັນຍານາສັນຍາຍະຕະນະຊານ ໂລກນີ້ ໂລກໜ້າ ບໍ່ຕ້ອງ ມະນະສິ

ການແມ່ນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມະນະສິການ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ມີໄດ້ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມະນະສິການຕາ ຮູບ ຫູ ສຽງ ດັງ ກິ່ນ ລີ້ນ ຣົດ ກາຍ ໂຜດຖັບພະ ທາດດິນ ທາດນ້ຳ ທາດໄຟ ທາດລົມ ອາກາສານັນຈາຍະຕະນະຊານ ວິນຍານັນຈາຍະຕະນະຊານ ອາກິນຈັນຍາຍະຕະນະຊານ ເນວະສັນຍານາສັນຍາຍະຕະນະຊານ ໂລກນີ້ ໂລກໜ້າ ບໍ່ຕ້ອງມະນະສິການແມ່ນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມະນະສິການ"

"ຂ້າແດ່ ພຣະອົງຜູ້ຈະເລີນ ມີໄດ້ແນວໃດ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມະນະສິການ ຕາ ຯລຯ ບໍ່ຕ້ອງມະນະສິການແມ່ນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມະນະສິການ"

"ອານົນ ພິກຂຸໃນທຳວິໄນນີ້ຍ່ອມມະນະສິການແນວນີ້ວ່າ ພາວະທີ່ສະງົບ ປະນີດ ຄື ຄວາມລະງັບສັງຂານທັງປວງ ຄວາມສະລະຄືນອຸປະທິກິເລດທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບ ນິບພານ ອານົນ ມີໄດ້ຢ່າງນີ້ແລ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມະນະສິການ ຕາ ຮູບ ຫູ ສຽງ ດັງ ກິ່ນ ລີ້ນ ຣົດ ກາຍ ໂຜດຖັບພະ ທາດດິນ ທາດນ້ຳ ທາດໄຟ ທາດລົມ ອາກາສານັນຈາຍະຕະນະຊານ ວິນຍານັນຈາຍະຕະນະຊານ ອາກິນຈັນຍາຍະຕະນະຊານ ເນວະສັນຍານາສັນຍາຍະຕະນະຊານ ໂລກນີ້ ໂລກໜ້າ ບໍ່ຕ້ອງ ມະນະສິການແມ່ນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມະນະສິການ"

**ມະນະສິການສູດທີ ໗ ຈົບ**

## ໘. ສັດທະສູດ

## ວ່າດ້ວຍພຣະທຳມະເທດສະໜາທີ່ຊົງສະແດງແກ່ພຣະສັນທະ

[໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ຄິນຊະກາວະສະຖາຣາມ ໃນນາທິກະຄາມ ຄັ້ງນັ້ນແລ ທ່ານພຣະສັນທະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດກັບທ່ານດັ່ງນີ້ ວ່າ

ສັນທະ ທ່ານຈົ່ງເພ່ງ[໑] ຄືການເພ່ງຂອງມ້າອາຊາໄນ[໒]ທີ່ນັ້ນ ຢ່າເພ່ງຄືການເພ່ງຂອງມ້າກະຈອກ

ການເພ່ງຂອງມ້າກະຈອກ ເປັນແນວໃດ?

ຄື ທຳມະດາມ້າກະຈອກຖືກເຂົາມັດໄວ້ໃກ້ຮາງເຂົ້າໜຽວ ຍ່ອມເພ່ງວ່າ "ເຂົ້າໜຽວ ເຂົ້າໜຽວ" ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນມ້າກະຈອກທີ່ຖືກເຂົາມັດໄວ້ໃກ້ຮາງເຂົ້າໜຽວບໍ່ມີຄວາມຄິດແນວນີ້ວ່າ "ມື້ນີ້ ສາຣະຖີຜູ້ເຝິກມ້າຈະໃຫ້ເຮົາເຮັດເຫດອັນໃດນໍ ເຮົາຈະເຮັດຫຍັງຕອບແທນເຂົາ" ມ້າກະຈອກນັ້ນຖືກເຂົາມັດໄວ້ໃກ້ຮາງເຂົ້າໜຽວຈຶ່ງເພ່ງວ່າ "ເຂົ້າໜຽວ ເຂົ້າໜຽວ" ສັນໃດ

ບຸຣຸດກະຈອກລາງຄົນໃນທຳວິໄນນີ້ກໍຄືກັນສັນນັ້ນ ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ ກໍດີ ໄປສູ່ເຮືອນວ່າງກໍດີ ມີຈິດຖືກກາມຣາຄະ (ຄວາມກຳໜັດໃນກາມ) ກຸ້ມລຸມ ຖືກກາມຣາຄະຄອບງຳຢູ່ ບໍ່ຮູ້ວິທີກຳຈັດກາມຣາຄະທີ່ເກີດຂຶ້ນຕາມຄວາມເປັນຈິງ ເຂົາຈຶ່ງເຮັດກາມຣາຄະທໍ່ນັ້ນໄວ້ພາຍໃນແລ້ວເພ່ງ ເພ່ງທົ່ວເຖິງ ເພ່ງເປັນປະຈຳ໌ ເພ່ງລົງຕ່ຳ ມີຈິດຖືກພະຍາບາດ (ຄວາມຄິດຮ້າຍ)ກຸ້ມລຸມ ຖືກພະຍາບາດຄອບງຳຢູ່ ຯລຯ ມີຈິດຖືກຖີນະມິດທະ (ຄວາມທໍດທູ່ແລະງ່ວມເຫງົາ) ກຸ້ມລຸມ ຯລຯ ມີຈິດຖືກອຸດທັດຈະກຸກກຸດຈະ (ຄວາມຟຸ້ງຊ່ານແລະຮ້ອນໃຈ) ກຸ້ມລຸມ ຯລຯ ມີຈິດຖືກວິຈິກິດສາ (ຄວາມລັງເລສົງໄສ) ກຸ້ມລຸມ ຖືກວິຈິກິດສາຄອບງຳຢູ່ ແລະບໍ່ຮູ້ວິທີກຳຈັດວິຈິກິດສາທີ່ເກີດຂຶ້ນຕາມຄວາມເປັນຈິງ ເຂົາຈຶ່ງເຮັດວິຈິກິດສາທໍ່ນັ້ນໄວ້ພາຍໃນແລ້ວເພ່ງ ເພ່ງຢ່າງທົ່ວເຖິງ ເພ່ງເປັນປະຈຳ ເພ່ງລົງຕ່ຳ ເຂົາອາໄສທາດດິນເພ່ງແດ່ ອາໄສທາດນ້ຳເພ່ງແດ່ ອາໄສທາດໄຟເພ່ງແດ່ ອາໄສທາດລົມເພ່ງແດ່ ອາໄສອາກາສານັນຈາຍະຕະນະຊານເພ່ງແດ່ ອາໄສວິນຍານັນຈາຍະຕະນະຊານເພ່ງແດ່ ອາໄສອາກິນຈັນຍາຍະຕະນະຊານເພ່ງແດ່ ອາໄສ ເນວະສັນຍານາສັນຍາຍະຕະນະຊານເພ່ງແດ່ ອາໄສໂລກນີ້ເພ່ງແດ່ ອາໄສໂລກໜ້າເພ່ງແດ່ ອາໄສແມ່ນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈແດ່

ສັນທະ ການເພ່ງຂອງບຸຣຸດຜູ້ກະຈອກຍ່ອມເປັນໄປໄດ້ ແນວນີ້ແລ

ການເພ່ງຂອງມ້າອາຊາໄນ ເປັນແນວໃດ?

ຄື ທຳມະດາວ່າມ້າອາຊາໄນທີ່ດີທີ່ຖືກເຂົາມັດໄວ້ໃກ້ຮາງເຂົ້າໜຽວຍ່ອມບໍ່ເພ່ງວ່າ "ເຂົ້າໜຽວ ເຂົ້າໜຽວ" ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນມ້າອາຊາໄນທີ່ດີທີ່ຖືກເຂົາມັດໄວ້ໃກ້ຮາງເຂົ້າໜຽວມີຄວາມຄິດແນວນີ້ວ່າ "ມື້ນີ້ ສາຣະຖີຜູ້ເຝິກມ້າຈະໃຫ້ເຮົາເຮັດຫຍັງນໍ ເຮົາຈະເຮັດຫຍັງຕອບແທນເຂົາ" ມ້າອາຊາໄນນັ້ນຖືກເຂົາມັດໄວ້ໃກ້ຮາງເຂົ້າໜຽວບໍ່ເພ່ງວ່າ "ເຂົ້າໜຽວ ເຂົ້າໜຽວ" ຍ້ອນມ້າອາຊາໄນທີ່ດີຍ່ອມພິຈາລະນາເຫັນການຖືກຄັນແຫຼມແທງ ຄືຄົນເປັນໜີ້ຄິດເຖິງໜີ້ ຄືຄົນຖືກຄຸມຂັງແນມເຫັນການຄຸມຂັງ ຄືຄົນເສື່ອມຊັບນຶກເຖິງຄວາມເສື່ອມຊັບ ຄືຄົນມີຄວາມຜິດເລັງເຫັນຄວາມຜິດ ສັນໃດ

ບຸຣຸດອາຊາໄນຜູ້ຈະເລີນກໍຄືກັນສັນນັ້ນ ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງ ກໍດີ ບໍ່ມີຈິດຖືກການຣາຄະກຸ້ມລຸມ ບໍ່ຖືກການຣາຄະຄອບງໍາຢູ່ ຮູ້ວິທີທີ່ຈະກໍາຈັດການຣາຄະທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ບໍ່ມີຈິດຖືກພະຍາບາດກຸ້ມລຸມ ຯລຯ ບໍ່ມີຈິດຖືກຖີນະມິດທະກຸ້ມລຸມ ຯລຯ ບໍ່ມີຈິດຖືກອຸດທັດຈະກຸກກຸດຈະກຸ້ມລຸມ ຯລຯ ບໍ່ມີຈິດຖືກວິຈິກິດສາກຸ້ມລຸມ ຖືກວິຈິກິດສາຄອບງໍາຢູ່ ແລະຮູ້ວິທີທີ່ຈະກໍາຈັດວິຈິກິດສາທີ່ເກີດຂື້ນແລ້ວຕາມຄວາມເປັນຈິງ ບຸຣຸດອາຊາໄນນັ້ນຍ່ອມບໍ່ອາໄສທາດດິນເພ່ງ ບໍ່ອາໄສທາດນໍ້າເພ່ງ ບໍ່ອາໄສທາດໄຟເພ່ງ ບໍ່ອາໄສທາດລົມເພ່ງ ບໍ່ອາໄສອາກາສານັນຈາຍະຕະນະຊານເພ່ງ ບໍ່ອາໄສວິນຍານັນຈາຍະຕະນະຊານເພ່ງ ບໍ່ອາໄສອາກິນຈັນຍາຍະຕະນະຊານເພ່ງ ບໍ່ອາໄສເນວະສັນຍານາສັນຍາຍະຕະນະຊານເພ່ງ ບໍ່ອາໄສໂລກນີ້ເພ່ງ ບໍ່ອາໄສໂລກໜ້າເພ່ງ ບໍ່ອາໄສແມ່ນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທໍາມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈເພ່ງ ແຕ່ຍ່ອມເພ່ງ[໑]

ສັນທະ ອັນໜຶ່ງ ເທວະດາທັງຫຼາຍພ້ອມທັງພຣະອິນ ພົມ ມະນຸດຍ່ອມນອບນ້ອມ ບຸຣຸດອາຊາໄນຜູ້ຈະເລີນເຊິ່ງມີປົກກະຕິເພ່ງແນວນີ້ແຕ່ທີ່ໄກຢ່າງແລ ວ່າ

ຂ້າແດ່ ທ່ານບຸຣຸດອາຊາໄນ
ຂ້າພະເຈົ້າ ຂໍນອບນ້ອມແດ່ທ່ານ
ຂ້າແດ່ ທ່ານບຸຣຸດຜູ້ສູງສຸດ
ຂ້າພະເຈົ້າ ຂໍນອບນ້ອມແດ່ທ່ານ
ຂ້າພະເຈົ້າທັງຫຼາຍ ຮູ້ແຈ້ງເຫດນັ້ນ ໆ ໄດ້
ຍ້ອນອາໄສການເພ່ງຂອງທ່ານ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະສັນທະໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ບຸຣຸດອາຊາໄນຜູ້ຈະເລີນເຊິ່ງມີປົກກະຕິເພ່ງຍ່ອມເພ່ງແນວໃດ ຄື ບຸຣຸດອາຊາໄນນັ້ນ ບໍ່ອາໄສທາດດິນເພ່ງ ບໍ່ອາໄສທາດນໍ້າເພ່ງ ບໍ່ອາໄສທາດໄຟເພ່ງ ບໍ່ອາໄສທາດລົມເພ່ງ ບໍ່ອາໄສອາກາສານັນຈາຍະຕະນະຊານເພ່ງ ບໍ່ອາໄສວິນຍານັນຈາຍະຕະນະຊານເພ່ງ ບໍ່ອາໄສອາກິນຈັນຍາຍະຕະນະຊານເພ່ງ ບໍ່ອາໄສເນວະສັນຍານາສັນຍາຍະຕະນະຊານເພ່ງ ບໍ່ອາໄສໂລກນີ້ເພ່ງ ບໍ່ອາໄສໂລກໜ້າເພ່ງ ບໍ່ອາໄສຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທໍາມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈເພ່ງ ແຕ່ຍ່ອມເພ່ງ

ຂ້າແດ່ ພຣະອົງຜູ້ຈະເລີນ ອັນໜຶ່ງ ເທວະດາທັງຫຼາຍພ້ອມທັງພຣະອິນ ພົມ ມະນຸດຍ່ອມນອບນ້ອມບຸຣຸດອາຊາໄນຜູ້ຈະເລີນເຊິ່ງມີປົກກະຕິເພ່ງແນວນີ້ແຕ່ທີ່ໄກແລວ່າ

ຂ້າແດ່ ທ່ານບຸຣຸດອາຊາໄນ
ຂ້າພະເຈົ້າ ຂໍນອບນ້ອມແດ່ທ່ານ

ຂ້າແດ່ ທ່ານບຸຣຸດຜູ້ສູງສຸດ
ຂ້າພະເຈົ້າ ຂໍນອບນ້ອມແດ່ທ່ານ
ຂ້າພະເຈົ້າທັງຫຼາຍ ຮູ້ແຈ້ງເຫດນັ້ນ ໆ ໄດ້
ຍ້ອນອາໄສການເພ່ງຂອງທ່ານ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສັນທະ ບຸຣຸດອາຊາໄນຜູ້ຈະເລີນມີສັນຍາໃນທາດດິນວ່າເປັນທາດດິນແຈ່ມແຈ້ງແລ້ວ ມີສັນຍາໃນທາດນໍ້າວ່າເປັນທາດນໍ້າແຈ່ມແຈ້ງແລ້ວ ມີສັນຍາໃນທາດໄຟວ່າເປັນທາດໄຟແຈ່ມແຈ້ງແລ້ວ ມີສັນຍາໃນທາດລົມວ່າເປັນທາດລົມແຈ່ມແຈ້ງແລ້ວ ມີສັນຍາໃນອາກາສານັນຈາຍະຕະນະຊານວ່າເປັນອາກາສານັນຈາຍະຕະນະຊານແຈ່ມແຈ້ງແລ້ວ ມີສັນຍາໃນວິນຍານັນຈາຍະຕະນະຊານວ່າເປັນວິນຍານັນຈາຍະຕະນະຊານແຈ່ມແຈ້ງແລ້ວ ມີສັນຍາໃນອາກິນຈັນຍາຍະຕະນະຊານວ່າເປັນອາກິນຈັນຍາຍະຕະນະຊານແຈ່ມແຈ້ງແລ້ວ ມີສັນຍາໃນເນວະສັນຍານາສັນຍາຍະຕະນະຊານວ່າເປັນເນວະສັນຍານາສັນຍາຍະຕະນະຊານ ແຈ່ມແຈ້ງແລ້ວ ມີສັນຍາໃນໂລກນີ້ວ່າເປັນໂລກນີ້ແຈ່ມແຈ້ງແລ້ວ ມີສັນຍາໃນໂລກໜ້າວ່າເປັນໂລກໜ້າແຈ່ມແຈ້ງແລ້ວ ມີສັນຍາໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈແຈ່ມແຈ້ງແລ້ວ

ສັນທະ ບຸຣຸດອາຊາໄນຜູ້ຈະເລີນມີປົກກະຕິເພ່ງແນວນີ້ແລ ບໍ່ອາໄສທາດດິນເພ່ງ ບໍ່ອາໄສທາດນໍ້າເພ່ງ ບໍ່ອາໄສທາດໄຟເພ່ງ ບໍ່ອາໄສທາດລົມເພ່ງ ບໍ່ອາໄສອາກາສານັນຈາຍະຕະນະຊານເພ່ງ ບໍ່ອາໄສວິນຍານັນຈາຍະຕະນະຊານເພ່ງ ບໍ່ອາໄສອາກິນຈັນຍາຍະຕະນະຊານເພ່ງ ບໍ່ອາໄສເນວະສັນຍານາສັນຍາຍະຕະນະຊານເພ່ງ ບໍ່ອາໄສໂລກນີ້ເພ່ງ ບໍ່ອາໄສໂລກໜ້າເພ່ງ ບໍ່ອາໄສແມ່ນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາທີ່ຕອງຕາມດ້ວຍໃຈເພ່ງ ແຕ່ຍ່ອມເພ່ງ

ສັນທະ ອັນໜຶ່ງ ເທວະດາທັງຫຼາຍພ້ອມທັງພຣະອິນ ພົມ ມະນຸດຍ່ອມນອບນ້ອມ ບຸຣຸດອາຊາໄນຜູ້ຈະເລີນເຊິ່ງມີປົກກະຕິເພ່ງແນວນີ້ແຕ່ທີ່ໄກແລວ່າ

ຂ້າແດ່ ທ່ານບຸຣຸດອາຊາໄນ
ຂ້າພະເຈົ້າ ຂໍນອບນ້ອມແດ່ທ່ານ
ຂ້າແດ່ ທ່ານບຸຣຸດຜູ້ສູງສຸດ
ຂ້າພະເຈົ້າ ຂໍນອບນ້ອມແດ່ທ່ານ
ຂ້າພະເຈົ້າທັງຫຼາຍ ຮູ້ແຈ້ງເຫດນັ້ນ ໆ ໄດ້
ຍ້ອນອາໄສການເພ່ງຂອງທ່ານ"

**ສັດທະສູດທີ ໗ ຈົບ**

# ໑໐. ໂມຣະນິວາປະສູດ

## ວ່າດ້ວຍປະຣິບພາຊະກາຣາມຊື່ໂມຣະນິວາປະ

[໑໐] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ປະຣິບພາຊະກາຣາມອັນເປັນທີ່ໃຫ້ເຫຍື່ອແກ່ນົກຍູງ ເຂດນະຄອນຣາດຊະຄຶ ໃນບ່ອນນັ້ນແລ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ວ່າ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໓ ປະການ ເປັນຜູ້ມີຄວາມສຳເລັດສູງສຸດ[໑] ມີຄວາມກະເສມສູງສຸດ ປະພຶດພົມມະຈັນເຖິງບ່ອນສຸດ ມີບ່ອນສຸດອັນສູງສຸດ ເປັນຜູ້ປະເສີດກວ່າເທວະດາແລະມະນຸດທັງຫຼາຍ

ທຳ ໓ ປະການ ອັນໃດແດ່ ຄື

໑. ສີນຂັນ (ກອງສີນ )ທີ່ເປັນອະເສຂະ[໒]
໒. ສະມາທິຂັນ (ກອງສະມາທິ) ທີ່ເປັນອະເສຂະ
໓. ປັນຍາຂັນ (ກອງປັນຍາ) ທີ່ເປັນອະເສຂະ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໓ ປະການນີ້ແລ ເປັນຜູ້ມີຄວາມສຳເລັດສູງສຸດ ມີຄວາມກະເສມສູງສຸດ ປະພຶດພົມມະຈັນເຖິງບ່ອນສຸດ ມີບ່ອນສຸດອັນສູງສຸດ ເປັນຜູ້ປະເສີດກວ່າເທວະດາແລະມະນຸດທັງຫຼາຍ

ພິກຂຸປະກອບດ້ວຍທຳ ໓ ປະການແມ່ນອື່ນອີກ ເປັນຜູ້ມີຄວາມສຳເລັດສູງສຸດ ມີຄວາມກະເສມສູງສຸດ ປະພຶດພົມມະຈັນເຖິງບ່ອນສຸດ ມີບ່ອນສຸດອັນສູງສຸດ ເປັນຜູ້ປະເສີດກວ່າເທວະດາແລະມະນຸດທັງຫຼາຍ

ທຳ ໓ ປະການ ອັນໃດແດ່ ຄື

໑. ອິດທິປາຕິຫານ[໔] (ປາຕິຫານຄືລິດ)
໒. ອາເທສະນາປາຕິຫານ[໕] (ປາຕິຫານຄືການທາຍໃຈ)
໓. ອະນຸສາສະນີປາຕິຫານ[໖] (ປາຕິຫານຄືອະນຸສາສະນີ)

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໓ ປະການນີ້ ເປັນຜູ້ມີຄວາມສຳເລັດສູງສຸດ ມີຄວາມກະເສມສູງສຸດ ປະພຶດພົມມະຈັນເຖິງບ່ອນສຸດ ມີບ່ອນສຸດອັນສູງສຸດ ເປັນຜູ້ປະເສີດກວ່າເທວະດາແລະມະນຸດທັງຫຼາຍ

ພິກຂຸປະກອບດ້ວຍທຳ ๓ ປະການແມ່ນອື່ນອີກ ເປັນຜູ້ມີຄວາມສຳເລັດສູງສຸດ ມີຄວາມກະເສມສູງສຸດ ປະພຶດພົມມະຈັນເຖິງບ່ອນສຸດ ມີບ່ອນສຸດອັນສູງສຸດ ເປັນຜູ້ປະເສີດກວ່າເທວະດາແລະມະນຸດທັງຫຼາຍ

ທຳ ๓ ປະການ ອັນໃດແດ່ ຄື

໑. ສຳມາທິດຖິ
໒. ສຳມາຍານະ
๓. ສຳມາວິມຸດຕິ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ๓ ປະການນີ້ແລ ເປັນຜູ້ມີຄວາມສຳເລັດສູງສຸດ ມີຄວາມກະເສມສູງສຸດ ປະພຶດພົມມະຈັນເຖິງບ່ອນສຸດ ມີບ່ອນສຸດອັນສູງສຸດ ເປັນຜູ້ປະເສີດກວ່າເທວະດາແລະມະນຸດທັງຫຼາຍ

ພິກຂຸປະກອບດ້ວຍທຳ ໒ ປະການ ເປັນຜູ້ມີຄວາມສຳເລັດສູງສຸດ ມີຄວາມກະເສມສູງສຸດ ປະພຶດພົມມະຈັນເຖິງບ່ອນສຸດ ມີບ່ອນສຸດອັນສູງສຸດ ເປັນຜູ້ປະເສີດກວ່າເທວະດາແລະມະນຸດທັງຫຼາຍ

ທຳ ໒ ປະການ ອັນໃດແດ່ ຄື

໑. ວິດຊາ (ຄວາມຮູ້ແຈ້ງ)
໒. ຈະຣະນະ (ຄວາມປະພຶດ)

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໒ ປະການນີ້ແລ ເປັນຜູ້ມີຄວາມສຳເລັດສູງສຸດ ມີຄວາມກະເສມສູງສຸດ ປະພຶດພົມມະຈັນເຖິງບ່ອນສຸດ ມີບ່ອນສຸດອັນສູງສຸດ ເປັນຜູ້ປະເສີດກວ່າເທວະດາແລະມະນຸດທັງຫຼາຍ

ພິກຂຸທັງຫຼາຍ ແມ່ນສະນັງກຸມາຣະພົມກໍໄດ້ກ່າວຄາຖານີ້ໄວ້ ວ່າ

ໃນໝູ່ຊົນທີ່ຖືຕະກູນເປັນໃຫຍ່[๑]
ກະສັດຈັດວ່າປະເສີດທີ່ສຸດ
ສ່ວນທ່ານຜູ້ພຽບພ້ອມດ້ວຍວິດຊາແລະຈະຣະນະ
ຈັດວ່າເປັນຜູ້ປະເສີດກວ່າເທວະດາແລະມະນຸດທັງຫຼາຍ

ພິກຂຸທັງຫຼາຍ ກໍຄາຖານີ້ສະນັງກຸມາຣະພົມໄດ້ກ່າວຮ້ອຍກອງໄວ້ຖືກຕ້ອງດີແລ້ວ ບໍ່ແມ່ນຮ້ອຍກອງໄວ້ຜິດ ປະກອບດ້ວຍປະໂຫຍດ ບໍ່ແມ່ນປະກອບດ້ວຍສິ່ງທີ່ບໍ່ແມ່ນປະໂຫຍດ ເຮົາຍອມຮັບ ພິກຂຸທັງຫຼາຍ ເຖິງເຮົາເອງກໍກ່າວໄວ້ແນວນີ້ວ່າ

ໃນໝູ່ຊົນທີ່ຖືຕະກູນເປັນໃຫຍ່
ກະສັດຈັດວ່າປະເສີດທີ່ສຸດ
ສ່ວນທ່ານຜູ້ພຽບພ້ອມດ້ວຍວິດຊາແລະຈະຣະນະ
ຈັດວ່າເປັນຜູ້ປະເສີດກວ່າເທວະດາແລະມະນຸດທັງຫຼາຍ

**ໂມຣະນິວາປະສູດທີ ໑໐ ຈົບ**

**ນິດສະຍະວັກທີ ໑ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື



# ๔. ອະນຸດສະຕິວັກ

## ໝວດວ່າດ້ວຍອະນຸດສະຕິ

## ๑. ປະຖົມມະຫານາມະສູດ[๑]

### ວ່າດ້ວຍເຈົ້າສາກະຍະພຣະນາມວ່າມະຫານາມ ສູດທີ ๑

[๑๑] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນິໂຄທາຣາມ ເຂດເມືອງກະບິນລະພັດ ແຄວ້ນສັກກະ ສະໄໝນັ້ນ ພິກຂຸຈຳນວນຫຼາຍເຮັດຈີວອນກຳເພື່ອຖວາຍພຣະຜູ້ມີພຣະພາກເຈົ້າ ດ້ວຍຫວັງວ່າ "ພຣະຜູ້ມີພຣະພາກເຈົ້າມີຈີວອນສຳເລັດແລ້ວ ລ່ວງໄປ ๓ ເດືອນກໍຈັກສະເດັດຈາຣິກໄປ"

ເຈົ້າສາກະຍະພຣະນາມວ່າ ມະຫານາມໄດ້ຊົງຮູ້ຂ່າວແນວນັ້ນຄືກັນ ລຳດັບນັ້ນ ພຣະອົງສະເດັດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍໄດ້ຮູ້ຂ່າວແນວນີ້ວ່າ "ໄດ້ຮູ້ວ່າ ພິກຂຸຈຳນວນ ຫຼາຍເຮັດຈີວອນກຳເພື່ອຖວາຍພຣະຜູ້ມີພຣະພາກເຈົ້າດ້ວຍຫວັງວ່າ ພຣະຜູ້ມີພຣະພາກເຈົ້າມີຈີວອນສຳເລັດແລ້ວ ລ່ວງໄປ ໓ ເດືອນກໍຈັກສະເດັດຈາຣິກໄປ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍເມື່ອຈະຢູ່ດ້ວຍທຳ ເປັນເຄື່ອງຢູ່ຕ່າງ ໆ ຈະຕ້ອງຢູ່ດ້ວຍທຳເປັນເຄື່ອງຢູ່ອັນໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ມະຫານາມ ການທີ່ພຣະອົງສະເດັດມາຫາຕະຖາຄົດແລ້ວຕັດຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍເມື່ອຈະຢູ່ດ້ວຍທຳເປັນເຄື່ອງຢູ່ຕ່າງ ໆ ຈະຕ້ອງຢູ່ດ້ວຍທຳເປັນເຄື່ອງຢູ່ອັນໃດ" ນີ້ເປັນການສົມຄວນແກ່ພຣະອົງຜູ້ເປັນກຸນລະບຸດ ມະຫານາມ ກຸນລະບຸດຜູ້ມີສັດທາເປັນຜູ້ປະສົບຄວາມສຳເລັດ ຜູ້ບໍ່ມີສັດທາບໍ່ປະສົບຄວາມສຳເລັດ[2] ໑ ຜູ້ພາຣົບຄວາມພຽນເປັນຜູ້ປະສົບຄວາມສຳເລັດ ຜູ້ຂີ້ຄ້ານບໍ່ປະສົບຄວາມສຳເລັດ ໑ ຜູ້ມີສະຕິຕັ້ງໝັ້ນເປັນຜູ້ປະສົບຄວາມສຳເລັດ ຜູ້ຫຼົງລືມສະຕິບໍ່ປະສົບຄວາມສຳເລັດ ໑ ຜູ້ມີຈິດຕັ້ງໝັ້ນເປັນຜູ້ປະສົບຄວາມສຳເລັດ ຜູ້ມີຈິດບໍ່ຕັ້ງໝັ້ນບໍ່ປະສົບຄວາມສຳເລັດ ໑ ຜູ້ມີປັນຍາເປັນຜູ້ປະສົບຄວາມສຳເລັດ ຜູ້ມີປັນຍາຊາມ ບໍ່ປະສົບຄວາມສຳເລັດ ໑

ມະຫານາມ ພຣະອົງເພິ່ງຕັ້ງຢູ່ໃນທຳ ໕ ປະການນີ້ ແລ້ວຈະເລີນທຳ ໖ ປະການໃຫ້ຍິ່ງຂຶ້ນໄປເທີ້ນ

ທຳ ໖ ປະການນີ້ ຄື

໑. ພຣະອົງເພິ່ງຣະນຶກເຖິງຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນເປັນພຣະອະຣະຫັນ ຕັດສະຮູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ມະຫານາມ ສະໄໝໃດ ອະຣິຍະສາວົກຣະນຶກເຖິງຕະຖາຄົດແລ້ວ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມພາຣົບຕະຖາຄົດດຳເນີນໄປກົງຢ່າງແນ່ນອນ ມະຫານາມ ກໍອະຣິຍະສາວົກຜູ້ມີຈິດດຳເນີນໄປກົງແລ້ວ ຍ່ອມໄດ້ຄວາມຍິນດີອີງອັດຖະ[1] ຍ່ອມໄດ້ຄວາມຍິນດີອີງທຳ[2] ຍ່ອມໄດ້ປາໂມດທີ່ປະກອບດ້ວຍທຳ ເມື່ອມີປາໂມດຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະງົບທ່ານມີກາຍສະງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ ມະຫານາມ ອະຣິຍະສາວົກນີ້ ຕະຖາຄົດກ່າວວ່າເປັນຜູ້ເຖິງຄວາມສະງົບຢູ່ໃນໝູ່ສັດຜູ້ເຖິງຄວາມບໍ່ສະງົບ ເປັນຜູ້ບໍ່ມີພະຍາບາດຢູ່ໃນໝູ່ສັດຜູ້ມີພະຍາບາດ ເປັນຜູ້ເຖິງພ້ອມດ້ວຍກະແສທຳ ຈະເລີນພຸດທາ ນຸດສະຕິຢູ່

໒. ພຣະອົງເພິ່ງຣະນຶກເຖິງທຳວ່າ "ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ[3] ຄວນເອີ້ນໃຫ້ມາ

ເບິ່ງ ຄວນນ້ອມເຂົ້າມາໃນຕົນ’ ອັນວິນຍູຊົນ‘ເພິ່ງຮູ້ສະເພາະຕົນ” ມະຫານາມ ສະໄໝໃດ ອະຣິຍະສາວົກຣະນຶກເຖິງທຳ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມຜາຣົບທຳດຳເນີນໄປກົງຢ່າງແນ່ນອນ ມະຫານາມ ກໍອະຣິຍະສາວົກຜູ້ມີຈິດດຳເນີນໄປກົງແລ້ວ ຍ່ອມໄດ້ຄວາມຍິນດີອີງອັດຖະ ຍ່ອມໄດ້ຄວາມຍິນດີອີງທຳ ຍ່ອມໄດ້ປາໂມດທີ່ປະກອບດ້ວຍທຳ ເມື່ອມີປາໂມດຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະງົບ ທ່ານມີກາຍສະງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ ມະຫານາມ ອະຣິຍະສາວົກນີ້ ຕະຖາຄົດກ່າວວ່າ ເປັນຜູ້ເຖິງຄວາມສະງົບຢູ່ໃນໝູ່ສັດຜູ້ເຖິງຄວາມບໍ່ສະງົບ ເປັນຜູ້ບໍ່ມີພະຍາບາດຢູ່ໃນໝູ່ສັດຜູ້ມີພະຍາບາດ ເປັນຜູ້ເຖິງພ້ອມດ້ວຍກະແສທຳ ຈະເລີນທຳມານຸດສະຕິຢູ່

໓. ພຣະອົງເພິ່ງຣະນຶກເຖິງສົງວ່າ “ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້າ ເປັນຜູ້ປະຕິບັດດີ ປະຕິບັດກົງ ປະຕິບັດຖືກທາງ ປະຕິບັດສົມຄວນ ໄດ້ແກ່ ອະຣິຍະບຸກຄົນ ໔ ຄູ່ ຄື ໘ ບຸກຄົນ ພຣະສົງສາວົກຂອງພຣະຜູ້ມີພຣະພາກເຈົ້ານີ້ ເປັນຜູ້ຄວນແກ່ ຂອງທີ່ເຂົານຳມາຖວາຍ ຄວນແກ່ຂອງຕ້ອນຮັບ ຄວນແກ່ທັກຂິນາ ຄວນແກ່ການກະທຳອັນຊະລີ ເປັນນາບຸນອັນປະເສີດຂອງໂລກ” ມະຫາ ນາມ ສະໄໝໃດ ອະຣິຍະສາວົກ ຣະນຶກເຖິງພຣະສົງ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນ ຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນ ຍ່ອມຜາຣົບພຣະສົງດຳເນີນໄປກົງຢ່າງແນ່ນອນ ມະຫານາມ ກໍອະຣິຍະສາວົກຜູ້ມີ ຈິດດຳເນີນໄປກົງແລ້ວ ຍ່ອມໄດ້ຄວາມຍິນດີອີງອັດຖະ ຍ່ອມໄດ້ຄວາມຍິນດີອີງທຳ ຍ່ອມໄດ້ປາໂມດທີ່ປະກອບດ້ວຍທຳ ເມື່ອມີ ປາໂມດຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະງົບ ທ່ານມີກາຍສະງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ ມະຫານາມ ອະຣິຍະສາວົກນີ້ ຕະຖາຄົດກ່າວວ່າ ເປັນຜູ້ເຖິງຄວາມສະງົບຢູ່ໃນໝູ່ສັດຜູ້ເຖິງຄວາມບໍ່ສະງົບ ເປັນຜູ້ບໍ່ມີພະຍາບາດ ຢູ່ໃນໝູ່ສັດຜູ້ມີພະຍາບາດ ເປັນຜູ້ເຖິງພ້ອມດ້ວຍກະແສທຳ ຈະເລີນ ສັງຄານຸດສະຕິຢູ່

໔. ພຣະອົງເພິ່ງຣະນຶກເຖິງສີນຂອງພຣະອົງທີ່ບໍ່ຂາດ ບໍ່ຊອດ ບໍ່ດ່າງ ບໍ່ໝອງ ເປັນອິດສະຫຼະ ທ່ານຜູ້ຮູ້ສັນເສີນ ບໍ່ຖືກຕັນຫາແລະທິດຖິຄອບງຳ ເປັນໄປເພື່ອສະມາທິ ມະຫານາມ ສະໄໝໃດ ອະຣິຍະສາວົກຣະນຶກເຖິງສີນ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມຜາຣົບສີນດຳເນີນໄປກົງຢ່າງແນ່ນອນ ມະຫານາມ ກໍ ອະຣິຍະສາວົກຜູ້ມີຈິດດຳເນີນໄປກົງແລ້ວ ຍ່ອມໄດ້ຄວາມຍິນດີອີງອັດຖະ ຍ່ອມໄດ້ຄວາມຍິນດີອີງທຳ ຍ່ອມໄດ້ປາໂມດທີ່ປະກອບດ້ວຍທຳ ເມື່ອມີປາໂມດຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະງົບ ທ່ານມີກາຍສະງົບ ຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ ມະຫານາມ ອະຣິຍະສາວົກນີ້ ຕະຖາຄົດ ກ່າວວ່າ ເປັນຜູ້ເຖິງຄວາມ

ສະງົບຢູ່ໃນໝູ່ສັດຜູ້ເຖິງຄວາມບໍ່ສະງົບ ເປັນຜູ້ບໍ່ມີ ພະຍາບາດຢູ່ໃນໝູ່ສັດຜູ້ມີພະຍາບາດ ເປັນຜູ້ເຖິງພ້ອມດ້ວຍກະແສທຳ ຈະເລີນສີລານຸດສະຕິຢູ່

໕. ພຣະອົງເພິ່ງຣະນຶກເຖິງຈາຄະຂອງພຣະອົງວ່າ "ເປັນລາບຂອງເຮົານໍ ເຮົາໄດ້ດີແລ້ວນໍ ທີ່ເຮົາມີໃຈປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝາມືຊຸ່ມ໑ ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການແຈກທານ ຢູ່ຄອງເຮືອນ" ມະຫານາມ ສະໄໝໃດອະຣິຍະສາວົກຣະນຶກເຖິງຈາຄະ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມຜາຣົບຈາຄະດຳເນີນໄປກົງ ຢ່າງແນ່ນອນ ມະຫານາມ ກໍອະຣິຍະສາວົກຜູ້ມີຈິດດຳເນີນໄປກົງແລ້ວຍ່ອມໄດ້ຄວາມຍິນດີອີງອັດຖະ ຍ່ອມໄດ້ຄວາມຍິນດີອີງທຳ ຍ່ອມໄດ້ປາໂມດທີ່ປະກອບດ້ວຍທຳ ເມື່ອມີປາໂມດຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມ ສະງົບ ທ່ານມີກາຍສະງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ ມະຫານາມ ອະຣິຍະສາວົກນີ້ ຕະຖາຄົດກ່າວວ່າ ເປັນຜູ້ເຖິງຄວາມສະງົບຢູ່ໃນໝູ່ສັດຜູ້ເຖິງຄວາມບໍ່ສະງົບ ເປັນຜູ້ບໍ່ມີພະຍາບາດຢູ່ໃນໝູ່ສັດຜູ້ມີພະຍາບາດ ເປັນຜູ້ເຖິງພ້ອມດ້ວຍກະແສທຳ ຈະເລີນຈາຄານຸດສະຕິຢູ່

໖. ພຣະອົງເພິ່ງຣະນຶກເຖິງເທວະດາທັງຫຼາຍວ່າ "ມີເທວະດາຊັ້ນຈາຕຸມະຫາຣາດ ເທວະດາຊັ້ນຕາວະຕິງສາ ເທວະດາຊັ້ນຍາມາ ເທວະດາຊັ້ນດຸສິດ ເທວະດາຊັ້ນນິມມານະຣະດີ ເທວະດາຊັ້ນປະຣະນິມມິຕະວະສະວັດດີ ເທວະດາຊັ້ນພົມກາຍ ເທວະດາຊັ້ນສູງຂຶ້ນໄປກວ່ານັ້ນ ເທວະດາເຫຼົ່ານັ້ນປະກອບດ້ວຍສັດທາເຊັ່ນໃດ ຈຸຕິຈາກໂລກນີ້ແລ້ວໄປເກີດໃນເທວະໂລກນັ້ນ ແມ່ນເຮົາເອງກໍມີສັດທາເຊັ່ນນັ້ນ ເທວະດາເຫຼົ່ານັ້ນປະກອບດ້ວຍສີນເຊັ່ນໃດ ຈຸຕິຈາກໂລກນີ້ແລ້ວໄປເກີດໃນເທວະໂລກນັ້ນ ແມ່ນເຮົາເອງກໍມີສີນເຊັ່ນນັ້ນ ເທວະດາເຫຼົ່ານັ້ນປະກອບດ້ວຍສຸຕະເຊັ່ນໃດຈຸຕິຈາກໂລກນີ້ແລ້ວໄປເກີດໃນເທວະໂລກນັ້ນ ແມ່ນເຮົາເອງກໍມີສຸຕະເຊັ່ນນັ້ນ ເທວະດາເຫຼົ່ານັ້ນປະກອບດ້ວຍຈາຄະເຊັ່ນໃດ ຈຸຕິ ຈາກໂລກນີ້ແລ້ວໄປເກີດໃນເທວະໂລກນັ້ນ ແມ່ນເຮົາເອງກໍມີຈາຄະເຊັ່ນນັ້ນ ເທວະດາ ເຫຼົ່ານັ້ນປະກອບດ້ວຍປັນຍາເຊັ່ນໃດ ຈຸຕິຈາກໂລກນີ້ແລ້ວໄປເກີດໃນເທວະໂລກນັ້ນ ແມ່ນເຮົາເອງກໍມີປັນຍາເຊັ່ນນັ້ນ" ມະຫານາມ ສະໄໝໃດ ອະຣິຍະສາວົກຣະນຶກເຖິງ ສັດທາ ສີນ ສຸຕະ ຈາຄະ ແລະປັນຍາຂອງຕົນແລະຂອງເທວະດາເຫຼົ່ານັ້ນ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນ ຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະ ກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມຜາຣົບ ເທວະດາທັງຫຼາຍດຳເນີນໄປກົງຢ່າງແນ່ນອນ ມະຫານາມ ກໍອະຣິຍະສາວົກຜູ້ມີຈິດດຳເນີນ ໄປກົງແລ້ວ ຍ່ອມໄດ້ຄວາມຍິນດີອີງອັດຖະ ຍ່ອມໄດ້ຄວາມຍິນດີ ອີງທຳ ຍ່ອມໄດ້ປາໂມດທີ່ປະກອບດ້ວຍທຳ ເມື່ອມີປາໂມດຍ່ອມ ເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະງົບ ທ່ານຜູ້ມີກາຍສະງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ ມະຫານາມ ອະຣິຍະສາວົກນີ້ ຕະຖາຄົດກ່າວວ່າ ເປັນຜູ້ເຖິງຄວາມສະງົບ ຢູ່ໃນໝູ່ສັດຜູ້ເຖິງຄວາມບໍ່ສະງົບ

ເປັນຜູ້ບໍ່ມີພະຍາບາດຢູ່ໃນໝູ່ສັດຜູ້ມີພະຍາບາດ ເປັນຜູ້ເຖິງພ້ອມດ້ວຍກະແສທຳ ຈະເລີນເທວະຕານຸດສະຕິຢູ່

**ປະຖົມມະຫານາມະສູດທີ ໑ ຈົບ**

## ໘. ທຸຕິຍະມະຫານາມະສູດ

## ວ່າດ້ວຍເຈົ້າສາກະຍະພຣະນາມວ່າມະຫານາມ ສູດທີ ໘

[໑໘] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ນີໂຄທາຣາມ ເຂດນະຄອນ ກະບິນລະພັດ ແຄວ້ນສັກກະ ສະໄໝນັ້ນ ເຈົ້າສາກະຍະພຣະນາມວ່າ ມະຫານາມຊົງຫາຍຈາກພຣະປະຊວນໄດ້ບໍ່ດົນ ສະໄໝນັ້ນແລ ພິກຂຸຈຳນວນຫຼາຍເຮັດຈີວອນກຳເພື່ອຖວາຍພຣະຜູ້ມີພຣະພາກເຈົ້າດ້ວຍຫວັງວ່າ "ພຣະຜູ້ມີພຣະພາກເຈົ້າຜູ້ມີຈີວອນສຳເລັດແລ້ວ ລ່ວງໄປ ໓ ເດືອນກໍຈັກສະເດັດຈາຣິກໄປ"

ເຈົ້າສາກະຍະພຣະນາມວ່າ ມະຫານາມໄດ້ຊົງຮູ້ຂ່າວແນວນັ້ນຄືກັນ ລຳດັບນັ້ນ ເຈົ້າສາກະຍະພຣະນາມວ່າມະຫານາມເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍໄດ້ຮູ້ຂ່າວແນວນີ້ວ່າ "ໄດ້ຮູ້ວ່າ ພິກຂຸຈຳນວນຫຼາຍເຮັດຈີວອນກຳເພື່ອຖວາຍພຣະຜູ້ມີພຣະພາກເຈົ້າດ້ວຍຫວັງວ່າ ພຣະຜູ້ມີພຣະພາກເຈົ້າ ມີຈີວອນສຳເລັດແລ້ວ ລ່ວງໄປ ໓ ເດືອນກໍຈັກສະເດັດຈາຣິກໄປ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍເມື່ອຈະຢູ່ດ້ວຍທຳເປັນເຄື່ອງຢູ່ຕ່າງ ໆ ຈະຕ້ອງຢູ່ດ້ວຍທຳເປັນເຄື່ອງຢູ່ອັນໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ມະຫານາມ ການທີ່ພຣະອົງສະເດັດມາຫາຕະຖາຄົດແລ້ວຕັດຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍເມື່ອຈະຢູ່ດ້ວຍທຳເປັນເຄື່ອງຢູ່ຕ່າງ ໆ ຈະຕ້ອງຢູ່ດ້ວຍທຳເປັນເຄື່ອງຢູ່ອັນໃດ" ນີ້ເປັນການສົມຄວນແກ່ພຣະອົງ ຜູ້ເປັນກຸນລະບຸດ ມະຫານາມ ກຸນລະບຸດຜູ້ມີສັດທາເປັນຜູ້ປະສົບຄວາມສຳເລັດ ຜູ້ບໍ່ມີສັດທາບໍ່ປະສົບຄວາມສຳເລັດ ໑ ຜູ້ພາຣົບຄວາມພຽນເປັນຜູ້ປະສົບຄວາມສຳເລັດ ຜູ້ຂີ້ຄ້ານບໍ່ປະສົບຄວາມສຳເລັດ ໑ ຜູ້ມີສະຕິຕັ້ງໝັ້ນເປັນຜູ້ປະສົບຄວາມສຳເລັດ ຜູ້ຫຼົງລືມສະຕິບໍ່ ປະສົບຄວາມສຳເລັດ ໑ ຜູ້ມີຈິດຕັ້ງໝັ້ນເປັນຜູ້ປະສົບຄວາມສຳເລັດ ຜູ້ມີຈິດບໍ່ຕັ້ງໝັ້ນບໍ່ ປະສົບຄວາມສຳເລັດ ໑ ຜູ້ມີປັນຍາເປັນຜູ້ປະສົບຄວາມສຳເລັດ ຜູ້ມີປັນຍາຊາມບໍ່ປະສົບຄວາມສຳເລັດ ໑

ມະຫານາມ ພຣະອົງເພິ່ງຕັ້ງຢູ່ໃນທຳ ໕ ປະການນີ້ ແລ້ວຈະເລີນທຳ ໖ ປະການໃຫ້ຍິ່ງຂຶ້ນໄປເທີ້ນ

ທຳ ໖ ປະການນີ້ ຄື

໑. ພຣະອົງເພິ່ງຣະນຶກເຖິງຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຯລຯ[7] ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ" ມະຫານາມ ສະໄໝໃດ ອະຣິຍະສາວົກຣະນຶກເຖິງຕະຖາຄົດແລ້ວ ສະໄໝນັ້ນ ຈິດຂອງພຣະອະຣິຍະສາວົກນັ້ນ ຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນຍ່ອມຜາຣົບຕະຖາຄົດດຳເນີນໄປກົງຢ່າງແນ່ນອນ ມະຫານາມ ກໍອະຣິຍະສາວົກຜູ້ມີຈິດດຳເນີນໄປກົງແລ້ວ ຍ່ອມໄດ້ຄວາມຍິນດີອີງອັດຖະ[8] ຍ່ອມໄດ້ຄວາມຍິນດີອີງທຳ ຍ່ອມໄດ້ປາໂມດທີ່ປະກອບດ້ວຍທຳ ເມື່ອມີປາໂມດຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະງົບ ທ່ານຜູ້ມີກາຍສະງົບຍ່ອມໄດ້ຮັບສຸກ ເມື່ອມີສຸກຈິດຍ່ອມຕັ້ງໝັ້ນ ມະຫານາມ ພຸດທານຸດສະຕິນີ້ແລ ພຣະອົງ ແມ່ນກຳລັງສະເດັດດຳເນີນກໍຈະເລີນໄດ້ ກຳລັງປະທັບຢືນກໍຈະເລີນໄດ້ ກຳລັງປະທັບນັ່ງກໍຈະເລີນໄດ້ ກຳລັງບັນທົມກໍຈະເລີນໄດ້ ກຳລັງປະກອບວຽກງານກໍຈະເລີນໄດ້ ກຳລັງປະທັບເທິງທີ່ບັນທົມເຊິ່ງບຽດສຽດດ້ວຍພຣະໂອຣົດແລະພຣະທິດາກໍຈະເລີນໄດ້

໒. ພຣະອົງເພິ່ງຣະນຶກເຖິງພຣະທຳ ຯລຯ
໓. ພຣະອົງເພິ່ງຣະນຶກເຖິງພຣະສົງ ຯລຯ
໔. ພຣະອົງເພິ່ງຣະນຶກເຖິງສີນຂອງພຣະອົງ ຯລຯ
໕. ພຣະອົງເພິ່ງຣະນຶກເຖິງຈາຄະຂອງພຣະອົງ ຯລຯ

໖. ພຣະອົງເພິ່ງຣະນຶກເຖິງເທວະດາທັງຫຼາຍວ່າ "ມີເທວະດາຊັ້ນຈາຕຸມະຫາຣາດ ຯລຯ ເທວະດາຊັ້ນສູງຂຶ້ນໄປກວ່ານັ້ນ ເທວະດາເຫຼົ່ານັ້ນປະກອບດ້ວຍສັດທາເຊັ່ນໃດ ຈຸຕິຈາກໂລກນີ້ແລ້ວໄປເກີດໃນເທວະໂລກນັ້ນ ແມ່ນເຮົາເອງກໍມີສັດທາເຊັ່ນນັ້ນ ເທວະດາເຫຼົ່ານັ້ນປະກອບດ້ວຍສີນ ຯລຯ ສຸຕະ ຯລຯ ຈາຄະ ຯລຯ ປັນຍາເຊັ່ນໃດ ຈຸຕິຈາກໂລກນີ້ ແລ້ວໄປເກີດໃນເທວະໂລກນັ້ນ ແມ່ນເຮົາເອງກໍມີປັນຍາເຊັ່ນນັ້ນ" ມະຫານາມ ສະໄໝໃດ ອະຣິຍະສາວົກຣະນຶກເຖິງສັດທາ ສີນ ສຸຕະ ຈາຄະແລະປັນຍາຂອງຕົນແລະຂອງເທວະດາເຫຼົ່ານັ້ນ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນ ຍ່ອມບໍ່ຖືກຣາຄະກຸ້ມລຸມ ບໍ່ຖືກໂທສະກຸ້ມລຸມ ບໍ່ຖືກໂມຫະກຸ້ມລຸມ ສະໄໝນັ້ນ ຈິດຂອງອະຣິຍະສາວົກນັ້ນ ຍ່ອມຜາຣົບເທວະດາທັງຫຼາຍດຳເນີນໄປກົງຢ່າງແນ່ນອນ ມະຫານາມ ກໍອະຣິຍະສາວົກຜູ້ມີຈິດດຳເນີນໄປກົງແລ້ວ ຍ່ອມໄດ້ຄວາມຍິນດີອີງອັດຖະ ຍ່ອມໄດ້ຄວາມຍິນດີອີງທຳ ຍ່ອມໄດ້ປາໂມດທີ່ປະກອບດ້ວຍທຳ ເມື່ອມີ ປາໂມດຍ່ອມເກີດປີຕິ ເມື່ອໃຈມີປີຕິກາຍຍ່ອມສະງົບ ທ່ານມີກາຍ

ສະງົບແລ້ວຍ່ອມໄດ້ຮັບສຸກ ເມື່ອມີສຸກ ຈິດຍ່ອມຕັ້ງໝັ້ນ ມະຫານາມ ເທວະຕານຸດສະຕິນີ້ແລ ພຣະອົງແມ່ນກຳລັງສະເດັດດຳເນີນກໍຈະເລີນໄດ້ ກຳລັງປະທັບຢືນກໍຈະເລີນໄດ້ ກຳລັງປະທັບນັ່ງກໍຈະເລີນໄດ້ ກຳລັງບັນທົມກໍຈະເລີນໄດ້ ກຳລັງປະກອບບຸງກຳງານກໍຈະເລີນໄດ້ ກຳລັງປະທັບເທິງທີ່ບັນທົມເຊິ່ງບຽດສຽດດ້ວຍພຣະໂອຣົດແລະພຣະທິດາກໍຈະເລີນໄດ້

**ທຸຕິຍະມະຫານາມະສູດທີ ໘ ຈົບ**

## ໙. ນັນທິຍະສູດ

## ວ່າດ້ວຍເຈົ້າສາກະຍະພຣະນາມວ່ານັນທິຍະ

[໑໙] ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ນິໂຄທາຣາມ ເຂດນະຄອນ ກະບິນລະພັດ ແຄວ້ນສັກກະ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າມີພຣະປະສົງຈະສະເດັດໄປຈຳພັນສາຢູ່ນະຄອນສາວັດຖີ ເຈົ້າສາກະຍະພຣະນາມວ່ານັນທິຍະໄດ້ຮູ້ຂ່າວແນວນີ້ວ່າ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າມີພຣະປະສົງຈະສະເດັດໄປຈຳພັນສາ ຢູ່ນະຄອນສາວັດຖີ ດັ່ງນັ້ນ ເຈົ້າສາກະຍະພຣະນາມວ່ານັນທິຍະໄດ້ຊົງມີພຣະດຳຣິດັ່ງນີ້ວ່າ "ທາງທີ່ດີ ແມ່ນເຮົາກໍຄວນຈະພັກຢູ່ຕະຫຼອດພັນສາໃນນະຄອນສາວັດຖີ ໃນບ່ອນນັ້ນ ເຮົາຈັກປະກອບບຸງກຳງານແລະຈັກເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຕາມເວລາອັນສົມຄວນ"

ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າຊົງເຂົ້າຈຳພັນສາ ຢູ່ນະຄອນສາວັດຖີ ແມ່ນເຈົ້າສາກະຍະ ພຣະນາມວ່ານັນທິຍະກໍໄດ້ພັກຢູ່ຕະຫຼອດພັນສາ ທີ່ນະຄອນສາວັດຖີ ໃນບ່ອນນັ້ນ ພຣະອົງໄດ້ຊົງປະກອບບຸງກຳງານ ແລະໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຕາມການອັນສົມຄວນ ສະໄໝນັ້ນ ພິກຂຸຈຳນວນຫຼາຍເຮັດຈີວອນກຳເພື່ອຖວາຍພຣະຜູ້ມີພຣະພາກເຈົ້າດ້ວຍຫວັງວ່າ "ພຣະຜູ້ມີພຣະພາກເຈົ້າຜູ້ມີຈີວອນສຳເລັດແລ້ວ ລ່ວງໄປ ໓ ເດືອນກໍຈັກສະເດັດຈາຣິກໄປ"

ເຈົ້າສາກະຍະພຣະນາມວ່ານັນທິຍະໄດ້ຊົງຮູ້ຂ່າວແນວນີ້ວ່າ ໄດ້ຂ່າວວ່າ ພິກຂຸຈຳນວນຫຼາຍເຮັດຈີວອນກຳເພື່ອຖວາຍພຣະຜູ້ມີພຣະພາກເຈົ້າດ້ວຍຫວັງວ່າ "ພຣະຜູ້ມີພຣະພາກເຈົ້າຜູ້ມີຈີວອນສຳເລັດແລ້ວ ລ່ວງໄປ ໓ ເດືອນກໍຈັກສະເດັດຈາຣິກໄປ" ດັ່ງນັ້ນ ເຈົ້າສາກະຍະພຣະນາມວ່າ ນັນທິຍະໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວປະທັບນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້ານ້ອຍໄດ້ຮູ້ຂ່າວວ່າ ພິກຂຸຈຳນວນຫຼາຍເຮັດຈີວອນກຳເພື່ອຖວາຍພຣະຜູ້ມີພຣະພາກເຈົ້າດ້ວຍຫວັງວ່າ "ພຣະຜູ້ມີພຣະພາກເຈົ້າຜູ້ມີຈີວອນສຳເລັດແລ້ວ ລ່ວງໄປ ໓ ເດືອນກໍຈັກສະເດັດຈາຣິກໄປ" ຂ້ານ້ອຍເມື່ອຈະຢູ່ດ້ວຍທຳເປັນເຄື່ອງຢູ່ຕ່າງ ໆ ຈະຕ້ອງຢູ່ດ້ວຍທຳເປັນເຄື່ອງຢູ່ອັນໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ ດີແລ້ວ ດີແລ້ວ ນັນທິຍະ ການທີ່ພຣະອົງສະເດັດມາຫາຕະຖາຄົດແລ້ວຕັດຖາມວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ຂ້ານ້ອຍເມື່ອຈະຢູ່ດ້ວຍທຳເປັນເຄື່ອງຢູ່ຕ່າງ ໆ ຈະຕ້ອງຢູ່ດ້ວຍທຳເປັນເຄື່ອງຢູ່ອັນໃດ" ນີ້ເປັນການສົມຄວນແກ່ພຣະອົງຜູ້ເປັນກຸນລະບຸດ ນັນທິຍະ ກຸນລະບຸດຜູ້ມີສັດທາເປັນຜູ້ປະສົບຄວາມສຳເລັດ ຜູ້ບໍ່ມີສັດທາບໍ່ປະສົບຄວາມສຳເລັດ ໑ ຜູ້ມີສີນເປັນຜູ້ປະສົບຄວາມສຳເລັດ ຜູ້ທຸສີນບໍ່ປະສົບຄວາມສຳເລັດ ໑ ຜູ້ພາຣົບຄວາມພຽນເປັນຜູ້ປະສົບຄວາມສຳເລັດ ຜູ້ຂີ້ຄ້ານບໍ່ປະສົບຄວາມສຳເລັດ ໑ ຜູ້ມີສະຕິຕັ້ງໝັ້ນເປັນຜູ້ປະສົບຄວາມສຳເລັດ ຜູ້ຫຼົງລືມສະຕິບໍ່ປະສົບຄວາມສຳເລັດ ໑ ຜູ້ມີຈິດຕັ້ງໝັ້ນເປັນຜູ້ປະສົບຄວາມສຳເລັດ ຜູ້ມີຈິດບໍ່ຕັ້ງໝັ້ນບໍ່ປະສົບຄວາມ ສຳເລັດ ໑ ຜູ້ມີປັນຍາເປັນຜູ້ປະສົບຄວາມສຳເລັດ ຜູ້ມີປັນຍາຊາມບໍ່ປະສົບຄວາມ ສຳເລັດ ໑

ນັນທິຍະ ພຣະອົງເພິ່ງຕັ້ງຢູ່ໃນທຳ ๖ ປະການນີ້ ແລ້ວຕັ້ງສະຕິໝັ້ນໄວ້ພາຍໃນຕົນໃນທຳ ๕ ປະການເທີ້ນ

ທຳ ๕ ປະການນີ້ ຄື

໑. ພຣະອົງເພິ່ງຣະນຶກເຖິງຕະຖາຄົດວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະ ອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະ ພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ ນັນທິຍະ ພຣະອົງເພິ່ງຕັ້ງສະຕິໝັ້ນໄວ້ພາຍໃນຕົນພາຣົບຕະຖາຄົດແນວນີ້ເທີ້ນ

໒. ພຣະອົງເພິ່ງຣະນຶກເຖິງພຣະທຳວ່າ "ພຣະທຳເປັນທຳທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ດີແລ້ວ ຜູ້ປະຕິບັດຈະເພິ່ງເຫັນແຈ້ງດ້ວຍຕົນເອງ ບໍ່ປະກອບດ້ວຍການເວລາ ຄວນເອີ້ນໃຫ້ເບິ່ງ ຄວນນ້ອມເຂົ້າມາໃນຕົນ ອັນວິນຍູຊົນເພິ່ງຮູ້ສະເພາະຕົນ" ນັນທິຍະ ພຣະອົງເພິ່ງຕັ້ງສະຕິໝັ້ນໄວ້ພາຍໃນຕົນພາຣົບທຳແນວນີ້ເທີ້ນ

໓. ພຣະອົງເພິ່ງຣະນຶກເຖິງເຫຼົ່າກັນລະຍານະມິດວ່າ "ເປັນລາບຂອງເຮົານໍ ເຮົາໄດ້ດີແລ້ວນໍ ທີ່ເຮົາມີກັນລະຍານະມິດຜູ້ອີດູ ມຸ້ງຫວັງປະໂຫຍດ ກ່າວແນະນຳພ່ຳສອນ" ນັນທິຍະ ພຣະອົງເພິ່ງຕັ້ງສະຕິໝັ້ນໄວ້ພາຍໃນຕົນພາຣົບເຫຼົ່າກັນລະຍານະມິດແນວນີ້ເທີ້ນ

໔. ພຣະອົງເພິ່ງຣະນຶກເຖິງຈາຄະຂອງພຣະອົງວ່າ "ເປັນລາບຂອງເຮົານໍ ເຮົາໄດ້ດີແລ້ວນໍ ທີ່ເຮົາມີຈິດປາສະຈາກຄວາມຂີ້ຖີ່ອັນເປັນມົນທິນ ມີຈາຄະອັນສະລະແລ້ວ ມີຝາມືຊຸ່ມ ຍິນດີໃນການສະລະ ຄວນແກ່ການຂໍ ຍິນດີໃນການແຈກທານ ຢູ່ຄອງເຮືອນໃນໝູ່ສັດຜູ້ຖືກຄວາມຂີ້ຖີ່ອັນເປັນມົນທິນກຸ້ມລຸມ" ນັນທິຍະ ພຣະອົງເພິ່ງຕັ້ງສະຕິໝັ້ນໄວ້ພາຍໃນຜາຣົບຈາຄະແນວນີ້ເທີ້ນ

໕. ພຣະອົງເພິ່ງຣະນຶກເຖິງເທວະດາທັງຫຼາຍວ່າ "ເທວະດາເຫຼົ່າໃດລ່ວງຄວາມເປັນສະຫາຍແຫ່ງເຫຼົ່າເທວະດາຜູ້ມີຄໍາເຂົ້າເປັນພັກສາ[១]ແລ້ວ ເຂົ້າເຖິງກາຍມະໂນໄມ[២] ແນວໃດແນວໜຶ່ງ ເທວະດາເຫຼົ່ານັ້ນຍ່ອມບໍ່ພິຈາລະນາເຫັນກິດທີ່ຄວນເຮັດຂອງຕົນ ຫຼືການສັ່ງສົມກິດທີ່ຕົນເຮັດແລ້ວ" ນັນທິຍະ ເທວະດາເຫຼົ່າໃດເຫຼົ່າໜຶ່ງ ລ່ວງຄວາມເປັນສະຫາຍແຫ່ງເຫຼົ່າເທວະດາຜູ້ມີຄໍາເຂົ້າເປັນພັກສາແລ້ວຈຶ່ງເຂົ້າເຖິງ ກາຍມະໂນໄມແນວໃດແນວໜຶ່ງ ເທວະດາເຫຼົ່ານັ້ນຍ່ອມບໍ່ພິຈາລະນາເຫັນກິດທີ່ຄວນເຮັດຂອງຕົນ ຫຼືການສັ່ງສົມກິດທີ່ຕົນເຮັດແລ້ວ ປຽບຄືພິກຂຸຜູ້ເປັນອະສະມະຍະວິມຸດ[໑]ບໍ່ພິຈາລະນາເຫັນກິດທີ່ຄວນເຮັດຂອງຕົນຫຼືການສັ່ງສົມກິດທີ່ຕົນເຮັດແລ້ວ ນັນທິຍະ ພຣະອົງເພິ່ງຕັ້ງສະຕິໝັ້ນພາຍໃນຜາຣົບເທວະດາແນວນີ້ເທີ້ນ

ນັນທິຍະ ອະຣິຍະສາວົກຜູ້ປະກອບດ້ວຍທໍາ ໑໑ ປະການນີ້ແລ ຍ່ອມລະ ບໍ່ຢຶດໝັ້ນບາບອະກຸສົນທໍາທັງຫຼາຍ

ອະຣິຍະສາວົກຜູ້ປະກອບດ້ວຍທໍາ ໑໑ ປະການນີ້ ຍ່ອມລະ ບໍ່ຢຶດໝັ້ນບາບອະກຸສົນທໍາທັງຫຼາຍ ປຽບຄືໝໍ້ທີ່ຂວໍ້າ ຍ່ອມບໍ່ກັບມາບັນໃສ່ຂອງທີ່ເຮ່ຍແລ້ວ ແລະ ປຽບຄືໄຟທີ່ລາມພົ້ນໄປຈາກຫຍ້າແລ້ວ ຍ່ອມໄໝ້ຂອງທີ່ຄວນໄໝ້ທີ່ນັ້ນ ຍ່ອມບໍ່ກັບມາໄໝ້ຂອງທີ່ໄໝ້ແລ້ວ

**ນັນທິຍະສູດທີ ໓ ຈົບ**

# ໔. ສຸພູຕິສູດ

## ວ່າດ້ວຍພຣະທໍາມະເທດສະໜາທີ່ຊົງສະແດງແກ່ພຣະສຸພູຕິ

[໑໔] ຄັ້ງນັ້ນ ທ່ານພຣະສຸພູຕິກັບພິກຂຸຜູ້ມີສັດທາ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດຖາມທ່ານພຣະສຸພູຕິດັ່ງນີ້ວ່າ "ສຸພູຕິ ພິກຂຸນີ້[២] ຊື່ວ່າແນວໃດ"

ທ່ານພຣະສຸພູຕິຂາບທູນວ່າ "ພິກຂຸນີ້ມີສັດທາ ເປັນບຸດຂອງອຸປາສົກຜູ້ມີສັດທາ ອອກຈາກເຮືອນບວດເປັນບັນພະຊິດດ້ວຍສັດທາ ຂ້ານ້ອຍ"

"ສຸພູຕິ ພິກຂຸນີ້ມີສັດທາ ເປັນບຸດຂອງອຸປາສົກຜູ້ມີສັດທາ ອອກຈາກເຮືອນບວດເປັນບັນພະຊິດດ້ວຍສັດທາ ເຫັນລັກສະນະຂອງຜູ້ມີສັດທາທັງຫຼາຍບໍ?"

"ຂ້າແດ່ ພຣະຜູ້ມີພຣະພາກເຈົ້າ ບັດນີ້ ເປັນການສົມຄວນສະແດງລັກສະນະຂອງຜູ້ມີສັດທານັ້ນ ຂ້າແດ່ ພຣະສຸຄົດເຈົ້າ ບັດນີ້ ເປັນການສົມຄວນສະແດງລັກສະນະຂອງຜູ້ມີສັດທານັ້ນ ຂໍພຣະຜູ້ມີພຣະພາກເຈົ້າໂຜດຕັດລັກສະນະແຫ່ງສັດທາຂອງຜູ້ມີສັດທາເທີ້ນ ຂ້າພຣະອົງກໍຈັກຮູ້ ໃນບັດນີ້ວ່າ ພິກຂຸນີ້ຈະເຫັນລັກສະນະຂອງຜູ້ມີສັດທາບໍ?"

"ສຸພູຕິ ຖ້າເປັນແນວນັ້ນ ທ່ານຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ເມື່ອ ທ່ານພຣະສຸພູຕິທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

ສຸພູຕິ

໑. ພິກຂຸໃນທຳວິໄນນີ້ເປັນຜູ້ມີສິນ ສັງລວມດ້ວຍການສັງວອນໃນປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ ແມ່ນການທີ່ພິກຂຸເປັນຜູ້ມີສິນ ຯລຯ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍນີ້ກໍເປັນລັກສະນະແຫ່ງສັດທາຂອງຜູ້ມີສັດທາ

໒. ພິກຂຸເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທັງຫຼາຍ ທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະ ແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈແທງຕະຫຼອດດີດ້ວຍທິດຖິ ແມ່ນການທີ່ພິກຂຸເປັນພະຫູສູດ ຯລຯ ແທງຕະຫຼອດດີດ້ວຍທິດຖິນີ້ກໍເປັນລັກສະນະແຫ່ງສັດທາຂອງຜູ້ມີສັດທາ

໓. ພິກຂຸເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ ແມ່ນການທີ່ພິກຂຸເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີນີ້ກໍເປັນລັກສະນະແຫ່ງສັດທາຂອງຜູ້ມີສັດທາ

໔. ພິກຂຸເປັນຜູ້ວ່າງ່າຍ ປະກອບດ້ວຍທຳເປັນເຄື່ອງເຮັດໃຫ້ເປັນຜູ້ວ່າງ່າຍ ອົດທົນ ຮັບຟັງຄຳພ່ຳສອນໂດຍເຄົາລົບ ແມ່ນການທີ່ພິກຂຸເປັນຜູ້ວ່າງ່າຍ ປະກອບດ້ວຍທຳເປັນເຄື່ອງທີ່ເຮັດໃຫ້ເປັນຜູ້ວ່າງ່າຍ ອົດທົນ ຮັບຟັງຄຳພ່ຳສອນໂດຍເຄົາລົບ ນີ້ກໍເປັນລັກສະນະແຫ່ງສັດທາຂອງຜູ້ມີສັດທາ

໕. ພິກຂຸເປັນຜູ້ດຸໝັ່ນ ບໍ່ຂີ້ຄ້ານໃນວຽກງານທີ່ຈະຕ້ອງຊ່ອຍກັນເຮັດທັງງານສູງແລະງານຕ່ຳໆຂອງເພື່ອນພົມມະຈາຣີທັງຫຼາຍ ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາອັນເປັນອຸບາຍໃນ

ວຽກງານທີ່ຈະຕ້ອງຊ່ອຍກັນເຮັດນັ້ນ ສາມາດເຮັດໄດ້ ສາມາດຈັດໄດ້ ແມ່ນການທີ່ພິກຂຸເປັນຜູ້ດຸໝັ່ນ ບໍ່ຂີ້ຄ້ານໃນກິດທີ່ຈະຕ້ອງຊ່ອຍກັນເຮັດທັງງານສູງແລະງານຕ່ຳຂອງເພື່ອນພົມມະຈາຣີທັງຫຼາຍ ໆລໆ ສາມາດເຮັດໄດ້ ສາມາດຈັດໄດ້ນີ້ກໍເປັນລັກສະນະແຫ່ງສັດທາຂອງຜູ້ມີສັດທາ

໖. ພິກຂຸເປັນຜູ້ຕ້ອງການທຳ ເປັນຜູ້ຟັງແລະຜູ້ສະແດງທຳອັນເປັນທີ່ພໍໃຈ ມີປາໂມດ (ຄວາມບັນເທີງໃຈ)ຢ່າງຍິ່ງໃນອະພິທຳ ໃນອະພິວິໄນ ແມ່ນການທີ່ພິກຂຸເປັນຜູ້ຕ້ອງການທຳ ເປັນຜູ້ຟັງແລະຜູ້ສະແດງທຳອັນເປັນທີ່ພໍໃຈ ມີປາໂມດຢ່າງຍິ່ງໃນອະພິທຳ ໃນອະພິວິໄນນີ້ກໍເປັນລັກສະນະແຫ່ງສັດທາຂອງຜູ້ມີສັດທາ

໗. ພິກຂຸເປັນຜູ້ຜາຣິບຄວາມພຽນເພື່ອລະອະກຸສົນທຳ ເພື່ອໃຫ້ກຸສົນທຳເກີດ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນໝັ້ນຄົງ ບໍ່ຖີ້ເບົາໃນກຸສົນທຳທັງຫຼາຍ ແມ່ນການທີ່ພິກຂຸເປັນຜູ້ຜາຣິບຄວາມພຽນ ໆລໆ ນີ້ກໍເປັນລັກສະນະແຫ່ງສັດທາຂອງຜູ້ມີສັດທາ

໘. ພິກຂຸເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ ແມ່ນການທີ່ພິກຂຸເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກນີ້ກໍເປັນລັກສະນະແຫ່ງສັດທາຂອງຜູ້ມີສັດທາ

໙. ພິກຂຸຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໓ ຊາດແດ່ ໔ ຊາດແດ່ ໕ ຊາດແດ່ ໑໐ ຊາດແດ່ ໒໐ ຊາດແດ່ ໓໐ ຊາດແດ່ ໔໐ ຊາດແດ່ ໕໐ ຊາດແດ່ ໑໐໐ ຊາດແດ່ ໑,໐໐໐ ຊາດແດ່ ໑໐໐,໐໐໐ ຊາດແດ່ ຕະຫຼອດສັງວັດຕະກັບຫຼວງຫຼາຍແດ່ ຕະຫຼອດວິວັດຕະກັບຫຼວງຫຼາຍ ແດ່ ຕະຫຼອດສັງວັດຕະກັບແລະວິວັດຕະກັບຫຼວງຫຼາຍແດ່ວ່າ "ໃນພົບນັ້ນເຮົາມີ ຊື່ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກ ແລະມີອາຍຸ ແນວນັ້ນ ໆ ຈຸຕິຈາກພົບນັ້ນກໍໄປເກີດໃນພົບນັ້ນ ແມ່ນໃນພົບນັ້ນເຮົາກໍມີຊື່ ແນວນັ້ນ ມີຕະກູນ ມີວັນນະ ມີອາຫານ ສະເຫວີຍສຸກທຸກແລະມີອາຍຸແນວນັ້ນ ໆ ຈຸຕິຈາກພົບນັ້ນແລ້ວຈຶ່ງມາເກີດໃນພົບນີ້" ທ່ານຣະນຶກຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້ ແມ່ນການທີ່ພິກຂຸຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໆລໆ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້ ນີ້ກໍເປັນລັກສະນະແຫ່ງສັດທາຂອງຜູ້ມີສັດທາ

໑໐. ພິກຂຸເຫັນໝູ່ສັດຜູ້ກຳລັງຈຸຕິ (ເຄື່ອນ) ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳວ່າ "ໝູ່ສັດທີ່ປະກອບກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຜິດ ແລະຊັກຊວນຜູ້ອື່ນໃຫ້ເຮັດຕາມຄວາມເຫັນຜິດ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ແຕ່ໝູ່ສັດທີ່ປະກອບກາຍສຸດຈະຣິດ

ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ບໍ່ກ່າວຮ້າຍພຣະອະຣິຍະ ມີຄວາມເຫັນຖືກ ແລະຊັກຊວນຜູ້ອື່ນໃຫ້ເຮັດຕາມຄວາມເຫັນຖືກ ພວກເຂົາຫຼັງຈາກຕາຍແລ້ວຈະໄປເກີດໃນສຸກຄະຕິໂລກສະຫວັນ" ທ່ານເຫັນ ໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມ ເກີດດີແລະເກີດບໍ່ດີດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳແບບນີ້ແລ ແມ່ນການທີ່ພິກຂຸເຫັນໝູ່ສັດ ຯລຯ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳນີ້ກໍເປັນລັກສະນະແຫ່ງສັດທາຂອງຜູ້ມີສັດທາ

໑໑. ພິກຂຸເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະ ສິ້ນໄປ ດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ແມ່ນການທີ່ພິກຂຸເຮັດໃຫ້ແຈ້ງເຈໂຕວິມຸດຕິປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປ ຯລຯ ເຂົ້າເຖິງຢູ່ໃນປັດຈຸບັນນີ້ກໍເປັນລັກສະນະແຫ່ງສັດທາຂອງຜູ້ມີສັດທາ

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ແລ້ວ ທ່ານພຣະສຸພູຕິໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ພຣະອົງຜູ້ຈະເລີນ ລັກສະນະແຫ່ງສັດທາຂອງຜູ້ມີສັດທາທີ່ພຣະຜູ້ມີພຣະພາກເຈົ້າໄດ້ຕັດແລ້ວນີ້ ມີຢູ່ພ້ອມແກ່ພິກຂຸນີ້ ແລະພິກຂຸນີ້ກໍເຫັນລັກສະນະແຫ່ງສັດທາຂອງຜູ້ມີສັດທາເຫຼົ່ານີ້ ຄື

໑. ພິກຂຸນີ້ເ ປັນຜູ້ມີສີນ ສັງລວມດ້ວຍການສັງວອນໃນພຣະປາຕິໂມກ ພຽບພ້ອມດ້ວຍອາຈາຣະແລະໂຄຈອນ ມີປົກກະຕິເຫັນໄພໃນໂທດແມ່ນເລັກໜ້ອຍ ສະມາທານສຶກສາຢູ່ໃນສິກຂາບົດທັງຫຼາຍ

໒. ພິກຂຸນີ້ ເປັນພະຫູສູດ ຊົງສຸຕະ ສັ່ງສົມສຸຕະ ເປັນຜູ້ໄດ້ຟັງຫຼາຍເຊິ່ງທຳທັງຫຼາຍທີ່ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ມີຄວາມງາມໃນບ່ອນສຸດ ປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະ ບໍລິສຸດບໍລິບູນຄົບຖ້ວນ ຊົງຈຳໄວ້ໄດ້ ຄ່ອງປາກ ຂຶ້ນໃຈແທງຕະຫຼອດດີດ້ວຍທິດຖິ

໓. ພິກຂຸນີ້ ເປັນຜູ້ມີມິດດີ ມີສະຫາຍດີ ມີເພື່ອນດີ

໔. ພິກຂຸນີ້ ເປັນຜູ້ວ່າງ່າຍ ປະກອບດ້ວຍທຳເປັນເຄື່ອງເຮັດໃຫ້ເປັນຜູ້ວ່າງ່າຍ ເປັນຜູ້ອົດທົນ ຮັບຟັງຄຳພ່ຳສອນໂດຍເຄົາລົບ

໕. ພິກຂຸນີ້ ເປັນຜູ້ດຸໝັ່ນບໍ່ຂີ້ຄ້ານໃນວຽກງານທີ່ຈະຕ້ອງຊ່ອຍກັນເຮັດທັງງານສູງແລະງານຕ່ຳຂອງເພື່ອນພົມມະຈາຣີທັງຫຼາຍ ປະກອບດ້ວຍປັນຍາເປັນເຄື່ອງພິຈາລະນາອັນເປັນອຸບາຍໃນວຽກງານທີ່ຈະຕ້ອງຊ່ອຍກັນເຮັດນັ້ນ ສາມາດເຮັດໄດ້ ສາມາດຈັດໄດ້

໖. ພິກຂຸນີ້ ເປັນຜູ້ຕ້ອງການທຳ ເປັນຜູ້ຟັງແລະຜູ້ສະແດງທຳອັນເປັນທີ່ພໍໃຈ ມີປາໂມດຢ່າງຍິ່ງໃນອະພິທຳ ໃນອະພິວິໄນຢູ່

໗. ພິກຂຸນີ້ເປັນຜູ້ຜາຣົບຄວາມພຽນ ໆລໆ ມີຄວາມເຂັ້ມແຂງ ມີຄວາມບາກບັ່ນ ໝັ້ນຄົງບໍ່ຖືເບົາໃນກຸສົນທຳທັງຫຼາຍ

໘. ພິກຂຸນີ້ ເປັນຜູ້ໄດ້ຊານ ໔ ອັນມີໃນຈິດຍິ່ງເຊິ່ງເປັນເຄື່ອງຢູ່ເປັນສຸກໃນປັດຈຸບັນ ຕາມຄວາມປາຖະໜາ ໄດ້ໂດຍບໍ່ຍາກ ໄດ້ໂດຍບໍ່ລຳບາກ

໙. ພິກຂຸນີ້ ຣະນຶກຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ໆລໆ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແນວນີ້

໑໐. ພິກຂຸນີ້ ເຫັນໝູ່ສັດຜູ້ກຳລັງຈຸຕິ ກຳລັງເກີດ ທັງຊັ້ນຕ່ຳແລະຊັ້ນສູງ ງາມແລະບໍ່ງາມເກີດດີແລະເກີດບໍ່ດີ ດ້ວຍຕາທິບອັນບໍລິສຸດເໜືອມະນຸດ ໆລໆ ຮູ້ແຈ້ງເຖິງໝູ່ສັດຜູ້ເປັນໄປຕາມກຳ

໑໑. ພິກຂຸນີ້ ເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະສິ້ນໄປ ໆລໆ ເຂົ້າເຖິງຢູ່ໃນປັດຈຸບັນ ລັກສະນະແຫ່ງສັດທາຂອງຜູ້ມີສັດທາທີ່ພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວ້ເຫຼົ່ານີ້ ມີຢູ່ພ້ອມແກ່ພິກຂຸນີ້ແລະພິກຂຸນີ້ກໍເຫັນລັກສະນະແຫ່ງສັດທາຂອງຜູ້ມີສັດທາເຫຼົ່ານີ້”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ດີແລ້ວ ໆ ສຸພູຕິ ຖ້າເປັນແນວນັ້ນ ທ່ານເພິ່ງຢູ່ກັບພິກຂຸຊື່ວ່າມີສັດທານີ້ເທີ້ນ ສຸພູຕິ ແຕ່ເມື່ອໃດ ທ່ານຫວັງຈະມາຢ້ຽມຢາມຕະຖາຄົດ ເມື່ອນັ້ນ ທ່ານກັບພິກຂຸຊື່ວ່າມີສັດທານີ້ເພິ່ງມາຢ້ຽມຢາມຕະຖາຄົດເທີ້ນ”

**ສຸພູຕິສູດທີ ໔ ຈົບ**

## ໕. ເມດຕາສູດ
## ວ່າດ້ວຍອານິສົງຂອງເມດຕາ

[໑໕] ພິກຂຸທັງຫຼາຍ ເມດຕາເຈໂຕວິມຸດຕິທີ່ບຸກຄົນເສບແລ້ວ ຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ເພິ່ງຫວັງໄດ້ອານິສົງ ໑໑ ປະການ

ອານິສົງ ໑໑ ປະການ ອັນໃດແດ່ ຄື

໑. ຫຼັບເປັນສຸກ

໔. ຕື່ນເປັນສຸກ
໕. ບໍ່ຝັນຮ້າຍ
໔. ເປັນທີ່ຮັກຂອງມະນຸດທັງຫຼາຍ
໕. ເປັນທີ່ຮັກຂອງອະມະນຸດທັງຫຼາຍ
໖. ເທວະດາທັງຫຼາຍຮັກສາ
໗. ໄຟ ຢາພິດ ຫຼືອາວຸດ ແຊກຊຶມບໍ່ໄດ້
໘. ຈິດຕັ້ງໝັ້ນໄດ້ໄວ
໙. ສີໜ້າສົດໃສ
໑໐. ບໍ່ຫຼົງລືມສະຕິຕາຍ
໑໑. ເມື່ອຍັງບໍ່ແທງຕະຫຼອດຄຸນວິເສດອັນຍອດຍິ່ງ[໑] ຍ່ອມເຂົ້າເຖິງພົມມະໂລກ

ພິກຂຸທັງຫຼາຍ ເມດຕາເຈໂຕວິມຸດຕິທີ່ບຸກຄົນເສບແລ້ວ ຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນຄືຍານແລ້ວ ເຮັດໃຫ້ເປັນບ່ອນຕັ້ງແລ້ວ ໃຫ້ຕັ້ງໝັ້ນແລ້ວ ສັ່ງສົມແລ້ວ ຜາຣົບດີແລ້ວ ເພິ່ງຫວັງໄດ້ອານິສົງ ໑໑ ປະການນີ້

**ເມດຕາສູດທີ ໕ ຈົບ**

## ໖. ອັດຖະກະນາຄະຣະສູດ

### ວ່າດ້ວຍຄະຫະບໍດີຊາວອັດຖະກະນະຄອນ

[໑໖] ສະໄໝໜຶ່ງ ທ່ານພຣະອານົນຢູ່ ເວລຸວະຄາມ ເຂດນະຄອນເວສາລີ ສະໄໝນັ້ນແລ ຄະຫະບໍດີຊາວອັດຖະກະນະຄອນຊື່ວ່າທະສະມະ[໒] ໄດ້ເດີນທາງໄປເຖິງເມືອງປາຕະລີບຸດ ດ້ວຍກິດທີ່ຕ້ອງເຮັດບາງຢ່າງ

ຄັ້ງນັ້ນແລ ທະສະມະຄະຫະບໍດີຊາວອັດຖະກະນະຄອນ ໄດ້ເຂົ້າໄປພົບພິກຂຸອົງໜຶ່ງທີ່ກຸກກຸຕາຣາມ ຈຶ່ງຖາມພິກຂຸນັ້ນວ່າ

"ທ່ານຂ້ານ້ອຍ ດຽວນີ້ ທ່ານພຣະອານົນຢູ່ບ່ອນໃດ ຂ້າພະເຈົ້າຕ້ອງການຈະພົບທ່ານ"

ພິກຂຸຕອບວ່າ "ຄະຫະບໍດີ ທ່ານພຣະອານົນນີ້ຢູ່ທີ່ເວລຸວະຄາມ ເຂດນະຄອນເວສາລີ"

ຄັ້ງນັ້ນ ທະສະມະຄະຫະບໍດີຊາວອັດຖະກະນະຄອນ ເຮັດກິດທີ່ຄວນເຮັດໃນເມືອງປາຕະລີບຸດສຳເລັດແລ້ວ ໄດ້ເຂົ້າໄປພົບທ່ານພຣະອານົນທີ່ເວລຸວະຄາມ ເຂດນະຄອນເວສາລີ ອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຖາມທ່ານພຣະອານົນວ່າ

"ທ່ານອານົນຜູ້ຈະເລີນ ທຳອັນເປັນເອກເຊິ່ງເປັນທີ່ລຸດພົ້ນແຫ່ງຈິດທີ່ຍັງບໍ່ລຸດພົ້ນ ເປັນທີ່ເຖິງຄວາມສິ້ນໄປແຫ່ງອາສະວະທັງຫຼາຍທີ່ຍັງບໍ່ໝົດໄປ ຫຼືເປັນທີ່ບັນລຸທຳເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ບັນລຸໂດຍລຳດັບຂອງພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ຕັດໄວ້ຖືກຕ້ອງແລ້ວ ມີຢູ່ບໍ"

ທ່ານພຣະອານົນຕອບວ່າ "ຄະຫະບໍດີ ທຳອັນເປັນເອກເຊິ່ງເປັນທີ່ລຸດພົ້ນແຫ່ງຈິດທີ່ຍັງ ບໍ່ລຸດພົ້ນ ເປັນທີ່ເຖິງຄວາມສິ້ນໄປແຫ່ງອາສະວະທັງຫຼາຍທີ່ຍັງບໍ່ໝົດໄປ ຫຼື ເປັນທີ່ບັນລຸທຳເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ບັນລຸໂດຍລຳດັບຂອງພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າຕັດໄວ້ຖືກຕ້ອງແລ້ວ ມີຢູ່"

ທະສະມະຄະຫະບໍດີຖາມວ່າ "ທ່ານອານົນຜູ້ຈະເລີນ ທຳອັນເປັນເອກເຊິ່ງເປັນທີ່ລຸດພົ້ນແຫ່ງຈິດທີ່ຍັງບໍ່ລຸດພົ້ນ ເປັນທີ່ເຖິງຄວາມສິ້ນໄປແຫ່ງອາສະວະທັງຫຼາຍທີ່ຍັງບໍ່ໝົດໄປ ຫຼື ເປັນທີ່ບັນລຸທຳເປັນແດນກະເສມຈາກໂຍຄະອັນປະເສີດໂດຍລຳດັບຂອງພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າຕັດໄວ້ຖືກຕ້ອງແລ້ວ ເປັນແນວໃດ?"

ທ່ານພຣະອານົນຕອບວ່າ ຄະຫະບໍດີ

໑. ພິກຂຸໃນພຣະທຳວິໄນນີ້ ສະຫງັດຈາກກາມ ແລະອະກຸສົນທຳທັງຫຼາຍ ບັນລຸປະຖົມຊານທີ່ມີວິຕົກ ວິຈານ ປີຕິແລະສຸກອັນເກີດຈາກວິເວກຢູ່ ພິກຂຸນັ້ນພິຈາລະນາ ເຫັນດັ່ງນີ້ ຍ່ອມຮູ້ແຈ້ງວ່າ "ແມ່ນແຕ່ປະຖົມຊານນີ້ແລ ກໍຖືກປຸງແຕ່ງແລ້ວ ສິ່ງໃດ ສິ່ງໜຶ່ງທີ່ຖືກປຸງແຕ່ງແລ້ວ ສິ່ງນັ້ນບໍ່ທ່ຽງ ມີຄວາມດັບໄປເປັນທຳມະດາ" ພິກຂຸນັ້ນຕັ້ງຢູ່ໃນທຳຄືສະມະຖະແລະວິປັດສະນານັ້ນແລ້ວ ຍ່ອມບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ຫາກຍັງບໍ່ບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ກໍຈະເປັນໂອປະປາຕິກະ[๑] ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການ[๒] ສິ້ນໄປ ດ້ວຍຄວາມຍິນດີເພີດເພີນໃນທຳ໑ນັ້ນ ໆ ຈັກປະຣິນິບພານໃນພົບນັ້ນ໔ ບໍ່ຫວນກັບມາຈາກໂລກນັ້ນອີກ

ຄະຫະບໍດີ ທຳອັນເປັນເອກແມ່ນນີ້ແລ ເຊິ່ງເປັນທີ່ລຸດພົ້ນແຫ່ງຈິດທີ່ຍັງບໍ່ລຸດພົ້ນ ເປັນທີ່ເຖິງຄວາມສິ້ນໄປແຫ່ງອາສະວະທັງຫຼາຍທີ່ຍັງບໍ່ໝົດໄປ ຫຼືເປັນທີ່ບັນລຸທຳເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ບັນລຸໂດຍລຳດັບ ຂອງພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າຕັດໄວ້ຖືກຕ້ອງແລ້ວ

໔. ຍ້ອນວິຕົກວິຈານສະງົບລະງັບໄປ ພິກຂຸບັນລຸທຸຕິຍະຊານທີ່ມີຄວາມຜ່ອງໃສໃນ ພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ[໑] ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ຯລຯ

໓. ຍ້ອນປີຕິຈາງຄາຍອອກ ພິກຂຸມີອຸເປກຂາ ມີສະຕິສຳປະຊັນຍະ ສະເຫວີຍສຸກດ້ວຍນາມກາຍ ບັນລຸຕະຕິຍະຊານ ຯລຯ

໔. ຍ້ອນລະສຸກແລະທຸກໄດ້ ຍ້ອນໂສມະນັດແລະໂທມະນັດດັບໄປກ່ອນແລ້ວ ພິກຂຸບັນລຸຈະຕຸດຖະຊານທີ່ບໍ່ມີທຸກ ບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ພິກຂຸນັ້ນພິຈາລະນາເຫັນດັ່ງນີ້ຍ່ອມຮູ້ແຈ້ງວ່າ "ແມ່ນແຕ່ຈະຕຸດຖະຊານນີ້ແລກໍຖືກປຸງແຕ່ງແລ້ວ ສິ່ງໃດສິ່ງໜຶ່ງທີ່ຖືກປຸງແຕ່ງແລ້ວສິ່ງນັ້ນບໍ່ທ່ຽງ ມີຄວາມດັບໄປເປັນທຳມະດາ" ພິກຂຸນັ້ນຕັ້ງຢູ່ໃນທຳຄືສະມະຖະແລະວິປັດສະນານັ້ນແລ້ວ ຍ່ອມບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ຫາກຍັງບໍ່ບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ກໍຈະເປັນໂອປະປາຕິກະ ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ດ້ວຍຄວາມຍິນດີເພີດເພີນໃນທຳນັ້ນ ໆ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

ຄະຫະບໍດີ ທຳອັນເປັນເອກແມ່ນນີ້ແລ ເຊິ່ງເປັນທີ່ລຸດພົ້ນແຫ່ງຈິດທີ່ຍັງບໍ່ລຸດພົ້ນ ເປັນທີ່ເຖິງຄວາມສິ້ນໄປແຫ່ງອາສະວະທັງຫຼາຍທີ່ຍັງບໍ່ໝົດໄປ ຫຼືເປັນທີ່ບັນລຸທຳເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ບັນລຸໂດຍລຳດັບຂອງພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ-ສຳມາສຳພຸດທະເຈົ້າຕັດໄວ້ຖືກຕ້ອງແລ້ວ

໕. ພິກຂຸມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ທິດທີ ໔ ທິດທີ ໓ ທິດທີ ໔ ທິດ ເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານດ້ວຍເມດຕາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ພິກຂຸນັ້ນ ພິຈາລະນາເຫັນດັ່ງນີ້ຍ່ອມຮູ້ແຈ້ງວ່າ "ແມ່ນເມດຕາເຈໂຕວິມຸດຕິນີ້ແລກໍຖືກປຸງແຕ່ງແລ້ວ ກໍສິ່ງໃດສິ່ງໜຶ່ງທີ່ຖືກປຸງແຕ່ງແລ້ວ ສິ່ງນັ້ນບໍ່ທ່ຽງ ມີຄວາມດັບໄປເປັນທຳມະດາ" ພິກຂຸນັ້ນຕັ້ງຢູ່ໃນທຳຄືສະມະຖະແລະວິປັດສະນານັ້ນແລ້ວ ຍ່ອມບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ຫາກຍັງບໍ່ບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ກໍຈະເປັນໂອປະປາຕິກະ ຍ້ອນສັງໂຍດອັນເປັນສ່ວນເບື້ອງຕ່ຳ ໕ ປະການສິ້ນໄປ ດ້ວຍຄວາມຍິນດີເພີດເພີນໃນ ທຳນັ້ນ ໆ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

ຄະຫະບໍດີ ທຳອັນເປັນເອກແມ່ນນີ້ແລ ເຊິ່ງເປັນທີ່ລຸດພົ້ນແຫ່ງຈິດທີ່ຍັງບໍ່ລຸດພົ້ນ ເປັນທີ່ເຖິງຄວາມສິ້ນໄປແຫ່ງອາສະວະທັງຫຼາຍທີ່ຍັງບໍ່ໝົດໄປ ຫຼື ເປັນທີ່ບັນລຸທຳເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ບັນລຸໂດຍລຳດັບຂອງພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່

ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າ ຕັດໄວ້ຖືກຕ້ອງແລ້ວ

໖. ພິກຂຸມີກະລຸນາຈິດ ໗ລ໗

໗. ພິກຂຸມີມຸທິຕາຈິດ ໗ລ໗

໘. ພິກຂຸມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ທິດທີ ໒ ທິດທີ ໓ ທິດທີ ໔ ທິດ ເບື້ອງເທິງ ທິດເບື້ອງລ່າງ ທິດສຽງ ແຜ່ໄປຕະຫຼອດໂລກທົ່ວທຸກໝູ່ເຫຼົ່າໃນບ່ອນ ທຸກສະຖານດ້ວຍອຸເປກຂາຈິດອັນເຕັມປ່ຽມ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ພິກຂຸນັ້ນພິຈາລະນາເຫັນດັ່ງນີ້ຍ່ອມຮູ້ແຈ້ງວ່າ “ແມ່ນ ອຸເປກຂາເຈໂຕວິມຸດຕິນີ້ ກໍຖືກປຸງແຕ່ງແລ້ວ ກໍສິ່ງໃດສິ່ງໜຶ່ງທີ່ຖືກປຸງແຕ່ງແລ້ວ ສິ່ງນັ້ນບໍ່ທ່ຽງ ມີຄວາມດັບໄປເປັນທຳມະດາ” ພິກຂຸນັ້ນຕັ້ງຢູ່ໃນທຳຄືສະມະຖະ ແລະວິປັດສະນານັ້ນແລ້ວ ຍ່ອມບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ຫາກຍັງບໍ່ບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ກໍຈະເປັນໂອປະປາຕິກະຍ້ອນ ສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ດ້ວຍຄວາມຍິນດີເພີດເພີນໃນທຳ ນັ້ນ ໆ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

ຄະຫະບໍດີ ທຳອັນເປັນເອກແມ່ນນີ້ແລ ເຊິ່ງເປັນທີ່ລຸດພົ້ນແຫ່ງຈິດທີ່ຍັງບໍ່ລຸດພົ້ນ ເປັນທີ່ເຖິງຄວາມສິ້ນໄປແຫ່ງອາສະວະທັງທີ່ຍັງບໍ່ໝົດສິ້ນໄປ ຫຼືເປັນທີ່ບັນລຸທຳເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ບັນລຸໂດຍລຳດັບຂອງພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າຕັດໄວ້ຖືກຕ້ອງແລ້ວ

໙. ພິກຂຸບັນລຸອາກາສານັນຈາຍະຕະນະຊານໂດຍກຳນົດວ່າ “ອາກາດຫາບ່ອນສຸດບໍ່ໄດ້” ຢູ່ຍ້ອນລ່ວງຮູບສັນຍາ ດັບປະຕິຄະສັນຍາ ບໍ່ກຳນົດນານັດຕະສັນຍາ ໂດຍປະການທັງປວງ ພິກຂຸນັ້ນພິຈາລະນາເຫັນດັ່ງນີ້ຍ່ອມຮູ້ແຈ້ງວ່າ “ແມ່ນອາກາສານັນຈາຍະຕະນະຊານນີ້ແລ ກໍຖືກປຸງແຕ່ງແລ້ວ ສິ່ງໃດສິ່ງໜຶ່ງທີ່ຖືກປຸງແຕ່ງແລ້ວ ສິ່ງນັ້ນບໍ່ທ່ຽງ ມີຄວາມດັບໄປເປັນທຳມະດາ” ພິກຂຸນັ້ນຕັ້ງຢູ່ໃນທຳນັ້ນແລ້ວ ຍ່ອມບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ຫາກຍັງບໍ່ບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ກໍຈະເປັນໂອປະປາຕິກະ ຍ້ອນສັງໂຍດເບື້ອງຕ່ຳ ໕ ປະການສິ້ນໄປ ດ້ວຍຄວາມຍິນດີເພີດເພີນໃນທຳນັ້ນ ໆ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

ຄະຫະບໍດີ ທຳອັນເປັນເອກແມ່ນນີ້ແລ ເຊິ່ງເປັນທີ່ລຸດພົ້ນແຫ່ງຈິດທີ່ຍັງບໍ່ລຸດພົ້ນ ເປັນທີ່ເຖິງຄວາມສິ້ນໄປແຫ່ງອາສະວະທັງຫຼາຍທີ່ຍັງບໍ່ໝົດໄປ ຫຼືເປັນທີ່ບັນລຸທຳເປັນແດນກະເສມຈາກ

ໂຍຄະອັນປະເສີດທີ່ຍັງບໍ່ບັນລຸໂດຍລຳດັບຂອງພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຜູ້ຊົງຮູ້ ຊົງເຫັນ ເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າຕັດໄວ້ຖືກຕ້ອງແລ້ວ

໑໐. ພິກຂຸລ່ວງອາກາສານັນຈາຍະຕະນະຊານໂດຍປະການທັງປວງ ບັນລຸ ວິນຍານັນຈາຍະຕະນະຊານໂດຍກຳນົດວ່າ "ວິນຍານຫາບ່ອນສຸດບໍ່ໄດ້" ຢູ່ ๗ລ๗

໑໑. ພິກຂຸລ່ວງວິນຍານັນຈາຍະຕະນະຊານໂດຍປະການທັງປວງບັນລຸອາກິນຈັນຍາຍະຕະນະຊານໂດຍກຳນົດວ່າ "ບໍ່ມີອັນໃດ" ຢູ່ ພິກຂຸນັ້ນພິຈາລະນາເຫັນດັ່ງນີ້ຍ່ອມຮູ້ແຈ້ງວ່າ "ແມ່ນອາກິນຈັນຍາຍະຕະນະຊານນີ້ແລກໍຖືກປຸງແຕ່ງແລ້ວ ກໍສິ່ງໃດສິ່ງໜຶ່ງທີ່ຖືກປຸງແຕ່ງແລ້ວ ສິ່ງນັ້ນບໍ່ທ່ຽງ ມີຄວາມດັບໄປເປັນທຳມະດາ" ພິກຂຸນັ້ນຕັ້ງຢູ່ ໃນທຳນັ້ນແລ້ວ ຍ່ອມບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ຫາກຍັງບໍ່ບັນລຸຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ກໍຈະເປັນໂອປະປາຕິກະ ຍ້ອນສັງໂຍດ ເບື້ອງຕ່ຳ ໕ ປະການສິ້ນໄປ ດ້ວຍຄວາມຍິນດີເພີດເພີນໃນທຳນັ້ນ ໆ ຈັກປະຣິນິບພານໃນພົບນັ້ນ ບໍ່ຫວນກັບມາຈາກໂລກນັ້ນອີກ

ຄະຫະບໍດີ ທຳອັນເປັນເອກແມ່ນນີ້ແລ ເຊິ່ງເປັນທີ່ລຸດພົ້ນແຫ່ງຈິດທີ່ຍັງບໍ່ລຸດພົ້ນ ເປັນທີ່ເຖິງຄວາມສິ້ນໄປແຫ່ງອາສະວະທັງຫຼາຍທີ່ຍັງບໍ່ໝົດໄປ ຫຼືເປັນທີ່ບັນລຸທຳເປັນແດນກະເສມຈາກໂຍຄະອັນປະເສີດທີ່ຍັງບໍ່ບັນລຸໂດຍລຳດັບຂອງພິກຂຸຜູ້ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈຢູ່ທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຜູ້ຊົງຮູ້ຊົງເຫັນ ເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າຕັດໄວ້ຖືກຕ້ອງແລ້ວ

ເມື່ອທ່ານພຣະອານົນກ່າວແນວນີ້ແລ້ວ ທະສະມະຄະຫະບໍດີຊາວອັດຖະກະນະຄອນຈຶ່ງກ່າວວ່າ

"ທ່ານອານົນຜູ້ຈະເລີນ ຂ້າພະເຈົ້າ ເມື່ອສະແຫວງຫາປະຕູອະມະຕະທຳປະຕູດຽວ ໄດ້ຮັບປະຕູອະມະຕະທຳ ໑໑ ປະຕູເວລາດຽວກັນ ປຽບຄື ບຸຣຸດສະແຫວງຫາແຫລ່ງຂຸມຊັບຂຸມດຽວເພິ່ງພົບຂຸມຊັບ ໑໑ ຂຸມເວລາດຽວກັນ

ຂ້າພະເຈົ້າ ຈັກສາມາດເຮັດຕົນໃຫ້ປອດໄພໄດ້ໂດຍປະຕູອະມະຕະທຳ ໑໑ ປະຕູນີ້ ປະຕູໃດປະຕູໜຶ່ງ ປຽບຄືບຸຣຸດມີເຮືອນ ໑໑ ປະຕູ ເມື່ອເຮືອນນັ້ນຖືກໄຟໄໝ້ ບຸຣຸດນັ້ນສາມາດເຮັດຕົນໃຫ້ປອດໄພໄດ້ໂດຍປະຕູໃດປະຕູໜຶ່ງ

ທ່ານຜູ້ຈະເລີນ ທຳມະດາອັນຍະເດຍຣະຖີເຫຼົ່ານີ້ ຈັກສະແຫວງຫາຊັບບູຊາອາຈານເພື່ອອາຈານ ສ່ວນຂ້າພະເຈົ້າຈັກບໍ່ທຳການບູຊາທ່ານອານົນໄດ້ແນວໃດ"

ຄັ້ງນັ້ນແລ ທະສະມະຄະຫະບໍດີຊາວອັດຖະກະນະຄອນນິມົນພິກຂຸສົງ ຊາວນະຄອນເວສາລີແລະນະຄອນ ປາຕະລີບຸດໃຫ້ປະຊຸມກັນແລ້ວ ອັງຄາດ°ພິກຂຸສົງນັ້ນໃຫ້ອີ່ມໜຳສຸກສະບາຍດ້ວຍຂອງຫຍ້ຳຂອງຂ້ອຍອັນປະນີດ ດ້ວຍມືຕົນເອງ ນິມົນພິກຂຸໃຫ້ຄອງຜ້າຮູບລະຄູ່ ໃຫ້ທ່ານພຣະອານົນຄອງ ໄຕຣຈີວອນ ແລະໄດ້ສ້າງວິຫານ ໕໐໐ ຫຼັງຖວາຍທ່ານພຣະອານົນ

**ອັດຖະກະນາຄະຣະສູດທີ ៦ ຈົບ**

## ໗. ໂຄປາລະສູດ

## ວ່າດ້ວຍອົງປະກອບຂອງຜູ້ລ້ຽງງົວ

[໑໗] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄົນລ້ຽງງົວປະກອບດ້ວຍອົງ ໑໑ ປະການ ເປັນຜູ້ບໍ່ສາມາດລ້ຽງຝູງງົວໃຫ້ຈະເລີນ ໃຫ້ເພີ່ມຂຶ້ນໄດ້

ອົງ ໑໑ ປະການ ອັນໃດແດ່ ຄື

ຄົນລ້ຽງງົວໃນໂລກນີ້

໑. ບໍ່ຮູ້ຮູບງົວ
໒. ບໍ່ກຳຈັດໄຂ່ຂາງ
໕. ບໍ່ສຸມໄຟ
໗. ບໍ່ຮູ້ວ່າງົວດື່ມນ້ຳແລ້ວ
໙. ບໍ່ສະຫຼາດໃນບ່ອນຫາກິນ
໒. ບໍ່ສະຫຼາດໃນລັກສະນະງົວ
໔. ບໍ່ປົກປິດບາດ
໖. ບໍ່ຮູ້ທ່ານ້ຳ
໘. ບໍ່ຮູ້ທາງ
໑໐. ຣີດນົມບໍ່ໃຫ້ເຫຼືອ
໑໑. ບໍ່ບູຊາງົວຜູ້°ທັງຫຼາຍທີ່ເປັນພໍ່ງົວ ເປັນຈ່າຝູງ ດ້ວຍການບູຊາຢ່າງຍິ່ງ

ພິກຂຸທັງຫຼາຍ ຄົນລ້ຽງງົວປະກອບດ້ວຍອົງ ໑໑ ປະການນີ້ແລ ເປັນຜູ້ບໍ່ສາມາດຈະລ້ຽງຝູງງົວໃຫ້ຈະເລີນ ໃຫ້ເພີ່ມຂຶ້ນໄດ້ ສັນໃດ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໑໑ ປະການກໍຄືກັນສັນນັ້ນ ເປັນຜູ້ບໍ່ສາມາດເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນໄດ້

ທຳ ໑໑ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ບໍ່ຮູ້ຮູບ
໒. ບໍ່ສະຫຼາດໃນລັກສະນະ

໓. ບໍ່ກຳຈັດໄຂ່ຂາງ ໔. ບໍ່ປົກປິດບາດ
໕. ບໍ່ສຸມໄຟ ໖. ບໍ່ຮູ້ທ່ານ້ຳ
໗. ບໍ່ຮູ້ທຳທີ່ດື່ມແລ້ວ ໘. ບໍ່ຮູ້ທາງ
໙. ບໍ່ສະຫຼາດໃນໂຄຈອນ ໑໐. ຮີດນົມບໍ່ໃຫ້ເຫຼືອ
໑໑. ບໍ່ບູຊາພິກຂຸທັງຫຼາຍຜູ້ເປັນເຖຣະ ເປັນຣັດຕັນຍູ ເປັນຜູ້ບວດດົນ ເປັນສັງຄະບິດອນ ເປັນສັງຄະປະຣິນາຍົກ ດ້ວຍການບູຊາຢ່າງຍິ່ງ

ພິກຂຸບໍ່ຮູ້ຮູບ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ບໍ່ຮູ້ແຈ້ງຮູບແນວໃດແນວໜຶ່ງຕາມຄວາມເປັນຈິງວ່າ "ມະຫາພູຕະຮູບ ໔ ແລະອຸປາທາຍະຮູບ ໔" ພິກຂຸເປັນຜູ້ບໍ່ຮູ້ຮູບ ເປັນແນວນີ້ແລ

ພິກຂຸບໍ່ສະຫຼາດໃນລັກສະນະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ຮູ້ແຈ້ງຕາມຄວາມເປັນຈິງວ່າ "ຄົນພານມີກຳເປັນ ລັກສະນະ ບັນດິດມີກຳເປັນລັກສະນະ" ພິກຂຸບໍ່ສະຫຼາດໃນລັກສະນະ ເປັນແນວນີ້ແລ

ພິກຂຸບໍ່ກຳຈັດໄຂ່ຂາງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮັບການວິຕົກທີ່ເກີດຂຶ້ນ ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ສິ້ນສຸດ ບໍ່ເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ຮັບພະຍາບາດວິຕົກທີ່ເກີດຂຶ້ນ ຯລຯ ຮັບວິຫິງສາວິຕົກທີ່ເກີດຂຶ້ນ ຯລຯ ຮັບບາບອະກຸສົນທຳທີ່ເກີດຂຶ້ນແລ້ວເກີດຂຶ້ນອີກ ບໍ່ລະ ບໍ່ບັນເທົາ ບໍ່ເຮັດໃຫ້ສິ້ນສຸດ ບໍ່ເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ພິກຂຸບໍ່ກຳຈັດໄຂ່ຂາງ ເປັນແນວນີ້ແລ

ພິກຂຸບໍ່ປົກປິດບາດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວໂຮມຖື ແຍກຖື ບໍ່ປະຕິບັດເພື່ອ ສັງລວມໃນຈັກຂຸນຊີເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາ ແລະໂທມະນັດຄອບງຳໄດ້ ບໍ່ຮັກສາຈັກຂຸນຊີ ບໍ່ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ແຈ້ງທຳມາຣົມທາງໃຈແລ້ວໂຮມຖື ແຍກຖື ບໍ່ປະຕິບັດເພື່ອສັງລວມໃນມະນິນຊີເຊິ່ງເມື່ອບໍ່ສັງລວມແລ້ວ ກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະ ພິດຊາ ແລະໂທມະນັດຄອບງຳໄດ້ ບໍ່ຮັກສາມະນິນຊີ ບໍ່ເຖິງຄວາມສັງລວມໃນມະນິນຊີ ພິກຂຸບໍ່ປົກປິດບາດ ເປັນແນວນີ້ແລ

ພິກຂຸບໍ່ສຸມໄຟ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ສະແດງທຳຕາມທີ່ຟັງມາແລ້ວ ຕາມທີ່ຮ່ຳຮຽນມາແລ້ວ ແກ່ຄົນອື່ນໆ ໂດຍພິດສະດານ ພິກຂຸບໍ່ສຸມໄຟ ເປັນແນວນີ້ແລ

ພິກຂຸບໍ່ຮູ້ທ່ານ້ຳ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຂົ້າໄປຫາພິກຂຸຜູ້ເປັນພະຫູສູດ ຜູ້ຮຽນຈົບຄຳພີ ຊົງທຳ ຊົງວິໄນ ຊົງມາຕິກາຕາມເວລາສົມຄວນ ບໍ່ສອບສວນໄຕ່ຖາມວ່າ "ພຸດທະພົດນີ້ເປັນແນວໃດ? ເນື້ອຄວາມແຫ່ງ ພຸດທະພົດນີ້ເປັນແນວໃດ?" ທ່ານຜູ້ຄົງແກ່ຮຽນເຫຼົ່ານັ້ນບໍ່ເປີດເຜີຍທຳທີ່ຍັງບໍ່ໄດ້ເປີດເຜີຍ ບໍ່ເຮັດໃຫ້ງ່າຍເຊິ່ງທຳທີ່ຍັງບໍ່ເຮັດໃຫ້ງ່າຍ ແລະບໍ່ບັນເທົາຄວາມສົງໄສໃນທຳທີ່ໜ້າສົງໄສຫຼາຍຢ່າງແກ່ພິກຂຸນັ້ນ ພິກຂຸບໍ່ຮູ້ທ່ານ້ຳ ເປັນແນວນີ້ແລ

ພິກຂຸບໍ່ຮູ້ທຳທີ່ດື່ມແລ້ວ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ບໍ່ໄດ້ຄວາມຍິນດີອິງອັດຖະ ບໍ່ໄດ້ຄວາມຍິນດີອິງທຳ ບໍ່ໄດ້ປາໂມດທີ່ປະກອບດ້ວຍທຳໃນທຳວິໄນທີ່ຕະຖາຄົດປະກາດແລ້ວເຊິ່ງຜູ້ອື່ນສະແດງຢູ່ ພິກຂຸບໍ່ຮູ້ທຳທີ່ດື່ມແລ້ວ ເປັນແນວນີ້ແລ

ພິກຂຸບໍ່ຮູ້ທາງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ບໍ່ຮູ້ອະຣິຍະມັກມີອົງ ໘ ຕາມຄວາມເປັນຈິງ ພິກຂຸບໍ່ຮູ້ທາງ ເປັນແນວນີ້ແລ

ພິກຂຸບໍ່ສະຫຼາດໃນໂຄຈອນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ຮູ້ສະຕິປັດຖານ ໔ ຕາມຄວາມເປັນຈິງ ພິກຂຸບໍ່ສະຫຼາດ ໃນໂຄຈອນ ເປັນແນວນີ້ແລ

ພິກຂຸຮີດນົມບໍ່ໃຫ້ເຫຼືອ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ບໍ່ຮູ້ຈັກປະມານເພື່ອຈະຮັບຈີວອນ ບິນທະບາດ ເສນາສະນະ ຄິລານະ ປັດໄຈເພສັດຊະບໍຣິຂານທີ່ພວກຄະຫະບໍດີ ຜູ້ມີສັດທາປະວາຣະນານຳໄປຖວາຍສະເພາະ ພິກຂຸຮີດນົມບໍ່ໃຫ້ເຫຼືອ ເປັນແນວນີ້ແລ

ພິກຂຸບໍ່ບູຊາເຫຼົ່າພິກຂຸຜູ້ເປັນເຖຣະ ເປັນຣັດຕັນຍູ ເປັນຜູ້ບວດດົນ ເປັນສັງຄະບິດອນ ເປັນສັງຄະປະຣິນາຍົກ ດ້ວຍການບູຊາຢ່າງຍິ່ງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ບໍ່ເຂົ້າໄປຕັ້ງເມດຕາກາຍຍະກຳ ເມດຕາວະຈີກຳ ເມດຕາມະໂນກຳທັງຕໍ່ໜ້າແລະລັບຫຼັງໃນເຫຼົ່າພິກຂຸຜູ້ເປັນເຖຣະ ເປັນຣັດຕັນຍູ ເປັນຜູ້ບວດດົນ ເປັນສັງຄະບິດອນ ເປັນສັງຄະປະຣິນາຍົກ ພິກຂຸບໍ່ບູຊາເຫຼົ່າພິກຂຸຜູ້ເປັນເຖຣະ ເປັນຣັດຕັນຍູ ເປັນຜູ້ບວດດົນ ເປັນສັງຄະບິດອນ ເປັນສັງຄະປະຣິນາຍົກ ດ້ວຍການບູຊາຢ່າງຍິ່ງ ເປັນແບບນີ້ແລ

ພິກຂຸທັງຫຼາຍ ພິກຂຸຜູ້ປະກອບດ້ວຍທຳ ໑໑ ປະການນີ້ແລ ເປັນຜູ້ບໍ່ສາມາດເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນໄດ້

ຄົນລ້ຽງງົວປະກອບດ້ວຍອົງ ໑໑ ປະການ ເປັນຜູ້ສາມາດຈະລ້ຽງຝູງງົວໃຫ້ຈະເລີນໃຫ້ເພີ່ມຂຶ້ນໄດ້ ອົງ ໑໑ ປະການ ອັນໃດແດ່ ຄື

ຄົນລ້ຽງງົວໃນໂລກນີ້

໑. ຮູ້ຮູບງົວ
໒. ກຳຈັດໄຂ່ຂາງ
໓. ສຸມໄຟ
໗. ຮູ້ວ່າງົວດື່ມນ້ຳແລ້ວ
໙. ສະຫຼາດໃນບ່ອນຫາກິນ
໒. ສະຫຼາດໃນລັກສະນະງົວ
໔. ປົກປິດບາດ
໖. ຮູ້ທ່ານ້ຳ
໘. ຮູ້ທາງ
໑໐. ຮີດນົມໃຫ້ເຫຼືອ
໑໑. ບູຊາງົວຜູ້ທັງຫຼາຍທີ່ເປັນພໍ່ງົວ ເປັນຈ່າຝູງ ດ້ວຍການບູຊາຢ່າງຍິ່ງ

ພິກຂຸທັງຫຼາຍ ຄົນລ້ຽງງົວປະກອບດ້ວຍອົງ ໑໑ ປະການນີ້ແລ ຈຶ່ງເປັນຜູ້ສາມາດຈະລ້ຽງຝູງງົວໃຫ້ຈະເລີນ ໃຫ້ເພີ່ມຂຶ້ນໄດ້ສັນໃດ

ພິກຂຸປະກອບດ້ວຍທຳ ໑໑ ປະການ ກໍຄືກັນສັນນັ້ນ ເປັນຜູ້ສາມາດເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້ໄດ້

ທຳ ໑໑ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ຮູ້ຮູບ
໒. ກຳຈັດໄຂ່ຂາງ
໓. ສຸມໄຟ
໗. ຮູ້ທຳທີ່ດື່ມແລ້ວ
໙. ສະຫຼາດໃນໂຄຈອນ
໒. ສະຫຼາດໃນລັກສະນະ
໔. ປົກປິດບາດ
໖. ຮູ້ທ່ານ້ຳ
໘. ຮູ້ທາງ
໑໐. ຮີດນົມໃຫ້ເຫຼືອ

໑໑. ບູຊາພິກຂຸທັງຫຼາຍຜູ້ເປັນເຖຣະ ເປັນຣັດຕັນຍູ ເປັນຜູ້ບວດດົນ ເປັນສັງຄະ
ບິດອນ ເປັນສັງຄະປະຣິນາຍົກ ດ້ວຍການບູຊາຢ່າງຍິ່ງ

ພິກຂຸຮູ້ຮູບ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຮູ້ແຈ້ງຮູບແນວໃດແນວໜຶ່ງຕາມຄວາມເປັນຈິງວ່າ “ມະຫາພູຕະຮູບ ໔ ແລະອຸປາທາຍະຮູບ ໔” ພິກຂຸຮູ້ຮູບເປັນແນວນີ້ແລ

ພິກຂຸສະຫຼາດໃນລັກສະນະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ແຈ້ງຕາມຄວາມເປັນຈິງວ່າ “ຄົນພານມີກຳເປັນລັກສະນະ ບັນດິດມີກຳເປັນລັກສະນະ” ພິກຂຸສະຫຼາດໃນລັກສະນະ ເປັນແນວນີ້ແລ

ພິກຂຸກຳຈັດໄຂ່ຂາງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ບໍ່ຮັບການວິຕົກທີ່ເກີດຂຶ້ນ ລະ ບັນເທົາ ເຮັດໃຫ້ສິ້ນສຸດ ເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ບໍ່ຮັບພະຍາບາດວິຕົກທີ່ເກີດຂຶ້ນ ฯລฯ ບໍ່ຮັບວິຫິງສາວິຕົກ ທີ່ເກີດຂຶ້ນ ฯລฯ ບໍ່ຮັບບາບອະກຸສົນທຳທີ່ເກີດຂຶ້ນແລ້ວເກີດຂຶ້ນອີກ ລະ ບັນເທົາ ເຮັດໃຫ້ສິ້ນສຸດ ເຮັດໃຫ້ເຖິງຄວາມເກີດຂຶ້ນບໍ່ໄດ້ອີກຕໍ່ໄປ ພິກຂຸກຳຈັດໄຂ່ຂາງ ເປັນແນວນີ້ແລ

ພິກຂຸປົກປິດບາດ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຫັນຮູບທາງຕາແລ້ວບໍ່ໂຮມຖື ບໍ່ແຍກຖື ປະຕິບັດເພື່ອສັງລວມໃນຈັກຂຸນຊີເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ຖືກບາບອະກຸສົນທຳຄືອະພິດຊາແລະໂທມະນັດຄອບງຳໄດ້ ຈຶ່ງຮັກສາຈັກຂຸນຊີ ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງທາງຫູ ฯລฯ ດົມກິ່ນທາງດັງ ฯລฯ ຊິມຣົດທາງລີ້ນ ฯລฯ ຖືກຕ້ອງໂຜດຖັບພະທາງກາຍ ฯລฯ ຮູ້ແຈ້ງທຳມາຣົມທາງໃຈແລ້ວບໍ່ໂຮມຖື ບໍ່ແຍກຖື ປະຕິບັດເພື່ອສັງລວມໃນມະນິນຊີເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ບາບອະກຸສົນທຳຄືອະພິດຊາແລະໂທມະນັດຄອບງຳໄດ້ ຈຶ່ງຮັກສາມະນິນຊີ ເຖິງຄວາມສັງລວມໃນມະນິນຊີ ພິກຂຸປົກປິດບາດ ເປັນແນວນີ້ແລ

ພິກຂຸສຸມໄຟ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ສະແດງທຳຕາມທີ່ຟັງມາແລ້ວ ຕາມທີ່ຮ່ຳຮຽນມາແລ້ວແກ່ຄົນອື່ນໆ ໂດຍພິດສະດານ ພິກຂຸສຸມໄຟ ເປັນແນວນີ້ແລ

ພິກຂຸຮູ້ທ່ານ້ຳ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ເຂົ້າໄປຫາພິກຂຸທັງຫຼາຍ ຜູ້ເປັນພະຫູສູດ ຜູ້ຮຽນຈົບຄຳພີ ຊົງທຳ ຊົງວິໄນ ຊົງມາຕິກາຕາມເວລາສົມຄວນ ສອບສວນໄຕ່ຖາມວ່າ "ພຸດທະພົດນີ້ເປັນແນວໃດ? ເນື້ອຄວາມແຫ່ງພຸດທະພົດນີ້ເປັນແນວໃດ?" ທ່ານຜູ້ຄົງແກ່ຮຽນເຫຼົ່ານັ້ນ ຍ່ອມເປີດເຜີຍທຳທີ່ຍັງບໍ່ໄດ້ເປີດເຜີຍ ເຮັດໃຫ້ງ່າຍເຊິ່ງທຳທີ່ຍັງບໍ່ໄດ້ເຮັດໃຫ້ງ່າຍ ແລະບັນເທົາຄວາມສົງໄສໃນທຳທີ່ໜ້າສົງໄສຫຼາຍຢ່າງແກ່ພິກຂຸນັ້ນ ພິກຂຸຮູ້ທ່ານ້ຳ ເປັນແນວນີ້ແລ

ພິກຂຸຮູ້ທຳທີ່ດື່ມແລ້ວ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ໄດ້ຄວາມຍິນດີອີງອັດຖະ ໄດ້ຄວາມຍິນດີອີງທຳ ໄດ້ປາໂມດທີ່ປະກອບດ້ວຍທຳໃນທຳວິໄນທີ່ຕະຖາຄົດປະກາດແລ້ວເຊິ່ງຜູ້ອື່ນສະແດງຢູ່ ພິກຂຸຮູ້ທຳທີ່ດື່ມແລ້ວ ເປັນແນວນີ້ແລ

ພິກຂຸຮູ້ທາງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ອະຣິຍະມັກມີອົງ ໘ ຕາມຄວາມເປັນຈິງ ພິກຂຸຮູ້ທາງ ເປັນແນວນີ້ແລ

ພິກຂຸສະຫຼາດໃນໂຄຈອນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ສະຕິປັດຖານ ໔ ຕາມຄວາມເປັນຈິງ ພິກຂຸສະຫຼາດໃນໂຄຈອນ ເປັນແນວນີ້ແລ

ພິກຂຸຮີດນົມໃຫ້ເຫຼືອ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຮູ້ຈັກປະມານເພື່ອຈະຮັບຈີວອນ ບິນທະບາດ ເສນາສະນະ ຄິລານະປັດໄຈເພສັດຊະບໍຣິຂານທີ່ພວກຄະຫະບໍດີ ຜູ້ມີສັດທາປະວາຣະນານຳໄປຖວາຍສະເພາະ ພິກຂຸຮີດນົມໃຫ້ເຫຼືອ ເປັນແນວນີ້ແລ

ພິກຂຸເປັນຜູ້ບູຊາພິກຂຸທັງຫຼາຍຜູ້ເປັນເຖຣະ ເປັນຣັດຕັນຍູ ເປັນຜູ້ບວດດົນ ເປັນສັງຄະບິດອນ ເປັນສັງຄະປະຣິນາຍົກ ດ້ວຍການບູຊາຢ່າງຍິ່ງ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເຂົ້າໄປຕັ້ງເມດຕາກາຍຍະກຳ ເມດຕາວະຈີກຳ ເມດຕາມະໂນກຳ ທັງຕໍ່ ໜ້າແລະລັບຫຼັງໃນເຫຼົ່າພິກຂຸຜູ້ເປັນເຖຣະ ເປັນຣັດຕັນຍູ ເປັນຜູ້ບວດດົນ ເປັນສັງຄະບິດອນ ເປັນສັງຄະປະຣິນາຍົກ ພິກຂຸບູຊາພິກຂຸທັງຫຼາຍຜູ້ເປັນເຖຣະ ເປັນຣັດຕັນຍູ ເປັນຜູ້ບວດດົນ ເປັນສັງຄະບິດອນ ເປັນສັງຄະປະຣິນາຍົກ ດ້ວຍການບູຊາຢ່າງຍິ່ງ ເປັນແນວນີ້ແລ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໑໑ ປະການນີ້ແລ ເປັນຜູ້ສາມາດເຖິງຄວາມຈະເລີນງອກງາມໄພບູນໃນທຳວິໄນນີ້

**ໂຄປາລະສູດທີ ໗ ຈົບ**

## ໗. ປະຖົມສະມາທິສູດ

## ວ່າດ້ວຍການໄດ້ສະມາທິຂອງພິກຂຸ ສູດທີ ໑

[໑໗] ຄັ້ງນັ້ນແລ ພິກຂຸຫຼາຍອົງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວ ນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ ວ່າ

"ຂ້າແດ່ ພຣະອົງຜູ້ຈະເລີນ ມີໄດ້ບໍນໍ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ໃນທາດນ້ຳວ່າເປັນທາດນ້ຳ ໃນທາດໄຟວ່າເປັນທາດໄຟ ໃນທາດລົມວ່າເປັນທາດລົມ ໃນອາກາສານັນຈາຍະຕະນະຊານວ່າເປັນອາກາສານັນຈາຍະຕະນະຊານ ໃນວິນຍານັນຈາຍະຕະນະຊານວ່າເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍະຕະນະຊານວ່າເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າເປັນໂລກນີ້ ໃນໂລກໜ້າວ່າເປັນໂລກໜ້າ ບໍ່ຕ້ອງມີສັນຍາແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸທັງຫຼາຍ ມີໄດ້ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ຯລຯ ບໍ່ຕ້ອງມີສັນຍາ ແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

ພິກຂຸທັງຫຼາຍທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ມີໄດ້ແນວໃດ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ຯລຯ ບໍ່ຕ້ອງມີສັນຍາແມ່ນໃນຮູບ ທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ເປັນຜູ້ມີສັນຍາແນວນີ້ວ່າ "ພາວະທີ່ສະງົບ ປະນີດ ຄື ຄວາມລະງັບສັງຂານທັງປວງ ຄວາມສະລະຄືນອຸປະທິກິເລດທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບ ນິບພານ ພິກຂຸທັງຫຼາຍ

ມີໄດ້ຢ່າງນີ້ແລ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາ ໃນທາດດິນວ່າເປັນທາດດິນ ໃນທາດນ້ຳວ່າເປັນທາດນ້ຳ ໃນທາດໄຟວ່າເປັນທາດໄຟ ໃນທາດລົມວ່າເປັນທາດລົມ ໃນອາກາສານັນຈາຍະຕະນະຊານວ່າເປັນອາກາສານັນຈາຍະຕະນະຊານ ໃນວິນຍານັນຈາຍະຕະນະຊານວ່າເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍະຕະນະຊານວ່າເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າ ເປັນໂລກນີ້ ໃນໂລກໜ້າວ່າເປັນໂລກໜ້າ ບໍ່ຕ້ອງມີສັນຍາ ແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

**ປະຖົມສະມາທິສູດທີ ໗ ຈົບ**

## ໘. ທຸຕິຍະສະມາທິສູດ

## ວ່າດ້ວຍການໄດ້ສະມາທິຂອງພິກຂຸ ສູດທີ ໘

[໑໘] ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງຮຽກພິກຂຸທັງຫຼາຍມາຕັດວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ມີໄດ້ບໍນໍ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາ ໃນທາດດິນວ່າເປັນທາດດິນ ໃນທາດນ້ຳວ່າເປັນທາດນ້ຳ ໃນທາດໄຟວ່າເປັນທາດໄຟ ໃນທາດລົມວ່າເປັນທາດລົມ ໃນອາກາສານັນຈາຍະຕະນະຊານວ່າເປັນອາກາສານັນຈາຍະຕະນະຊານ ໃນວິນຍານັນຈາຍະຕະນະຊານວ່າເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍະຕະນະຊານວ່າເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າເປັນໂລກນີ້ ໃນໂລກໜ້າວ່າເປັນໂລກໜ້າ ບໍ່ຕ້ອງມີສັນຍາ ແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

ພິກຂຸທັງຫຼາຍຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ທຳທັງຫຼາຍຂອງຂ້າພຣະອົງທັງຫຼາຍ ມີພຣະຜູ້ມີພຣະພາກເຈົ້າເປັນຫຼັກ ເປັນຜູ້ນຳ ເປັນບ່ອນເພິ່ງ ຂໍປະທານວະໂຣກາດ ສະເພາະພຣະຜູ້ມີພຣະພາກເຈົ້າທ່ານັ້ນ ທີ່ຈະຊົງອະທິບາຍເນື້ອຄວາມແຫ່ງພາສິດນີ້ໃຫ້ແຈ່ມແຈ້ງໄດ້ ຂ້າແດ່ພຣະອົງຜູ້ຈະເລີນ ພິກຂຸທັງຫຼາຍໄດ້ຟັງຈາກພຣະຜູ້ມີພຣະພາກເຈົ້າແລ້ວຈັກຊົງຈຳໄວ້"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນ ທ່ານທັງຫຼາຍຈົ່ງຟັງ ຈົ່ງໃສ່ໃຈໃຫ້ດີ ເຮົາຈັກກ່າວ" ພິກຂຸເຫຼົ່ານັ້ນ ທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດເລື້ອງນີ້ ວ່າ

"ພິກຂຸທັງຫຼາຍ ມີໄດ້ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ຯລຯ ບໍ່ຕ້ອງມີສັນຍາແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

ພິກຂຸທັງຫຼາຍທູນຖາມວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ມີໄດ້ແນວໃດ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ຯລຯ ບໍ່ຕ້ອງມີສັນຍາແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ພິກຂຸທັງຫຼາຍ ພິກຂຸໃນທຳວິໄນນີ້ເປັນຜູ້ມີສັນຍາແນວນີ້ວ່າ ພາວະທີ່ສະງົບ ປະນີດ ຄື ຄວາມລະງັບສັງຂານທັງປວງ ຄວາມສະລະຄືນອຸປະທິກິເລດທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບ ນິບພານ ພິກຂຸທັງຫຼາຍມີໄດ້ຢ່າງນີ້ແລ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ໃນທາດນ້ຳວ່າເປັນທາດນ້ຳ ໃນທາດໄຟວ່າເປັນທາດໄຟ ໃນທາດລົມວ່າເປັນທາດລົມ ໃນອາກາສານັນຈາຍະຕະນະຊານວ່າເປັນອາກາສານັນຈາຍະຕະນະຊານ ໃນວິນຍານັນຈາຍະຕະນະຊານວ່າເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍະຕະນະຊານວ່າເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າເປັນໂລກນີ້ ໃນໂລກໜ້າວ່າເປັນໂລກໜ້າ ບໍ່ຕ້ອງມີສັນຍາ ແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

**ທຸຕິຍະສະມາທິສູດທີ ໙ ຈົບ**

## ໑໐. ຕະຕິຍະສະມາທິສູດ

## ວ່າດ້ວຍການໄດ້ສະມາທິຂອງພິກຂຸ ສູດທີ ໓

[໘໐] ຄັ້ງນັ້ນ ພິກຂຸຫຼາຍອົງເຂົ້າໄປຫາທ່ານພຣະສາຣີບຸດຮອດບ່ອນຢູ່ ໄດ້ສົນທະນາປາໄສພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ຮຽນຖາມທ່ານພຣະສາຣີບຸດດັ່ງນີ້ ວ່າ

"ທ່ານສາຣີບຸດ ມີໄດ້ບໍ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ໃນທາດນໍ້າວ່າເປັນທາດນໍ້າ ໃນທາດໄຟວ່າເປັນທາດໄຟ ໃນທາດລົມວ່າ ເປັນທາດລົມ ໃນອາກາສານັນຈາຍະຕະນະຊານວ່າເປັນອາກາສານັນຈາຍະຕະນະຊານ ໃນ ວິນຍານັນຈາຍະຕະນະຊານວ່າເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍະຕະນະຊານວ່າເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າເປັນໂລກນີ້ ໃນໂລກໜ້າວ່າເປັນໂລກໜ້າ ບໍ່ຕ້ອງມີສັນຍາແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

ທ່ານພຣະສາຣີບຸດຕອບວ່າ "ຜູ້ມີອາຍຸທັງຫຼາຍ ມີໄດ້ ການທີ່ພິກຂຸໄດ້ສະມາທິໂດຍ ບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ຯລຯ ບໍ່ຕ້ອງມີສັນຍາແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມ ດ້ວຍໃຈ ແຕ່ຕ້ອງມີສັນຍາ"

ພິກຂຸທັງຫຼາຍຮຽນຖາມວ່າ "ທ່ານສາຣີບຸດ ມີໄດ້ແນວໃດ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງສັນຍາໃນທາດດິນວ່າເປັນທາດດິນ ຯລຯ ບໍ່ຕ້ອງມີສັນຍາ ແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

ທ່ານພຣະສາຣີບຸດຕອບວ່າ "ຜູ້ມີອາຍຸທັງຫຼາຍ ພິກຂຸໃນທຳວິໄນນີ້ເປັນຜູ້ມີສັນຍາແນວນີ້ວ່າ ພາວະທີ່ສະງົບ ປະນີດ ຄື ຄວາມລະງັບສັງຂານທັງປວງ ຄວາມສະລະຄືນອຸປະທິກິເລດທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບ ນິບພານ ຜູ້ມີອາຍຸ ທັງຫຼາຍ ມີໄດ້ຢ່າງນີ້ແລ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນ ທາດດິນ ໃນນໍ້າທາດວ່າເປັນທາດນໍ້າ ໃນທາດໄຟວ່າເປັນທາດໄຟ ໃນທາດລົມວ່າເປັນທາດລົມ ໃນອາກາສານັນຈາຍະຕະນະຊານວ່າເປັນອາກາສານັນຈາຍະຕະນະຊານ ໃນວິນຍານັນຈາຍະຕະນະຊານ ວ່າເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍະຕະນະຊານວ່າເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າເປັນໂລກນີ້ ໃນໂລກໜ້າວ່າເປັນໂລກໜ້າ ບໍ່ຕ້ອງມີສັນຍາແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

**ຕະຕິຍະສະມາທິສູດທີ ໑໐ ຈົບ**

# ໑໑. ຈະຕຸດຖະສະມາທິສູດ

## ວ່າດ້ວຍການໄດ້ສະມາທິຂອງພິກຂຸ ສູດທີ ໔

[໔໑] ໃນບ່ອນນັ້ນແລ ທ່ານພຣະສາຣີບຸດໄດ້ຮຽກພິກຂຸທັງຫຼາຍມາກ່າວວ່າ "ຜູ້ມີອາຍຸທັງຫຼາຍ ມີໄດ້ບໍນໍ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ໃນທາດນ້ຳວ່າເປັນທາດນ້ຳ ໃນທາດໄຟວ່າເປັນທາດໄຟ ໃນທາດລົມວ່າເປັນທາດລົມ ໃນອາກາສານັນຈາຍະຕະນະຊານວ່າເປັນອາກາສານັນຈາຍະຕະນະຊານ ໃນວິນຍານັນຈາຍະຕະນະຊານ ວ່າເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍະຕະນະຊານວ່າເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າເປັນໂລກນີ້ ໃນໂລກໜ້າວ່າເປັນໂລກໜ້າ ບໍ່ຕ້ອງມີສັນຍາແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

ພິກຂຸເຫຼົ່ານັ້ນກ່າວວ່າ "ທ່ານຜູ້ມີອາຍຸ ຂ້ານ້ອຍທັງຫຼາຍມາແຕ່ທີ່ໄກເພື່ອຈະຮູ້ເນື້ອຄວາມແຫ່ງພາສິດນີ້ໃນສຳນັກຂອງທ່ານສາຣີບຸດ ສະເພາະທ່ານສາຣີບຸດທ່ານັ້ນທີ່ຈະອະທິບາຍເນື້ອຄວາມແຫ່ງພາສິດນີ້ໃຫ້ແຈ່ມແຈ້ງໄດ້ ພິກຂຸທັງຫຼາຍໄດ້ຟັງຈາກທ່ານສາຣີບຸດແລ້ວຈັກຊົງຈຳໄວ້"

ທ່ານພຣະສາຣີບຸດກ່າວວ່າ "ຜູ້ມີອາຍຸທັງຫຼາຍ ຖ້າເປັນແນວນັ້ນ ຂໍທ່ານທັງຫຼາຍຈົ່ງຟັງຈົ່ງໃສ່ໃຈໃຫ້ດີ ຂ້ານ້ອຍຈັກກ່າວ"

ພິກຂຸເຫຼົ່ານັ້ນກ່າວຮັບຄຳແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວເລື້ອງນີ້ ວ່າ

"ຜູ້ມີອາຍຸທັງຫຼາຍ ມີໄດ້ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ຯລຯ ບໍ່ຕ້ອງມີສັນຍາແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

ພິກຂຸທັງຫຼາຍຮຽນຖາມວ່າ "ທ່ານສາຣີບຸດ ມີໄດ້ແນວໃດ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າເປັນທາດດິນ ຯລຯ ບໍ່ຕ້ອງມີສັນຍາ ແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

ທ່ານພຣະສາຣີບຸດຕອບວ່າ "ຜູ້ມີອາຍຸທັງຫຼາຍ ພິກຂຸໃນທຳວິໄນນີ້ເປັນຜູ້ມີສັນຍາແນວນີ້ວ່າ ພາວະທີ່ສະງົບ ປະນີດ ຄື ຄວາມລະງັບສັງຂານທັງປວງ ຄວາມສະລະຄືນອຸປະທິກິເລດທັງ

ປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບ ນິບພານ ຜູ້ມີອາຍຸທັງຫຼາຍ ມິໄດ້ຢ່າງນີ້ແລ ການທີ່ພິກຂຸໄດ້ສະມາທິໂດຍບໍ່ຕ້ອງມີສັນຍາໃນທາດດິນວ່າ ເປັນທາດດິນ ໃນທາດນ້ຳວ່າເປັນທາດນ້ຳ ໃນທາດໄຟວ່າເປັນທາດໄຟ ໃນທາດລົມວ່າເປັນທາດລົມ ໃນອາກາສານັນຈາຍະຕະນະຊານວ່າເປັນອາກາສານັນຈາຍະຕະນະຊານ ໃນວິນຍານັນຈາຍະຕະນະຊານ ວ່າເປັນວິນຍານັນຈາຍະຕະນະຊານ ໃນອາກິນຈັນຍາຍະຕະນະຊານວ່າເປັນອາກິນຈັນຍາຍະຕະນະຊານ ໃນເນວະສັນຍານາສັນຍາຍະຕະນະຊານວ່າ ເປັນເນວະສັນຍານາສັນຍາຍະຕະນະຊານ ໃນໂລກນີ້ວ່າເປັນໂລກນີ້ ໃນໂລກໜ້າວ່າເປັນໂລກໜ້າ ບໍ່ຕ້ອງມີສັນຍາແມ່ນໃນຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຕ່ຕ້ອງມີສັນຍາ"

**ຈະຕຸດຖະສະມາທິສູດທີ ໑໑ ຈົບ**

**ອະນຸດສະຕິວັກທີ ໘ ຈົບ**

## ລວມພຣະສູດທີ່ມີໃນວັກນີ້ ຄື

໑. ປະຖົມມະຫານາມະສູດ

໒. ທຸຕິຍະມະຫານາມະສູດ

໓. ນັນທິຍະສູດ

໔. ສຸພູຕິສູດ

໕. ເມດຕາສູດ

໖. ອັດຖະກະນາຄະຣະສູດ

໗. ໂຄປາລະສູດ

໘. ປະຖົມສະມາທິສູດ

໙. ທຸຕິຍະສະມາທິສູດ

໑໐. ຕະຕິຍະສະມາທິສູດ

໑໑. ຈະຕຸດຖະສະມາທິສູດ

# ໓. ສາມັນຍະວັກ

## ໝວດວ່າດ້ວຍສາມັນຍະລັກສະນະ

[໔໘-໔໙] ພຣະຜູ້ມີພຣະພາກເຈົ້າຕັດວ່າ ພິກຂຸທັງຫຼາຍ ຄົນລ້ຽງງົວປະກອບດ້ວຍອົງ ໑໑ ປະການ ເປັນຜູ້ບໍ່ສາມາດລ້ຽງຝູງງົວໃຫ້ຈະເລີນ ໃຫ້ເພີ່ມຂຶ້ນໄດ້ ອົງ ໑໑ ປະການ ອັນໃດແດ່ ຄື

ຄົນລ້ຽງງົວໃນໂລກນີ້

໑. ບໍ່ຮູ້ຮູບງົວ

໒. ບໍ່ສະຫຼາດໃນລັກສະນະງົວ

໓. ບໍ່ກຳຈັດໄຂ່ຂາງ
໔. ບໍ່ປົກປິດບາດ
໕. ບໍ່ສຸມໄຟ
໖. ບໍ່ຮູ້ທ່ານ້ຳ
໗. ບໍ່ຮູ້ວ່າງົວດື່ມນ້ຳແລ້ວ
໘. ບໍ່ຮູ້ທາງ
໙. ບໍ່ສະຫຼາດໃນບ່ອນຫາກິນ
໑໐. ຮີດນົມບໍ່ໃຫ້ເຫຼືອ
໑໑. ບໍ່ບູຊາງົວຜູ້ທັງຫຼາຍທີ່ເປັນພໍ່ງົວ ເປັນຈ່າຝູງ ດ້ວຍການບູຊາຢ່າງຍິ່ງ

ພິກຂຸທັງຫຼາຍ ຄົນລ້ຽງງົວປະກອບດ້ວຍອົງ ໑໑ ປະການນີ້ແລ ເປັນຜູ້ບໍ່ສາມາດລ້ຽງຝູງງົວໃຫ້ຈະເລີນ ໃຫ້ເພີ່ມຂຶ້ນໄດ້ ສັນໃດ

ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໑໑ ປະການກໍຄືກັນສັນນັ້ນ ເປັນຜູ້ບໍ່ສາມາດພິຈາລະນາເຫັນຄວາມບໍ່ທ່ຽງໃນຈັກຂຸ

ທຳ ໑໑ ປະການ ອັນໃດແດ່ ຄື

ພິກຂຸໃນທຳວິໄນນີ້

໑. ບໍ່ຮູ້ຮູບ
໒. ບໍ່ສະຫຼາດໃນລັກສະນະ
໓. ບໍ່ກຳຈັດໄຂ່ຂາງ
໔. ບໍ່ປົກປິດບາດ
໕. ບໍ່ສຸມໄຟ
໖. ບໍ່ຮູ້ທ່ານ້ຳ
໗. ບໍ່ຮູ້ທຳທີ່ດື່ມແລ້ວ
໘. ບໍ່ຮູ້ທາງ
໙. ບໍ່ສະຫຼາດໃນໂຄຈອນ
໑໐. ຮີດນົມບໍ່ໃຫ້ເຫຼືອ
໑໑. ບໍ່ບູຊາພິກຂຸທັງຫຼາຍຜູ້ເປັນເຖຣະ ເປັນຣັດຕັນຍູ ເປັນຜູ້ບວດດົນ ເປັນສັງຄະບິດອນ ເປັນສັງຄະປະຣິນາຍົກ ດ້ວຍການບູຊາຢ່າງຍິ່ງ

ຯລຯ ບໍ່ສາມາດພິຈາລະນາເຫັນຄວາມເປັນທຸກໃນຈັກຂຸ
ຯລຯ ບໍ່ສາມາດພິຈາລະນາເຫັ ນຄວາມເປັນອະນັດຕາໃນຈັກຂຸ
ຯລຯ ບໍ່ສາມາດພິຈາລະນາເຫັນຄວາມສິ້ນໄປໃນຈັກຂຸ
ຯລຯ ບໍ່ສາມາດພິຈາລະນາເຫັນຄວາມເສື່ອມໄປໃນຈັກຂຸ
ຯລຯ ບໍ່ສາມາດພິຈາລະນາເຫັນຄວາມຄາຍອອກໃນຈັກຂຸ
ຯລຯ ບໍ່ສາມາດພິຈາລະນາເຫັນຄວາມດັບໄປໃນຈັກຂຸ
ຯລຯ ບໍ່ສາມາດພິຈາລະນາເຫັນຄວາມສະລະຄືນໃນຈັກຂຸ (໑-໘)

[໓໐-໖໙] ຯລຯ ບໍ່ສາມາດພິຈາລະນາເຫັນຄວາມບໍ່ທ່ຽງໃນໂສຕະ

ຯລຯ ບໍ່ສາມາດພິຈາລະນາເຫັນຄວາມບໍ່ທ່ຽງໃນຄານະ

ฯລฯ ບໍ່ສາມາດພິຈາລະນາເຫັນຄວາມບໍ່ທ່ຽງໃນຊິວຫາ
ฯລฯ ບໍ່ສາມາດພິຈາລະນາເຫັນຄວາມບໍ່ທ່ຽງໃນກາຍ
ฯລฯ ບໍ່ສາມາດພິຈາລະນາເຫັນຄວາມບໍ່ທ່ຽງໃນໃຈ ฯລฯ (໙-໔໗)

[໗໐-໑໑໗] ฯລฯ ໃນຮູບ ฯລฯ ໃນສຽງ ฯລฯ ໃນກິ່ນ ฯລฯ ໃນຣົດ ฯລฯ ໃນໂຜດຖັບພະ ฯລฯ ໃນທຳມາຣົມ ฯລฯ (໔໙-໙໖)

[໑໑໗-໑໖໕] ฯລฯ ໃນຈັກຂຸວິນຍານ ฯລฯ . ໃນໂສຕະວິນຍານ ฯລฯ ໃນຄານະວິນຍານ ฯລฯ ໃນຊິວຫາວິນຍານ ฯລฯ ໃນກາຍວິນຍານ ฯລฯ ໃນມະໂນວິນຍານ ฯລฯ (໙໗-໑໔໔)

[໑໖໖-໒໑໓] ฯລฯ ໃນຈັກຂຸສຳຜັດ ฯລฯ ໃນໂສຕະສຳຜັດ ฯລฯ ໃນຄານະສຳຜັດ ฯລฯ ໃນຊິວຫາສຳຜັດ ฯລฯ ໃນກາຍສຳຜັດ ฯລฯ ໃນມະໂນສຳຜັດ ฯລฯ (໑໔໕-໑໙໒)

[໒໑໔-໒໖໑] ฯລฯ ໃນເວທະນາທີ່ເກີດແຕ່ຈັກຂຸສຳຜັດ ฯລฯ ໃນເວທະນາທີ່ເກີດແຕ່ໂສຕະສຳຜັດ ฯລฯ ໃນເວທະນາທີ່ເກີດແຕ່ຄານະສຳຜັດ ฯລฯ ໃນເວທະນາທີ່ເກີດແຕ່ຊິວຫາສຳຜັດ ฯລฯ ໃນເວທະນາ ທີ່ເກີດແຕ່ກາຍສຳຜັດ ฯລฯ ໃນເວທະນາທີ່ເກີດແຕ່ມະໂນສຳຜັດ ฯລฯ (໑໙໓-໒໔໐)

[໒໖໒-໓໐໙] ฯລฯ ໃນຮູບສັນຍາ ฯລฯ ໃນສັດທະສັນຍາ ฯລฯ ໃນຄັນທະສັນຍາ ฯລฯ ໃນ ຣະສະສັນຍາ ฯລฯ ໃນໂຜດຖັບພະສັນຍາ ฯລฯ ໃນທຳມະສັນຍາ ฯລฯ (໒໔໑-໒໘໗)

[໓໑໐-໓໕໗] ฯລฯ ໃນຮູບສັນເຈຕະນາ ฯລฯ ໃນສັດທະສັນເຈຕະນາ ฯລฯ ໃນຄັນທະສັນເຈຕະນາ ฯລฯ ໃນຣະສະສັນເຈຕະນາ ฯລฯ ໃນໂຜຕທັບພະສັນເຈຕະນາ ฯລฯ ໃນທຳມະສັນເຈຕະນາ ฯລฯ (໒໘໙-໓໓໖)

[໓໕໘-໔໐໕] ฯລฯ ໃນຮູບຕັນຫາ ฯລฯ ໃນສັດທະຕັນຫາ ฯລฯ ໃນຄັນທະຕັນຫາ ฯລฯ ໃນຣະສະຕັນຫາ ฯລฯ ໃນໂຜດຖັບພະຕັນຫາ ฯລฯ ໃນທຳມະຕັນຫາ ฯລฯ (໓໓໗-໓໘໔)

[໔໐໖-໔໕໓] ฯລฯ ໃນຮູບວິຕົກ ฯລฯ ໃນສັດທະວິຕົກ ฯລฯ ໃນຄັນທະວິຕົກ ฯລฯ ໃນຣະສະວິຕົກ ฯລฯ ໃນ ໂຜດຖັບພະວິຕົກ ฯລฯ ໃນທຳມະວິຕົກ ฯລฯ (໓໘໕-໔໓໒)

[໔໕໔-໕໐໑] ພິກຂຸທັງຫຼາຍ ພິກຂຸປະກອບດ້ວຍທຳ ໑໑ ປະການກໍຄືກັນສັນນັ້ນ ເປັນຜູ້ບໍ່ສາມາດພິຈາລະນາເຫັນຄວາມບໍ່ທ່ຽງໃນຮູບວິຈານ

ຯລຯ ບໍ່ສາມາດພິຈາລະນາເຫັນຄວາມ ເປັນທຸກໃນຣູບວິຈານ
ຯລຯ ບໍ່ສາມາດພິຈາລະນາເຫັນຄວາມ ເປັນອະນັດຕາໃນຣູບວິຈານ
ຯລຯ ບໍ່ສາມາດພິຈາລະນາເຫັນຄວາມ ສິ້ນໄປໃນຣູບວິຈານ
ຯລຯ ບໍ່ສາມາດພິຈາລະນາເຫັນຄວາມ ເສື່ອມໄປໃນຣູບວິຈານ
ຯລຯ ບໍ່ສາມາດພິຈາລະນາເຫັນຄວາມ ຄາຍອອກໃນຣູບວິຈານ
ຯລຯ ບໍ່ສາມາດພິຈາລະນາເຫັນຄວາມ ດັບໄປໃນຣູບວິຈານ
ຯລຯ ບໍ່ສາມາດພິຈາລະນາເຫັນຄວາມ ສະລະຄືນໃນຣູບວິຈານ

ຯລຯ ໃນສັດທະວິຈານ ຯລຯ ໃນຄັນທະວິຈານ ຯລຯ ໃນຣະສະວິຈານ ຯລຯ ໃນໂຜດຖັບພະວິຈານ ຯລຯ ໃນທຳມະວິຈານ ຯລຯ (໔໑໑-໔໘໐)

**ສາມັນຍະວັກ ຈົບ**

## ໔. ຣາຄະເປີຍຍາລະ

[໕໐໔] ພິກຂຸທັງຫຼາຍ ຄົນລ້ຽງງົວປະກອບດ້ວຍອົງ ໑໑ ປະການ ເປັນຜູ້ສາມາດລ້ຽງຝູງງົວໃຫ້ຈະເລີນ ໃຫ້ເພີ່ມຂຶ້ນໄດ້ ອົງ ໑໑ ປະການ ອັນໃດແດ່ ຄື

ຄົນລ້ຽງງົວໃນໂລກນີ້

໑. ຮູ້ຮູບ ຯລຯ ສັນໃດ

ພິກຂຸປະກອບດ້ວຍທຳ ໑໑ ປະການກໍຄືກັນສັນນັ້ນ ເປັນຜູ້ສາມາດພິຈາລະນາເຫັນຄວາມບໍ່ທ່ຽງໃນຈັກຂຸ ຯລຯ ພິຈາລະນາເຫັນຄວາມສະລະຄືນໃນຈັກຂຸ

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໑໑ ປະການ ເພື່ອຮູ້ຍິ່ງຣາຄະ (ຄວາມກຳໜັດ)

ທຳ ໑໑ ປະການ ອັນໃດແດ່ ຄື

໑. ປະຖົມຊານ
໒. ທຸຕິຍະຊານ
໓. ຕະຕິຍະຊານ
໔. ຈະຕຸດຖະຊານ
໕. ເມດຕາເຈໂຕວິມຸດຕິ
໖. ກະລຸນາເຈໂຕວິມຸດຕິ
໗. ມຸທິຕາເຈໂຕວິມຸດຕິ
໘. ອຸເປກຂາເຈໂຕວິມຸດຕິ
໙. ອາກາສານັນຈາຍະຕະນະຊານ
໑໐. ວິນຍານັນຈາຍະຕະນະຊານ
໑໑. ອາກິນຈັນຍາຍະຕະນະຊານ

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໑໑ ປະການນີ້ ເພື່ອຮູ້ຍິ່ງຣາຄະ (໑)

[໕໐໓-໕໑໑] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໑໑ ປະການ ເພື່ອກຳນົດຮູ້ຣາຄະ

ຯລຯ ເພື່ອຄວາມສິ້ນຣາຄະ

ຯລຯ ເພື່ອລະຣາຄະ

ຯລຯ ເພື່ອຄວາມສິ້ນໄປແຫ່ງຣາຄະ

ຯລຯ ເພື່ອຄວາມເສື່ອມໄປແຫ່ງຣາຄະ

ຯລຯ ເພື່ອຄວາມຄາຍອອກແຫ່ງຣາຄະ

ຯລຯ ເພື່ອຄວາມດັບໄປແຫ່ງຣາຄະ

ຯລຯ ເພື່ອຄວາມສະລະຣາຄະ

ຯລຯ ເພື່ອຄວາມສະລະຄືນຣາຄະ

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໑໑ ປະການນີ້ ເພື່ອຄວາມສະລະຄືນຣາຄະ(໒-໑໐)

[໕໑໒-໖໗໑] ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໑໑ ປະການ ເພື່ອຮູ້ຍິ່ງ ໂທສະ (ຄວາມຄິດປະທຸດສະຮ້າຍ)

ຯລຯ ເພື່ອກຳນົດຮູ້ໂທສະ

ຯລຯ ເພື່ອຄວາມສິ້ນໂທສະ

ຯລຯ ເພື່ອລະໂທສະ

ຯລຯ ເພື່ອຄວາມສິ້ນໄປແຫ່ງໂທສະ

ຯລຯ ເພື່ອຄວາມເສື່ອມໄປແຫ່ງໂທສະ

ຯລຯ ເພື່ອຄວາມຄາຍອອກແຫ່ງໂທສະ

ຯລຯ ເພື່ອຄວາມດັບໄປແຫ່ງໂທສະ

ຯລຯ ເພື່ອຄວາມສະລະໂທສະ

ຯລຯ ເພື່ອຄວາມສະລະຄືນໂທສະ ຯລຯ ໂມຫະ (ຄວາມຫຼົງ) ຯລຯ ໂກທະ (ຄວາມໂກດ) ຯລຯ ອຸປະນາຫະ (ຄວາມຜູກໂກດ) ຯລຯ ມັກຂະ (ຄວາມລົບຫຼູ່ຄຸນທ່ານ) ຯລຯ ປະລາສະ (ຄວາມຕີສະເໝີ) ຯລຯ ອິດສາ (ຄວາມຣິດສະຫຍາ) ຯລຯ ມັດສະຣິຍະ (ຄວາມຂີ້ຖີ່) ຯລຯ ມາຍາ (ມານຍາ) ຯລຯ ສາເຖີຍຍະ (ຄວາມໂອ້ອວດ) ຯລຯ ຖຳພະ (ຄວາມຫົວດື້) ຯລຯ ສາຣຳພະ (ຄວາມແຂ່ງດີ) ຯລຯ ມານະ(ຄວາມຖືໂຕ) ຯລຯ ອະຕິມານະ (ຄວາມດູໝິ່ນ) ຯລຯ ມະທະ (ຄວາມມົວເມົາ) ຯລຯ ປະມາທະ (ຄວາມຜະໝາດ) ຯລຯ

ພິກຂຸທັງຫຼາຍ ບຸກຄົນຄວນຈະເລີນທຳ ໑໑ ປະການນີ້ ເພື່ອຄວາມສະລະຄືນປະມາທະ (໑໑-໑໗໐)

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ພິກຂຸເຫຼົ່ານັ້ນ ມີໃຈຍິນດີຕ່າງຊົມຊື່ນພາສິດຂອງພຣະຜູ້ມີພຣະພາກເຈົ້າ

**ຣາຄະເປີຍຍາລະ ຈົບ**

ອັງຄຸດຕະຣະນິກາຍປະກອບດ້ວຍພຣະສູດ ໙,໕໕໗ ສູດ

**ເອກາທະສະກະນິບາດ ຈົບ**

**ອັງຄຸດຕະຣະນິກາຍ ຈົບບໍລິບູນ**